# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໗

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໐

## ສັງຍຸດຕະນິກາຍ ສະລາຍະຕະນະວັກ



ສະບັບຄົ້ນຄ້ົວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລິບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮິບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໗

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໐

## ສັງຍຸດຕະນິກາຍ ສະລາຍະຕະນະວັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ**

# ໑. ສະລາຍະຕະນະສັງຍຸດ

# ໑. ປະຖົມປັນນາດ

# ໑. ອະນິດຈະວັກ

### ໝວດວ່າດ້ວຍສິ່ງທີ່ບໍ່ທ່ຽງ

## ໑. ອັດຊັດຕານິດຈະສູດ

### ວ່າດ້ວຍອາຍະຕະນະພາຍໃນບໍ່ທ່ຽງ

[໑] ຂ້າພະເຈົ້າ ໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າພິກຂຸທັງຫຼາຍ ຈັກຂຸ (ຕາ) ບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ (ບໍ່ແມ່ນອັດຕາ) ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນ ອັດຕາຂອງເຮົາ

ໂສຕະ (ຫູ) ບໍ່ທ່ຽງ ຯລຯ
ຄານະ (ດັງ) ບໍ່ທ່ຽງ ຯລຯ
ຊິວຫາ (ລີ້ນ) ບໍ່ທ່ຽງ ຯລຯ
ກາຍ ບໍ່ທ່ຽງ ຯລຯ

ມະໂນ (ໃຈ) ບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນໂສຕະ ຍ່ອມເບື່ອໜ່າຍແມ່ນໃນຄານະ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນກາຍ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງ ວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດ ສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕານິດຈະສູດທີ ໑ ຈົບ**

# ໘. ອັດຊັດຕະທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍໃນເປັນທຸກ

[໘] ພິກຂຸທັງຫຼາຍ ຈັກຂຸເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດ ເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ໂສຕະເປັນທຸກ ຯລຯ
ຄານະເປັນທຸກ ຯລຯ
ຊິວຫາເປັນທຸກ ຯລຯ
ກາຍເປັນທຸກ ຯລຯ

ມະໂນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕະທຸກຂະສູດທີ ໒ ຈົບ**

# ໓. ອັດຊັດຕານັດຕະສູດ
## ວ່າດ້ວຍອາຍະຕະນະພາຍໃນເປັນອະນັດຕາ

[໓] ພິກຂຸທັງຫຼາຍ ຈັກຂຸເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ໂສຕະເປັນອະນັດຕາ ຯລຯ
ຄານະເປັນອະນັດຕາ ຯລຯ
ຊິວຫາເປັນອະນັດຕາ ຯລຯ
ກາຍເປັນອະນັດຕາ ຯລຯ

ມະໂນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕານັດຕະສູດທີ ໓ ຈົບ**

# ໔. ພາຫິຣານິດຈະສູດ
## ວ່າດ້ວຍອາຍະຕະນະພາຍນອກບໍ່ທ່ຽງ

[໔] ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັດທະ (ສຽງ) ຯລຯ
ຄັນທະ (ກິ່ນ) ຯລຯ

ຈິດ ฯລฯ

ໂຜດຖັບພະ (ສິ່ງທີ່ຖືກຕ້ອງກາຍ) ฯລฯ

ທຳມາຣົມ ບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ฯລฯ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດ ຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະ ຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣານິດຈະສູດທີ່ ໔ ຈົບ**

# ໕. ພາຫິຣະທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍນອກເປັນທຸກ

[໕] ພິກຂຸທັງຫຼາຍ ຮູບເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະ ນັດຕາ ສິ່ງນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັດທະ ฯລฯ

ຄັນທະ ฯລฯ

ຣົດ ฯລฯ

ໂຜດຖັບພະ ฯລฯ

ທຳມາຣົມເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ທ່ານທັງຫຼາຍ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງ ເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດ ອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣະທຸກຂະສູດທີ່ ໕ ຈົບ**

# ໖. ພາຫິຣານັດຕະສູດ

## ວ່າດ້ວຍອາຍະຕະນະພາຍນອກເປັນອະນັດຕາ

[໖] ພິກຂຸທັງຫຼາຍ ຣູບເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຣົາ ເຣົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຣົາ

ສັດທະ ฯລฯ

ຄັນທະ ฯລฯ

ຣົດ ฯລฯ

ໂຜດຖັບພະ ฯລฯ

ທຳມາຣົມເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນທ່ານທັງຫຼາຍເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຣົາ ເຣົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຣົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣານັດຕະສູດທີ ໖ ຈົບ**

# ໗. ອັດຊັດຕານິດຈາຕີຕານາຄະຕະສູດ

## ວ່າດ້ວຍອາຍະຕະນະພາຍໃນທັງທີ່ເປັນອະດີດແລະອະນາຄົດບໍ່ທ່ຽງ

[໗] ພິກຂຸທັງຫຼາຍ ຈັກຂຸທັງທີ່ເປັນອະດີດແລະອະນາຄົດບໍ່ທ່ຽງ ບໍ່ຕ້ອງກ່າວເຖິງຈັກຂຸທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຈັກຂຸທີ່ເປັນອະດີດ ບໍ່ຍິນດີຈັກຂຸທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຈັກຂຸທີ່ເປັນປັດຈຸບັນ

ໂສຕະ ฯລฯ ບໍ່ທ່ຽງ ฯລฯ

ຄານະ ฯລฯ ບໍ່ທ່ຽງ ฯລฯ

ຊິວຫາທັງທີ່ເປັນອະດີດ ແລະອະນາຄົດບໍ່ທ່ຽງ ບໍ່ຕ້ອງກ່າວເຖິງຊິວຫາທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຊິວຫາທີ່ເປັນອະດີດ ບໍ່ຍິນດີຊິວຫາທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊິວຫາທີ່ເປັນປັດຈຸບັນ

ກາຍ ฯลฯ ບໍ່ທ່ຽງ ฯลฯ

ມະໂນ ฯลฯ ບໍ່ທ່ຽງ ບໍ່ຕ້ອງກ່າວເຖິງມະໂນທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍມະໂນທີ່ເປັນອະດີດ ບໍ່ຍິນດີມະໂນທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ມະໂນທີ່ເປັນປັດຈຸບັນ

**ອັດຊັດຕານິດຈາຕີຕານາຄະຕະສູດທີ ໑ ຈົບ**

# ໒. ອັດຊັດຕະທຸກຂາຕີຕານາຄະຕະສູດ

## ວ່າດ້ວຍອາຍະຕະນະພາຍໃນທັງທີ່ເປັນອະດີດແລະອະນາຄົດເປັນທຸກ

[໒] ພິກຂຸທັງຫຼາຍ ຈັກຂຸທັງທີ່ເປັນອະດີດແລະອະນາຄົດເປັນທຸກ ບໍ່ຕ້ອງກ່າວເຖິງຈັກຂຸທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຈັກຂຸທີ່ເປັນອະດີດ ບໍ່ຍິນດີຈັກຂຸທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຈັກຂຸທີ່ເປັນປັດຈຸບັນ

ໂສຕະ ฯลฯ ເປັນທຸກ ฯลฯ

ຄານະ ฯลฯ ເປັນທຸກ ฯลฯ

ຊິວຫາທັງທີ່ເປັນອະດີດແລະອະນາຄົດເປັນທຸກ ບໍ່ຕ້ອງກ່າວເຖິງຊິວຫາທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຊິວຫາທີ່ເປັນອະດີດ ບໍ່ຍິນດີຊິວຫາທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊິວຫາທີ່ເປັນປັດຈຸບັນ

ກາຍ ฯลฯ ເປັນທຸກ ฯลฯ

ມະໂນທັງທີ່ເປັນອະດີດ ແລະ ອະນາຄົດເປັນທຸກ ບໍ່ຕ້ອງກ່າວເຖິງມະໂນທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມບໍ່ເຍື່ອໃຍມະໂນທີ່ເປັນອະດີດ ບໍ່ຍິນດີມະໂນທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບມະໂນທີ່ເປັນປັດຈຸບັນ

**ອັດຊັດຕະທຸກຂາຕີຕານາຄະຕະສູດທີ ๗ ຈົບ**

# ໘. ອັດຊັດຕາບັດຕາຕີຕານາຄະຕະສູດ

ວ່າດ້ວຍອາຍະຕະນະພາຍໃນທັງທີ່ເປັນອະດີດແລະອະນາຄົດເປັນອະນັດຕາ

[໘] ພິກຂຸທັງຫຼາຍ ຈັກຂຸທັງທີ່ເປັນອະດີດແລະອະນາຄົດເປັນອະນັດຕາ ບໍ່ຕ້ອງກ່າວເຖິງຈັກຂຸທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມບໍ່ເຍື່ອໃຍຈັກຂຸທີ່ເປັນອະດີດ ບໍ່ຍິນດີຈັກຂຸທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຈັກຂຸທີ່ເປັນປັດຈຸບັນ

ໂສຕະ ฯລฯ ເປັນອະນັດຕາ ฯລฯ
ຄານະ ฯລฯ ເປັນອະນັດຕາ ฯລฯ

ຊິວຫາທັງທີ່ເປັນອະດີດແລະອະນາຄົດເປັນອະນັດຕາ ບໍ່ຕ້ອງກ່າວເຖິງຊິວຫາທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມບໍ່ເຍື່ອໃຍຊິວຫາທີ່ເປັນອະດີດ ບໍ່ຍິນດີຊິວຫາທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊິວຫາທີ່ເປັນປັດຈຸບັນ

ກາຍ ฯລฯ ເປັນອະນັດຕາ ฯລฯ
ມະໂນ ທັງທີ່ເປັນອະດີດ ແລະອະນາຄົດເປັນອະນັດຕາ ບໍ່ຕ້ອງກ່າວເຖິງມະໂນທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມບໍ່ເຍື່ອໃຍມະໂນທີ່ເປັນອະດີດ ບໍ່ຍິນດີມະໂນທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບມະໂນທີ່ເປັນປັດຈຸບັນ

**ອັດຊັດຕາບັດຕາຕີຕານາຄະຕະສູດທີ ໘ ຈົບ**

# ໑໐. ພາຫິຣານິດຈາຕີຕານາຄະຕະສູດ

## ວ່າດ້ວຍອາຍະຕະນະພາຍນອກທັງທີ່ເປັນອະດີດແລະອະນາຄົດບໍ່ທ່ຽງ

[໑໐] ພິກຂຸທັງຫຼາຍ ຮູບທັງທີ່ເປັນອະດີດແລະອະນາຄົດບໍ່ທ່ຽງ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຮູບທີ່ເປັນອະດີດ ບໍ່ຍິນດີຮູບທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ສັດທະ ໆລໆ
ຄັນທະ ໆລໆ
ຣົດ ໆລໆ
ໂຜດຖັບພະ ໆລໆ
ທຳມາຣົມ ທີ່ເປັນອະດີດແລະອະນາຄົດບໍ່ທ່ຽງ ບໍ່ຕ້ອງກ່າວເຖິງທຳມາຣົມທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍທຳມາຣົມທີ່ເປັນອະດີດ ບໍ່ຍິນດີທຳມາຣົມທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບທຳມາຣົມທີ່ເປັນປັດຈຸບັນ

**ພາຫິຣານິດຈາຕີຕານາຄະຕະສູດທີ ໑໐ ຈົບ**

# ໑໑. ພາຫິຣະທຸກຂາຕີຕານາຄະຕະສູດ

## ວ່າດ້ວຍອາຍະຕະນະພາຍນອກທັງທີ່ເປັນອະດີດແລະອະນາຄົດເປັນທຸກ

[໑໑] ພິກຂຸທັງຫຼາຍ ຮູບທັງທີ່ເປັນອະດີດແລະອະນາຄົດເປັນທຸກ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຮູບທີ່ເປັນອະດີດ ບໍ່ຍິນດີຮູບທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ຮູບທີ່ເປັນປັດຈຸບັນ ໆລໆ

**ພາຫິຣະທຸກຂາຕີຕານາຄະຕະສູດທີ ໑໑ ຈົບ**

# ໑໘. ພາຫິຣານັດຕາຕິຕານາຄະຕະສູດ

## ວ່າດ້ວຍອາຍະຕະນະພາຍນອກທັງທີ່ເປັນອະດີດແລະອະນາຄົດເປັນອະນັດຕາ

[໑໘] ພິກຂຸທັງຫຼາຍ ຮູບທັງທີ່ເປັນອະດີດແລະອະນາຄົດເປັນອະນັດຕາ ບໍ່ຕ້ອງກ່າວເຖິງຮູບທີ່ເປັນປັດຈຸບັນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍຮູບທີ່ເປັນອະດີດ ບໍ່ຍິນດີຮູບທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຮູບທີ່ເປັນປັດຈຸບັນ

ສັດທະ ຯລຯ

ຄັນທະ ຯລຯ

ຣົດ ຯລຯ

ໂຜດຖັບພະ ຯລຯ

ທຳມາຣົມທັງທີ່ເປັນອະດີດ ແລະ ອະນາຄົດເປັນອະນັດຕາ ບໍ່ຕ້ອງກ່າວເຖິງທຳມາຣົມທີ່ເປັນປັດຈຸບັນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມບໍ່ເຍື່ອໃຍທຳມາຣົມທີ່ເປັນອະດີດ ບໍ່ຍິນດີທຳມາຣົມທີ່ເປັນອະນາຄົດ ຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບທຳມາຣົມທີ່ເປັນປັດຈຸບັນ

**ພາຫິຣານັດຕາຕິຕານາຄະຕະສູດທີ ໑໘ ຈົບ**

**ອະນິດຈະວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

# ໘. ຍະມະກະວັກ

## ໝວດວ່າດ້ວຍຄູ່

# ໑. ປະຖົມປຸບເພສຳໂພທະສູດ

## ວ່າດ້ວຍຄວາມດຳຣິກ່ອນຕັດສະຣູ້ ສູດທີ ໑

[໑໓] ເລື່ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍ? ເປັນຄຸນ ອັນໃດເປັນໂທດຂອງຈັກຂຸ (ຕາ) ອັນໃດເປັນ ເຄື່ອງສະບັດອອກຈາກຈັກຂຸ ฯລฯ ໂສຕະ (ຫູ) ฯລฯ ຄານະ (ດັງ) ฯລฯ ຊິວຫາ (ລີ້ນ) ฯລฯ ກາຍ ອັນໃດເປັນຄຸນ ອັນໃດເປັນໂທດຂອງມະໂນ (ໃຈ) ອັນໃດເປັນເຄື່ອງສະບັດອອກຈາກມະໂນ

ພິກຂຸທັງຫຼາຍ ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ສະພາບທີ່ສຸກໂສມະນັດອາໄສຈັກຂຸເກີດຂຶ້ນ ນີ້ເປັນຄຸນຂອງຈັກຂຸ ສະພາບທີ່ຈັກຂຸບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງຈັກຂຸ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຈັກຂຸ ນີ້ເປັນເຄື່ອງສະບັດອອກຈາກຈັກຂຸ

ສະພາບທີ່ສຸກໂສມະນັດອາໄສ ໂສຕະ ฯລฯ
ສະພາບທີ່ສຸກໂສມະນັດອາໄສ ຄານະ ฯລฯ
ສະພາບທີ່ສຸກໂສມະນັດອາໄສ ຊິວຫາ ฯລฯ
ສະພາບທີ່ສຸກໂສມະນັດອາໄສ ກາຍ ฯລฯ

ສະພາບທີ່ສຸກໂສມະນັດອາໄສມະໂນ ນີ້ເປັນຄຸນຂອງມະໂນ ສະພາບທີ່ມະໂນບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງມະໂນ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນມະໂນ ນີ້ເປັນເຄື່ອງສະບັດອອກຈາກມະໂນ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການ ນີ້ຕາມຄວາມເປັນຈິງແນວນີ້ ຕາບນັ້ນເຮົາກໍຍັງບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານ ອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ

ແຕ່ເມື່ອໃດເຮົາຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກ ໂດຍ ຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການນີ້ຕາມຄວາມເປັນຈິງ ແນວນີ້ ເມື່ອນັ້ນເຮົາຈຶ່ງຢັ້ງຢືນວ່າ ເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ

ອັນໜຶ່ງ ຍານທັດສະນະ ເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ປະຖົມປຸບເພສຳໂພທະສູດທີ ໑ ຈົບ**

## ໘. ທຸຕິຍະປຸບເພສຳໂພທະສູດ

### ວ່າດ້ວຍຄວາມດຳຣິກ່ອນຕັດສະຮູ້ ສູດທີ ໘

[໑໔] ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຮູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍເປັນຄຸນ ອັນໃດເປັນໂທດຂອງຮູບ ອັນໃດເປັນເຄື່ອງສະບັດອອກຈາກຮູບ ອັນໃດເປັນຄຸນ ອັນໃດເປັນໂທດຂອງສັດທະ ອັນໃດເປັນເຄື່ອງສະບັດອອກຈາກສັດທະ ฯລฯ ຄັນທະ ฯລฯ ຣົດ ฯລฯ ໂຜດຖັບພະ ອັນໃດເປັນຄຸນ ອັນໃດເປັນໂທດຂອງທຳມາຣົມ ອັນໃດເປັນເຄື່ອງສະບັດອອກຈາກທຳມາຣົມ

ພິກຂຸທັງຫຼາຍ ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ສະພາບທີ່ສຸກໂສມະນັດອາໄສຮູບເກີດຂຶ້ນ ນີ້ເປັນຄຸນຂອງຮູບ ສະພາບທີ່ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຮູບ ນີ້ເປັນເຄື່ອງສະບັດອອກຈາກຮູບ

ສະພາບທີ່ສຸກໂສມະນັດອາໄສສັດທະ ฯລฯ ຄັນທະ ฯລฯ ຣົດ ฯລฯ ໂຜດຖັບພະ ฯລฯ

ສະພາບທີ່ສຸກໂສມະນັດອາໄສທຳມາຣົມເກີດຂຶ້ນ ນີ້ເປັນຄຸນຂອງທຳມາຣົມ ສະພາບທີ່ທຳມາຣົມບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດຂອງທຳມາຣົມ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນທຳມາຣົມ ນີ້ເປັນເຄື່ອງສະບັດອອກຈາກທຳມາຣົມ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ

ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍນອກ ໖ ປະການນີ້ ຕາມຄວາມເປັນຈິງແນວນີ້ ຕາບນັ້ນເຮົາກໍຍັງບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ

ແຕ່ເມື່ອໃດ ເຮົາຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍນອກ ໖ ປະການນີ້ຕາມຄວາມເປັນຈິງແນວນີ້ ເມື່ອນັ້ນເຮົາຈຶ່ງຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ທຸຕິຍະປຸບເພສຳໂພທະສູດທີ ໘ ຈົບ**

# ໙. ປະຖົມອັດສາທະປະຣິເຍສະນາສູດ

## ວ່າດ້ວຍການສະແຫວງຫາຄຸນຂອງອາຍະຕະນະ ສູດທີ ໑

[໑໕] ພິກຂຸທັງຫຼາຍ ເຮົາໄດ້ທ່ຽວສະແຫວງຫາຄຸນຂອງຈັກຂຸ ໄດ້ພົບຄຸນຂອງຈັກຂຸແລ້ວ ຄຸນຂອງຈັກຂຸມີປະມານທໍ່ໃດ ເຮົາເຫັນຄຸນປະມານທໍ່ນັ້ນດີແລ້ວດ້ວຍປັນຍາ ເຮົາໄດ້ທ່ຽວສະແຫວງຫາໂທດຂອງຈັກຂຸ ໄດ້ພົບໂທດຂອງຈັກຂຸແລ້ວ ໂທດຂອງຈັກຂຸມີປະມານທໍ່ໃດ ເຮົາເຫັນໂທດປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກຈັກຂຸ ໄດ້ພົບເຄື່ອງສະບັດອອກຈາກຈັກຂຸແລ້ວ ເຄື່ອງສະບັດອອກຈາກຈັກຂຸມີປະມານທໍ່ໃດ ເຮົາເຫັນເຄື່ອງສະບັດອອກປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງໂສຕະ ຯລຯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງຄານະ ຯລຯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງຊິວຫາ ໄດ້ພົບຄຸນຂອງຊິວຫາແລ້ວ ຄຸນຂອງຊິວຫາມີປະມານທໍ່ໃດ ເຮົາເຫັນຄຸນປະມານທໍ່ນັ້ນດີແລ້ວດ້ວຍ ປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງຊິວຫາ ໄດ້ພົບໂທດຂອງຊິວຫາແລ້ວ ໂທດຂອງຊິວຫາມີປະມານທໍ່ໃດ ເຮົາເຫັນໂທດປະມານທໍ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກ ຊິວຫາ ໄດ້ພົບເຄື່ອງສະບັດອອກຈາກຊິວຫາແລ້ວ ເຄື່ອງສະບັດອອກຈາກຊິວຫາມີປະມານທີ່ໃດ ເຮົາເຫັນເຄື່ອງສະບັດອອກປະມານທີ່ນັ້ນດີແລ້ວດ້ວຍປັນຍາ ฯລฯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງມະໂນ ໄດ້ພົບຄຸນຂອງມະໂນແລ້ວ ຄຸນຂອງມະໂນມີປະມານທີ່ໃດ ເຮົາເຫັນຄຸນປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງມະໂນ ໄດ້ພົບໂທດຂອງມະໂນແລ້ວ ໂທດຂອງມະໂນມີປະມານທີ່ໃດ ເຮົາເຫັນໂທດປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກມະໂນ ໄດ້ພົບເຄື່ອງສະບັດອອກຈາກມະໂນແລ້ວ ເຄື່ອງສະບັດອອກຈາກມະໂນມີປະມານທີ່ໃດ ເຮົາເຫັນເຄື່ອງສະບັດອອກປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການນີ້ ຕາມຄວາມເປັນຈິງ ฯລฯ ຮູ້ ฯລฯ ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ປະຖົມອັດສາທະປະຣິເຍສະນາສູດທີ ໓ ຈົບ**

## ໔. ທຸຕິຍະອັດສາທະປະຣິເຍສະນະສູດ

### ວ່າດ້ວຍການສະແຫວງຫາຄຸນຂອງອາຍະຕະນະ ສູດທີ ໔

[໑໖] ພິກຂຸທັງຫຼາຍ ເຮົາໄດ້ທ່ຽວສະແຫວງຫາຄຸນຂອງຮູບ ໄດ້ພົບຄຸນຂອງຮູບແລ້ວ ຄຸນຂອງຮູບມີປະມານທີ່ໃດ ເຮົາເຫັນຄຸນປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງຮູບ ພົບໂທດຂອງຮູບແລ້ວ ໂທດຂອງຮູບມີປະມານທີ່ໃດ ເຮົາເຫັນໂທດປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກຮູບ ໄດ້ພົບເຄື່ອງສະບັດອອກຈາກຮູບແລ້ວ ເຄື່ອງສະບັດອອກຈາກຮູບມີປະມານທີ່ໃດ ເຮົາເຫັນເຄື່ອງສະບັດອອກປະມານທີ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ສັດທະ ຯລຯ
ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ຄັນທະ ຯລຯ
ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ຣົດ ຯລຯ
ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ໂຜດຖັບພະ ຯລຯ

ເຮົາໄດ້ທ່ຽວສະແຫວງຫາຄຸນຂອງ ທຳມາຣົມ ໄດ້ພົບຄຸນຂອງທຳມາຣົມແລ້ວ ຄຸນຂອງທຳມາຣົມມີປະມານທ່ໃດ ເຮົາເຫັນຄຸນມີປະມານທ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາໂທດຂອງ ທຳມາຣົມ ໄດ້ພົບໂທດຂອງທຳມາຣົມແລ້ວ ໂທດຂອງທຳມາຣົມມີປະມານທ່ໃດ ເຮົາເຫັນໂທດປະມານທ່ນັ້ນດີແລ້ວດ້ວຍປັນຍາ

ເຮົາໄດ້ທ່ຽວສະແຫວງຫາເຄື່ອງສະບັດອອກຈາກ ທຳມາຣົມ ໄດ້ພົບເຄື່ອງສະບັດອອກຈາກທຳມາຣົມແລ້ວ ເຄື່ອງສະບັດອອກຈາກທຳມາຣົມມີປະມານທ່ໃດ ເຮົາເຫັນເຄື່ອງສະບັດອອກປະມານທ່ນັ້ນດີແລ້ວດ້ວຍປັນຍາ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍນອກ ໖ ປະການນີ້ ຕາມຄວາມເປັນຈິງ ຯລຯ ຮູ້ ຯລຯ ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ທຸຕິຍະອັດສາທະປະຣິເຍສະນະສູດທີ ໘ ຈົບ**

# ໕. ປະຖົມະໂນເຈອັດສາທະສູດ

## ວ່າດ້ວຍການປະຕິເສດຄຸນຂອງອາຍະຕະນະ ສູດທີ ໑

[໑ກ] ພິກຂຸທັງຫຼາຍ ຖ້າຄຸນຂອງຈັກຂຸຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນຈັກຂຸ ແຕ່ຍ້ອນຄຸນຂອງຈັກຂຸມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງຕິດໃຈໃນຈັກຂຸ

ຖ້າໂທດຂອງຈັກຂຸຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນຈັກຂຸ ແຕ່ຍ້ອນໂທດຂອງຈັກຂຸມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນຈັກຂຸ

ຖ້າເຄື່ອງສະບັດອອກຈາກຈັກຂຸຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກຈັກຂຸ ແຕ່ຍ້ອນເຄື່ອງສະບັດອອກຈາກຈັກຂຸມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງສະບັດອອກຈາກຈັກຂຸ

ຖ້າຄຸນຂອງໂສຕະຈັກບໍ່ມີແລ້ວ ຯລຯ ຖ້າຄຸນຂອງຄານະຈັກບໍ່ມີແລ້ວ ຯລຯ ຖ້າຄຸນຂອງຊິວຫາຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນຊິວຫາ ແຕ່ຍ້ອນຄຸນຂອງຊິວຫາມີຢູ່ ສັນນັ້ນສັດທັງຫຼາຍຈຶ່ງຕິດໃຈໃນຊິວຫາ

ຖ້າໂທດຂອງຊິວຫາຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນຊິວຫາ ແຕ່ຍ້ອນໂທດຂອງຊິວຫາມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນຊິວຫາ

ຖ້າເຄື່ອງສະບັດອອກຈາກຊິວຫາຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກຊິວຫາ ແຕ່ຍ້ອນເຄື່ອງສະບັດອອກຈາກຊິວຫາມີຢູ່ ສັນນັ້ນສັດທັງຫຼາຍຈຶ່ງສະບັດອອກຈາກຊິວຫາ

ຖ້າຄຸນຂອງກາຍຈັກບໍ່ມີແລ້ວ ຯລຯ ຖ້າຄຸນຂອງມະໂນຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນມະໂນ ແຕ່ຍ້ອນຄຸນຂອງມະໂນມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງຕິດໃຈໃນມະໂນ

ຖ້າໂທດຂອງມະໂນຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນມະໂນ ແຕ່ຍ້ອນໂທດຂອງມະໂນມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນມະໂນ

ຖ້າເຄື່ອງສະບັດອອກຈາກມະໂນຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກມະໂນ ແຕ່ຍ້ອນເຄື່ອງສະບັດອອກຈາກມະໂນມີຢູ່ ສັນນັ້ນສັດທັງຫຼາຍຈຶ່ງສະບັດອອກຈາກມະໂນ

ພິກຂຸທັງຫຼາຍ ຕາບໃດສັດທັງຫຼາຍຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການນີ້ຕາມຄວາມເປັນຈິງ ຕາບນັ້ນສັດທັງຫຼາຍຈະອອກໄປ ລຸດໄປ ພົ້ນໄປ ຈາກໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ມີໃຈປາສະຈາກແດນ ຢູ່ບໍ່ໄດ້ເລີຍ

ແຕ່ເມື່ອໃດສັດທັງຫຼາຍຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນສັດທັງຫຼາຍຈຶ່ງອອກໄປ ລຸດໄປ ພົ້ນໄປ ຈາກໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ມີໃຈປາສະຈາກແດນຢູ່ໄດ້

**ປະຖົມະໂນເຈອັດສາທະສູດທີ ໕ ຈົບ**

# ໖. ທຸຕິຍະໂນເຈອັດສາທະສູດ

## ວ່າດ້ວຍການປະຕິເສດຄຸນຂອງອາຍະຕະນະ ສູດທີ ໘

[໑໗] ພິກຂຸທັງຫຼາຍ ຖ້າຄຸນຂອງຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນຮູບ ແຕ່ຍ້ອນຄຸນຂອງຮູບມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງຕິດໃຈໃນຮູບ

ຖ້າໂທດຂອງຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນຮູບ ແຕ່ຍ້ອນໂທດຂອງຮູບມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນຮູບ

ຖ້າເຄື່ອງສະບັດອອກຈາກຮູບຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງສະບັດອອກຈາກຮູບ ແຕ່ຍ້ອນເຄື່ອງສະບັດອອກຈາກຮູບມີຢູ່ ສັນນັ້ນສັດທັງຫຼາຍຈຶ່ງສະບັດອອກຈາກຮູບ

ຖ້າຄຸນຂອງສັດທະ ຯລຯ ຂອງຄັນທະ ຯລຯ ຂອງຣົດ ຯລຯ ຂອງໂຜດຖັບພະ ຯລຯ

ຖ້າຄຸນຂອງທຳມາຣົມຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງຕິດໃຈໃນທຳມາຣົມ ແຕ່ຍ້ອນຄຸນຂອງທຳມາຣົມມີຢູ່ ດັ່ງນັ້ນສັດທັງຫຼາຍ ຈຶ່ງຕິດໃຈໃນທຳມາຣົມ

ຖ້າໂທດຂອງທຳມາຣົມຈັກບໍ່ມີແລ້ວ ສັດທັງຫຼາຍກໍບໍ່ເພິ່ງເບື່ອໜ່າຍໃນທຳມາຣົມ ແຕ່ຍ້ອນໂທດຂອງທຳມາຣົມມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງເບື່ອໜ່າຍໃນທຳມາຣົມ

ຖ້າເຄື່ອງສະບັດອອກຈາກທຳມາຣົມຈັກບໍ່ມີແລ້ວ ສັດທັງຫຼາຍ ກໍບໍ່ເພິ່ງສະບັດອອກຈາກທຳມາຣົມ ຍ້ອນເຄື່ອງສະບັດອອກຈາກທຳມາຣົມມີຢູ່ ດັ່ງນັ້ນສັດທັງຫຼາຍຈຶ່ງສະບັດອອກຈາກທຳມາຣົມ

ພິກຂຸທັງຫຼາຍ ຕາບໃດສັດທັງຫຼາຍຍັງບໍ່ຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍນອກ ໖ ປະການນີ້ ຕາມຄວາມເປັນຈິງ ເມື່ອນັ້ນ ສັດທັງຫຼາຍຈະອອກໄປ ລຸດໄປ ພົ້ນໄປ ຈາກໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ມີໃຈປາສະຈາກແດນຢູ່ບໍ່ໄດ້ເລີຍ

ແຕ່ເມື່ອໃດສັດທັງຫຼາຍຮູ້ຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ເຄື່ອງສະບັດອອກໂດຍຄວາມເປັນເຄື່ອງສະບັດອອກຈາກອາຍະຕະນະພາຍໃນ ໖ ປະການນີ້ ຕາມຄວາມເປັນຈິງ ເມື່ອນັ້ນສັດທັງຫຼາຍຈຶ່ງອອກໄປ ລຸດໄປ ພົ້ນໄປ ຈາກໂລກພ້ອມທັງເທວະໂລກ ມານ

ໂລກ ພົມມະໂລກ ຈາກໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ມີໃຈປາສະຈາກແດນຢູ່ໄດ້

**ທຸຕິຍະໂນເຈອັດສາທະສູດທີ ໖ ຈົບ**

## ໗. ປະຖະມາພິນັນທະສູດ

### ວ່າດ້ວຍຜູ້ເພີດເພີນໃນອາຍະຕະນະ ສູດທີ ໑

[໑໙] ພິກຂຸທັງຫຼາຍ ຜູ້ທີ່ເພີດເພີນໃນຈັກຂຸ ຊື່ວ່າເພີດເພີນໃນທຸກ ຜູ້ທີ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ຜູ້ທີ່ເພີດເພີນໃນ ໂສຕະ ຯລຯ
ຜູ້ທີ່ເພີດເພີນໃນ ຄານະ ຯລຯ
ຜູ້ທີ່ເພີດເພີນ ຊິວຫາ ຯລຯ
ຜູ້ທີ່ເພີດເພີນໃນ ກາຍ ຯລຯ
ຜູ້ທີ່ເພີດເພີນໃນມະໂນ ຊື່ວ່າເພີດເພີນໃນທຸກ ຜູ້ທີ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ພິກຂຸທັງຫຼາຍ ຜູ້ທີ່ບໍ່ເພີດເພີນໃນຈັກຂຸ ຊື່ວ່າບໍ່ເພີດເພີນໃນທຸກ ຜູ້ທີ່ບໍ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກໄດ້

ຜູ້ທີ່ບໍ່ເພີດເພີນໃນ ໂສຕະ ຯລຯ
ຜູ້ທີ່ບໍ່ເພີດເພີນໃນ ຄານະ ຯລຯ
ຜູ້ທີ່ບໍ່ເພີດເພີນໃນ ຊິວຫາ ຯລຯ
ຜູ້ທີ່ບໍ່ເພີດເພີນໃນ ກາຍ ຯລຯ
ຜູ້ທີ່ບໍ່ເພີດເພີນໃນ ມະໂນ ຊື່ວ່າບໍ່ເພີດເພີນໃນທຸກ ຜູ້ທີ່ບໍ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກໄດ້

**ປະຖະມາພິນັນທະສູດທີ ໗ ຈົບ**

# ๗. ທຸຕິຍາພິນັນທະສູດ

## ວ່າດ້ວຍຜູ້ເພີດເພີນໃນອາຍະຕະນະ ສູດທີ ๘

[໔໐] ພິກຂຸທັງຫຼາຍ ຜູ້ທີ່ເພີດເພີນໃນຮູບ ຊື່ວ່າເພີດເພີນໃນທຸກ ຜູ້ທີ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ຜູ້ທີ່ເພີດເພີນໃນສັດທະ ຯລຯ ຄັນທະ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ
ຜູ້ທີ່ເພີດເພີນໃນ ທຳມາຣົມ ຊື່ວ່າເພີດເພີນໃນທຸກ ຜູ້ທີ່ເພີດເພີນໃນທຸກ ເຮົາກ່າວວ່າ ພົ້ນຈາກທຸກບໍ່ໄດ້

ພິກຂຸທັງຫຼາຍ ຜູ້ທີ່ບໍ່ເພີດເພີນໃນຮູບ ຊື່ວ່າ ບໍ່ເພີດເພີນໃນທຸກ ຜູ້ທີ່ບໍ່ເພີດເພີນທຸກ ເຮົາກ່າວວ່າ ພົ້ນຈາກທຸກໄດ້
ຜູ້ທີ່ບໍ່ເພີດເພີນໃນສັດທະ ຯລຯ ຄັນທະ ຯລຯ ຣົດ ຯລຯ ໂຜດຖັບພະ ຯລຯ
ຜູ້ທີ່ບໍ່ເພີດເພີນໃນທຳມາຣົມ ຊື່ວ່າ ບໍ່ເພີດເພີນໃນທຸກ ຜູ້ທີ່ບໍ່ເພີດເພີນໃນທຸກ ເຮົາກ່າວວ່າພົ້ນຈາກທຸກໄດ້

**ທຸຕິຍາພິນັນທະສູດທີ ๗ ຈົບ**

# ໘. ປະຖົມທຸກຂຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງທຸກ ສູດທີ ໑

[໔໑] ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຈັກຂຸ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາ ແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງໂສຕະ ຯລຯ ແຫ່ງຄານະ ຯລຯ ແຫ່ງຊິວຫາ ຯລຯ ແຫ່ງກາຍ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງມະໂນ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາ ແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຈັກຂຸ ນີ້ເປັນ

ຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງໂສຕະ ຯລຯ ແຫ່ງຄານະ ຯລຯ ແຫ່ງຊິວຫາ ຯລຯ ແຫ່ງກາຍ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງມະໂນ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາ ແລະມໍລະນະ

**ປະຖົມທຸກຂຸບປາທະສູດທີ ໗ ຈົບ**

## ໑໐. ທຸຕິຍະທຸກຂຸບປາທະສູດ

### ວ່າດ້ວຍຄວາມເກີດຂຶ້ນແຫ່ງທຸກ ສູດທີ ໘

[໔໘] ພິກຂຸທັງຫຼາຍ ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງຮູບ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາແລະມໍລະນະ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງສັດທະ ຯລຯ ແຫ່ງຄັນທະ ຯລຯ ແຫ່ງຣົດ ຯລຯ ແຫ່ງໂຜດຖັບພະ ຯລຯ

ຄວາມເກີດຂຶ້ນ ຄວາມຕັ້ງຢູ່ ຄວາມບັງເກີດ ຄວາມຜາກົດແຫ່ງທຳມາຣົມ ນີ້ເປັນຄວາມເກີດຂຶ້ນແຫ່ງທຸກ ເປັນຄວາມຕັ້ງຢູ່ແຫ່ງພະຍາດ ເປັນຄວາມຜາກົດແຫ່ງຊະຣາ ແລະມໍລະນະ

ພິກຂຸທັງຫຼາຍ ສ່ວນຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງຮູບ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບລະງັບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາແລະມໍລະນະ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງສັດທະ ຯລຯ ແຫ່ງຄັນທະ ຯລຯ ແຫ່ງຣົດ ຯລຯ ແຫ່ງໂຜດຖັບພະ ຯລຯ

ຄວາມດັບ ຄວາມສະງົບລະງັບ ຄວາມຕັ້ງຢູ່ບໍ່ໄດ້ແຫ່ງທຳມາຣົມ ນີ້ເປັນຄວາມດັບແຫ່ງທຸກ ເປັນຄວາມສະງົບແຫ່ງພະຍາດ ເປັນຄວາມຕັ້ງຢູ່ບໍ່ໄດ້ແຫ່ງຊະຣາ ແລະມໍລະນະ

**ທຸຕິຍະທຸກຂຸບປາທະສູດທີ ໑໐ ຈົບ**

**ຍະມະກະວັກທີ ໘ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມປຸບເພສຳໂພທະສູດ | ໒. ທຸຕິຍະປຸບເພສຳໂພທະສູດ |
| ໓. ປະຖົມອັດສາທະປະຣິເຍສະນາສູດ | ໔. ທຸຕິຍະອັດສາທະປະຣິເຍສະນະສູດ |
| ໕. ປະຖົມະໂນເຈອັດສາທະສູດ | ໖. ທຸຕິຍະໂນເຈອັດສາທະສູດ |
| ໗. ປະຖະມາພິນັນທະສູດ | ໘. ທຸຕິຍາພິນັນທະສູດ |
| ໙. ປະຖົມທຸກຂຸບປາທະສູດ | ໑໐. ທຸຕິຍະທຸກຂຸບປາທະສູດ |

# ໓. ສັບພະວັກ

## ໝວດວ່າດ້ວຍສິ່ງທັງປວງ

## ໑. ສັບພະສູດ

### ວ່າດ້ວຍສິ່ງທັງປວງ

[໒໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງສິ່ງທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ກໍອັນໃດນໍ? ຊື່ວ່າສິ່ງທັງປວງ

ຄື (໑) ຈັກຂຸກັບຮູບ (໒) ໂສຕະກັບສັດທະ (໓) ຄານະກັບຄັນທະ (໔) ຊິວຫາກັບຣົດ (໕) ກາຍກັບໂຜດຖັບພະ (໖) ມະໂນກັບທຳມາຣົມ

ນີ້ເຮົາຮຽກວ່າ ສິ່ງທັງປວງ

ພິກຂຸທັງຫຼາຍ ຜູ້ໃດເພິ່ງກ່າວແນວນີ້ວ່າ ຂ້າພະເຈົ້າຈັກບອກເຊົາສິ່ງທັງປວງແລ້ວບັນຍັດສິ່ງອື່ນແທນ ຄຳເວົ້າຂອງຜູ້ນັ້ນຄົງເປັນພຽງຄຳເວົ້າທໍ່ນັ້ນ ເມື່ອຖືກຖາມເຂົ້າກໍຄົງຕອບບໍ່ໄດ້ແລະເຖິງຄວາມລຳບາກຍ່າງຍິ່ງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເຂົາຖືກຖາມໃນສິ່ງອັນບໍ່ແມ່ນວິໄສ

**ສັບພະສູດທີ ໑ ຈົບ**

## ໒. ປະຫານະສູດ

### ວ່າດ້ວຍທຳເພື່ອລະສິ່ງທັງປວງ

[໒໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳ ເພື່ອລະສິ່ງທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເພື່ອລະສິ່ງທັງປວງ ເປັນແນວໃດ?

ຄື ຈັກຂຸເປັນສິ່ງທີ່ຄວນລະ ຮູບເປັນສິ່ງທີ່ຄວນລະ ຈັກຂຸວິນຍານເປັນສິ່ງທີ່ຄວນລະ ຈັກ

ຊຸສຳຜັດເປັນສິ່ງທີ່ຄວນລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍເປັນສິ່ງທີ່ຄວນລະ

ໂສຕະ ເປັນສິ່ງທີ່ຄວນລະ ຯລຯ
ຄານະ ເປັນສິ່ງທີ່ຄວນລະ ຯລຯ

ຊິວຫາເປັນສິ່ງທີ່ຄວນລະ ຣົດເປັນສິ່ງທີ່ຄວນລະ ຊິວຫາວິນຍານເປັນສິ່ງທີ່ຄວນລະ ຊິວຫາສຳຜັດເປັນສິ່ງທີ່ຄວນລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ກໍເປັນສິ່ງທີ່ຄວນລະ ກາຍເປັນສິ່ງທີ່ຄວນລະ ຯລຯ

ມະໂນເປັນສິ່ງທີ່ຄວນລະ ທຳມາຣົມເປັນສິ່ງທີ່ຄວນລະ ມະໂນວິນຍານເປັນສິ່ງທີ່ຄວນລະ ມະໂນສຳຜັດເປັນສິ່ງທີ່ຄວນລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ກໍເປັນສິ່ງທີ່ຄວນລະ ພິກຂຸທັງຫຼາຍ ທຳເພື່ອລະສິ່ງທັງປວງ ເປັນແນວນີ້ແລ

**ປະຫານະສູດທີ ໘ ຈົບ**

## ໙. ອະພິນຍາປະຣິນຍາປະຫານະສູດ

## ວ່າດ້ວຍທຳເພື່ອຮູ້ຍິ່ງກຳນົດຮູ້ແລ້ວລະສິ່ງທັງປວງ

[໔໕] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເພື່ອຮູ້ຍິ່ງ ກຳນົດຮູ້ແລ້ວລະສິ່ງທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເພື່ອຮູ້ຍິ່ງ ກຳນົດຮູ້ແລ້ວລະສິ່ງທັງປວງ ເປັນແນວໃດ?

ຄື ຈັກຂຸ ເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຮູບເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຈັກຂຸວິນຍານເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຈັກຂຸສຳຜັດເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຯລຯ

ຊິວຫາ ເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຣົດເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຊິວຫາວິນຍານເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ຊິວຫາສຳຜັດເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈກໍເປັນສິ່ງທີ່ຄວນຮູ້ຍິ່ງ ກຳນົດຮູ້ແລ້ວລະ

ກາຍ ເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ ຯລຯ

ມະໂນ ເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ ທໍາມາຣົມເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ ມະໂນວິນຍານເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ ມະໂນສໍາຜັດເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສໍາຜັດເປັນປັດໄຈ ກໍເປັນສິ່ງທີ່ຄວນຮູ້ຍິ່ງ ກໍານົດຮູ້ແລ້ວລະ

ພິກຂຸທັງຫຼາຍ ທໍາເພື່ອຮູ້ຍິ່ງ ກໍານົດຮູ້ແລ້ວລະສິ່ງທັງປວງ ເປັນແນວນີ້ແລ

**ອະພິນຍາປະຣິນຍາປະຫານະສູດທີ ໓ ຈົບ**

# ໔. ປະຖົມອະປະຣິຊານນະສູດ

## ວ່າດ້ວຍຜູ້ບໍ່ກໍານົດຮູ້ສິ່ງທັງປວງ ສູດທີ ໑

[໔໖] ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະສິ່ງທັງປວງ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະສິ່ງທັງປວງອັນໃດນໍ? ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ຄື ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະຈັກຂຸ ເປັນຜູ້ບໍ່ຄວນ ເພື່ອຄວາມສິ້ນທຸກ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະຮູບ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະຈັກຂຸວິນຍານ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະຈັກຂຸສໍາຜັດ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສໍາຜັດເປັນປັດໄຈ ກໍເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ຯລຯ

ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະຊິວຫາ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ຯລຯ ຣົດ ຯລຯ ຊິວຫາວິນຍານ ຯລຯ ຊິວຫາສໍາຜັດ ຯລຯ ບຸກຄົນ ເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສໍາຜັດເປັນປັດໄຈ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ຯລຯ ກາຍ ຯລຯ

ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະມະໂນ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ຯລຯ ທໍາມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສໍາຜັດ ຯລຯ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈ ກໍເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກໍານົດຮູ້ ບໍ່ຄາຍກໍາໜັດ ບໍ່ລະສິ່ງທັງປວງນີ້ແລ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ສ່ວນບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະສິ່ງທັງປວງໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

ອັນໜຶ່ງ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະສິ່ງທັງປວງອັນໃດນໍໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

ຄື ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະຈັກຂຸໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະຮູບໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະຈັກຂຸວິນຍານໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະຈັກຂຸສໍາຜັດໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາ ໜັດ ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສໍາຜັດເປັນປັດໄຈໄດ້ ກໍເປັນຜູ້ຄວນເພື່ອຄວາມສິ້ນທຸກ ຯລຯ

ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະຊິວຫາໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ຯລຯ ຣົດ ຯລຯ ຊິວຫາວິນຍານ ຯລຯ ຊິວຫາສໍາຜັດ ຯລຯ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສໍາຜັດເປັນປັດໄຈໄດ້ ກໍເປັນຜູ້ຄວນເພື່ອຄວາມສິ້ນທຸກ ຯລຯ ກາຍ ຯລຯ

ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະມະໂນໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ຯລຯ ທໍາມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສໍາຜັດ ຯລຯ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈໄດ້ ກໍເປັນຜູ້ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ຍິ່ງ ກໍານົດຮູ້ ຄາຍກໍາໜັດ ລະສິ່ງທັງປວງນີ້ແລໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

**ປະຖົມອະປະຣິຊານນະສູດທີ ໔ ຈົບ**

# ໕. ທຸຕິຍະອະປະຣິຊານນະສູດ

## ວ່າດ້ວຍຜູ້ບໍ່ກຳນົດຮູ້ສິ່ງທັງປວງ ສູດທີ ໘

[໘໗] ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງອັນໃດນໍ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ຄື ຈັກຂຸ ຣູບ ຈັກຂຸວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານ ຯລຯ
ຊິວຫາ ຣົດ ຊິວຫາວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານ
ກາຍ ໂຜດຖັບພະ ກາຍວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງກາຍວິນຍານ
ມະໂນ ທຳມາຣົມ ມະໂນວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ

ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະສິ່ງທັງປວງນີ້ແລ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ສ່ວນບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

ອັນໜຶ່ງ ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງອັນໃດນໍໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

ຄື ຈັກຂຸ ຣູບ ຈັກຂຸວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານ ຯລຯ
ຊິວຫາ ຣົດ ຊິວຫາວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານ
ກາຍ ໂຜດຖັບພະ ກາຍວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງກາຍວິນຍານ
ມະໂນ ທຳມາຣົມ ມະໂນວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ

ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະສິ່ງທັງປວງນີ້ແລໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

**ທຸຕິຍະອະປະຣິຊານນະສູດທີ ໕ ຈົບ**

# ໖. ອາທິດຕະສູດ

## ວ່າດ້ວຍສິ່ງທັງປວງເປັນຂອງຮ້ອນ

[໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດຄະຍາສີສະ ແຄມຝັ່ງແມ່ນ້ຳຄະຍາພ້ອມກັບພິກຂຸ ໑,໐໐໐ ອົງໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ສິ່ງທັງປວງເປັນຂອງຮ້ອນ ກໍອັນໃດນໍຊື່ວ່າສິ່ງທັງປວງເປັນຂອງຮ້ອນ ຄື ຈັກຂຸເປັນຂອງຮ້ອນ ຮູບເປັນຂອງຮ້ອນ ຈັກຂຸວິນຍານເປັນຂອງຮ້ອນ ຈັກຂຸສຳຜັດ ເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ ເຮົາກ່າວວ່າ ຮ້ອນຍ້ອນ ໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຊາດ (ຄວາມເກີດ) ຍ້ອນຊະຣາ (ຄວາມແກ່) ຍ້ອນມໍລະນະ (ຄວາມຕາຍ) ຍ້ອນໂສກະ (ຄວາມໂສກເສົ້າ) ຍ້ອນປະຣິເທວະ (ຄວາມຮ່ຳໄຮ) ຍ້ອນທຸກ (ຄວາມທຸກກາຍ) ຍ້ອນໂທມະນັດ (ຄວາມທຸກໃຈ) ຍ້ອນອຸປາຍາດ (ຄວາມຄັບແຄ້ນໃຈ) ຯລຯ

ຊິວຫາເປັນຂອງຮ້ອນ ຣົດເປັນຂອງຮ້ອນ ຊິວຫາວິນຍານເປັນຂອງຮ້ອນ ຊິວຫາສຳຜັດເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ ເຮົາກ່າວວ່າ ຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຊາດ ຍ້ອນຊະຣາ ຍ້ອນ ມໍລະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ ຯລຯ

ມະໂນເປັນຂອງຮ້ອນ ທຳມາຣົມເປັນຂອງຮ້ອນ ມະໂນວິນຍານເປັນຂອງຮ້ອນ ມະໂນສຳຜັດເປັນຂອງຮ້ອນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍເປັນຂອງຮ້ອນ ຮ້ອນຍ້ອນອັນໃດ ເຮົາກ່າວວ່າ ຮ້ອນຍ້ອນໄຟຄືຣາຄະ ຍ້ອນໄຟຄືໂທສະ ຍ້ອນໄຟຄືໂມຫະ ຮ້ອນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍລະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກ

ບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄວາມ

ສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດອາທິດຕະສູດນີ້ແລ້ວ ພິກຂຸເຫຼົ່ານັ້ນກໍມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອົງຕັດໄວຍາກອນພາສິດນີ້ຢູ່ ພິກຂຸ ໑,໐໐໐ ອົງນັ້ນ ກໍມີຈິດລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ

**ອາທິດຕະສູດທີ ໖ ຈົບ**

# ໗. ອັນທະພູຕະສູດ

## ວ່າດ້ວຍສິ່ງທັງປວງເປັນຂອງມືດມົນ

[໔໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ສິ່ງທັງປວງເປັນຂອງມືດມົນ ກໍອັນໃດນໍ? ຊື່ວ່າສິ່ງທັງປວງເປັນຂອງມືດມົນ ຄືຈັກຂຸເປັນຂອງມືດມົນ ຮູບເປັນຂອງມືດມົນ ຈັກຂຸວິນຍານເປັນຂອງມືດມົນ ຈັກຂຸສຳຜັດເປັນຂອງມືດມົນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍເປັນຂອງມືດມົນ ມືດມົນຍ້ອນອັນໃດ ເຮົາກ່າວວ່າ ມືດມົນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍລະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ ຯລຯ

ຊິວຫາ ເປັນຂອງມືດມົນ ຣົດເປັນຂອງມືດມົນ ຊິວຫາວິນຍານເປັນຂອງມືດມົນ ຊິວຫາສຳຜັດເປັນຂອງມືດມົນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ກໍເປັນຂອງມືດມົນ ມືດມົນຍ້ອນອັນໃດ ເຮົາກ່າວວ່າ ມືດມົນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍລະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ

ກາຍ ເປັນຂອງມືດມົນ ຯລຯ

ມະໂນ ເປັນຂອງມືດມົນ ທຳມາຣົມເປັນຂອງມືດມົນ ມະໂນວິນຍານເປັນຂອງມືດມົນ ມະໂນສຳຜັດເປັນຂອງມືດມົນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍເປັນຂອງມືດມົນ ມືດມົນຍ້ອນອັນໃດ ເຮົາກ່າວວ່າ ມືດມົນຍ້ອນຊາດ ຍ້ອນຊະຣາ ຍ້ອນມໍລະນະ ຍ້ອນໂສກະ ຍ້ອນປະຣິເທວະ ຍ້ອນທຸກ ຍ້ອນໂທມະນັດ ຍ້ອນອຸປາຍາດ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

**ອັນທະພູຕະສູດທີ ໗ ຈົບ**

# ໘. ສະມຸກຄາຕະສາຣຸບປະສູດ

## ວ່າດ້ວຍປະຕິປະທາອັນສົມຄວນແກ່ການເພີກຖອນຄວາມກຳນົດໝາຍ

[໓໐] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາອັນສົມຄວນແກ່ການເພີກຖອນຄວາມກຳນົດໝາຍ ທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ປະຕິປະທາອັນສົມຄວນແກ່ການເພີກຖອນຄວາມກຳນົດໝາຍທັງປວງ ເປັນແບບໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ກຳນົດໝາຍຈັກຂຸ ບໍ່ກຳນົດໝາຍໃນຈັກຂຸ ບໍ່ກຳນົດໝາຍຍ້ອນຈັກຂຸ ບໍ່ກຳນົດໝາຍວ່າ ຈັກຂຸຂອງເຮົາ

ບໍ່ກຳນົດໝາຍຮູບ ບໍ່ກຳນົດໝາຍໃນຮູບ ບໍ່ກຳນົດໝາຍຍ້ອນຮູບ ບໍ່ກຳນົດໝາຍວ່າ ຮູບຂອງເຮົາ

ບໍ່ກຳນົດໝາຍຈັກຂຸວິນຍານ ບໍ່ກຳນົດໝາຍໃນຈັກຂຸວິນຍານ ບໍ່ກຳນົດໝາຍຍ້ອນຈັກຂຸວິນຍານ ບໍ່ກຳນົດໝາຍວ່າ ຈັກຂຸວິນຍານຂອງເຮົາ

ບໍ່ກຳນົດໝາຍຈັກຂຸສຳຜັດ ບໍ່ກຳນົດໝາຍໃນຈັກຂຸສຳຜັດ ບໍ່ກຳນົດໝາຍຍ້ອນຈັກຂຸສຳຜັດ ບໍ່ກຳນົດໝາຍວ່າ ຈັກຂຸສຳຜັດຂອງເຮົາ

ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່

ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນຂອງເຮົາ ຯລຯ

ບໍ່ກຳນົດໝາຍຊິວຫາ ບໍ່ກຳນົດໝາຍໃນຊິວຫາ ບໍ່ກຳນົດໝາຍຍ້ອນຊິວຫາ ບໍ່ກຳນົດໝາຍວ່າ ຊິວຫາຂອງເຮົາ

ບໍ່ກຳນົດໝາຍຣົດ ບໍ່ກຳນົດໝາຍໃນຣົດ ບໍ່ກຳນົດໝາຍຍ້ອນຣົດ ບໍ່ກຳນົດໝາຍວ່າ ຣົດຂອງເຮົາ

ບໍ່ກຳນົດໝາຍຊິວຫາວິນຍານ ບໍ່ກຳນົດໝາຍໃນຊິວຫາວິນຍານ ບໍ່ກຳນົດໝາຍຍ້ອນຊິວຫາວິນຍານ ບໍ່ກຳນົດໝາຍວ່າ ຊິວຫາວິນຍານຂອງເຮົາ

ບໍ່ກຳນົດໝາຍຊິວຫາສຳຜັດ ບໍ່ກຳນົດໝາຍໃນຊິວຫາສຳຜັດ ບໍ່ກຳນົດໝາຍ ຍ້ອນຊິວຫາສຳຜັດ ບໍ່ກຳນົດໝາຍວ່າ ຊິວຫາສຳຜັດຂອງເຮົາ

ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍ ແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈນັ້ນຂອງເຮົາ ຯລຯ

ບໍ່ກຳນົດໝາຍມະໂນ ບໍ່ກຳນົດໝາຍໃນມະໂນ ບໍ່ກຳນົດໝາຍຍ້ອນມະໂນ ບໍ່ກຳນົດໝາຍວ່າ ມະໂນຂອງເຮົາ

ບໍ່ກຳນົດໝາຍທຳມາຣົມ ບໍ່ກຳນົດໝາຍໃນທຳມາຣົມ ບໍ່ກຳນົດໝາຍຍ້ອນທຳມາຣົມ ບໍ່ກຳນົດໝາຍວ່າ ທຳມາຣົມຂອງເຮົາ

ບໍ່ກຳນົດໝາຍມະໂນວິນຍານ ບໍ່ກຳນົດໝາຍໃນມະໂນວິນຍານ ບໍ່ກຳນົດໝາຍຍ້ອນມະໂນວິນຍານ ບໍ່ກຳນົດໝາຍວ່າ ມະໂນວິນຍານຂອງເຮົາ

ບໍ່ກຳນົດໝາຍມະໂນສຳຜັດ ບໍ່ກຳນົດໝາຍໃນມະໂນສຳຜັດ ບໍ່ກຳນົດໝາຍຍ້ອນມະໂນສຳຜັດ ບໍ່ກຳນົດໝາຍວ່າ ມະໂນສຳຜັດຂອງເຮົາ

ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນຍ້ອນ

ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນຂອງເຮົາ

ບໍ່ກຳນົດໝາຍສິ່ງທັງປວງ ບໍ່ກຳນົດໝາຍໃນສິ່ງທັງປວງ ບໍ່ກຳນົດໝາຍຍ້ອນສິ່ງທັງປວງ ບໍ່ກຳນົດໝາຍວ່າ ສິ່ງທັງປວງຂອງເຮົາ

ພິກຂຸຜູ້ບໍ່ກຳນົດໝາຍຢູ່ແນວນີ້ຍ່ອມບໍ່ຖືໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຖືໝັ້ນ ຍ່ອມບໍ່ສະດຸ້ງຢ້ານ ເມື່ອບໍ່ສະດຸ້ງຢ້ານ ຍ່ອມດັບສະເພາະຕົນເອງ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ປະຕິປະທາອັນສົມຄວນແກ່ການເພີກຖອນຄວາມກຳນົດໝາຍທັງປວງເປັນແນວນີ້ແລ

**ສະມຸກຄາຕະສາຣຸບປະສູດທີ ໗ ຈົບ**

# ໘. ປະຖົມສະມຸກຄາຕະສັບປາຍະສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນ

## ຄວາມກຳນົດໝາຍ ສູດທີ ໑

[໑໑] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາອັນເປັນສັບປາຍະ ແກ່ການເພີກຖອນຄວາມກຳນົດໝາຍທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນຄວາມກຳນົດໝາຍທັງປວງນັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ກຳນົດໝາຍຈັກຂຸ ບໍ່ກຳນົດໝາຍໃນຈັກຂຸ ບໍ່ກຳນົດໝາຍຍ້ອນຈັກຂຸ ບໍ່ກຳນົດໝາຍວ່າ ຈັກຂຸຂອງເຮົາ ບໍ່ກຳນົດໝາຍຮູບ ຯລຯ ບໍ່ກຳນົດໝາຍຈັກຂຸວິນຍານ ຯລຯ ບໍ່ກຳນົດ ໝາຍຈັກຂຸສຳຜັດ ຯລຯ ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກ

ທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນຂອງເຮົາ

ພິກຂຸກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີພົບຢູ່ນັ້ນເອງ ຯລຯ

ບໍ່ກຳນົດໝາຍຊິວຫາ ບໍ່ກຳນົດໝາຍໃນຊິວຫາ ບໍ່ກຳນົດໝາຍຍ້ອນຊິວຫາ ບໍ່ກຳນົດໝາຍວ່າ ຊິວຫາຂອງເຮົາ ບໍ່ກຳນົດໝາຍຣົດ ຯລຯ ບໍ່ກຳນົດໝາຍຊິວຫາວິນຍານ ຯລຯ ບໍ່ກຳນົດໝາຍຊິວຫາສຳຜັດ ຯລຯ ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈນັ້ນຂອງເຮົາ

ພິກຂຸກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີພົບຢູ່ນັ້ນເອງ ຯລຯ

ບໍ່ກຳນົດໝາຍມະໂນ ບໍ່ກຳນົດໝາຍໃນມະໂນ ບໍ່ກຳນົດໝາຍຍ້ອນມະໂນ ບໍ່ກຳນົດໝາຍວ່າ ມະໂນຂອງເຮົາ ບໍ່ກຳນົດໝາຍທຳມາຣົມ ຯລຯ ບໍ່ກຳນົດໝາຍ ມະໂນວິນຍານ ຯລຯ ບໍ່ກຳນົດໝາຍມະໂນສຳຜັດ ຯລຯ ບໍ່ກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນຂອງເຮົາ

ອັນໜຶ່ງ ພິກຂຸກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີພົບຢູ່ນັ້ນເອງ

ບໍ່ກຳນົດໝາຍແມ່ນຂັນ ທາດ ແລະ ອາຍະຕະນະທໍ່ທີ່ມີຢູ່ ບໍ່ກຳນົດໝາຍໃນຂັນ ທາດ

ແລະອາຍະຕະນະ ບໍ່ກຳນົດໝາຍແມ່ນຍ້ອນຂັນ ທາດ ແລະ ອາຍະຕະນະ ບໍ່ກຳນົດໝາຍວ່າ ຂັນ ທາດ ແລະອາຍະຕະນະນັ້ນຂອງເຮົາ

ພິກຂຸຜູ້ບໍ່ກຳນົດໝາຍຢູ່ແນວນີ້ຍ່ອມບໍ່ຖືໝັ້ນສິ່ງໃດ ໆ ໃນໂລກ ເມື່ອບໍ່ຖືໝັ້ນກໍບໍ່ສະດຸ້ງຢ້ານ ເມື່ອບໍ່ສະດຸ້ງຢ້ານ ຍ່ອມດັບສະເພາະຕົນເອງ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນຄວາມກຳນົດໝາຍທັງປວງເປັນແນວນີ້ແລ

**ປະຖົມສະມຸກຄາຕະສັບປາຍະສູດທີ ໗ ຈົບ**

# ໑໐. ທຸຕິຍະສະມຸກຄາຕະສັບປາຍະສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນ

## ຄວາມກຳນົດໝາຍ ສູດທີ ໘

[໖໘] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນຄວາມກຳນົດໝາຍທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ

ປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນຄວາມກຳນົດໝາຍທັງປວງ ເປັນແນວໃດ?

ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ຮູບ ຯລຯ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ฯลฯ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ ฯลฯ

ຊິວຫາທ່ຽງຫຼືບໍ່ທ່ຽງ??

ບໍ່ທ່ຽງ ຂ້ານ້ອຍ ฯลฯ

ຣົດ ฯลฯ ຊິວຫາວິນຍານ ฯลฯ ຊິວຫາສຳຜັດ ฯลฯ ແມ່ນຄວາມສະເຫວີຍອາລົມ ທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ฯลฯ

ທຳມາຣົມ ฯลฯ ມະໂນວິນຍານ ฯลฯ ມະໂນສຳຜັດ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ฯลฯ

ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນຣົດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ

ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ປະຕິປະທາທີ່ເປັນສັບປາຍະແກ່ການເພີກຖອນຄວາມກຳນົດໝາຍທັງປວງເປັນແນວນີ້ແລ

**ທຸຕິຍະສະມຸກຄາຕະສັບປາຍະສູດທີ ໑໐ ຈົບ**

**ສັບພະວັກທີ ໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ສັບພະສູດ
໒. ອະພິນຍາປະຣິນຍາປະຫານະສູດ
໓. ທຸຕິຍະອະປະຣິຊານນະສູດ
໗. ອັນທະພູຕະສູດ
໙. ປະຖົມສະມຸກຄາຕະສັບປາຍະສູດ
໔. ປະຫານະສູດ
໕. ປະຖົມອະປະຣິຊານນະສູດ
໖. ອາທິດຕະສູດ
໘. ສະມຸກຄາຕະສາຣຸບປະສູດ
໑໐. ທຸຕິຍະສະມຸກຄາຕະສັບປາຍະສູດ

# ໔. ຊາຕິທຳມະວັກ

## ໝວດວ່າດ້ວຍສິ່ງທັງປວງມີຄວາມເກີດເປັນທຳມະດາ

## ໑-໑໐. ຊາຕິທຳມາທິສຸດຕະທະສະກະ

### ວ່າດ້ວຍພຣະສູດ ໑໐ ສູດມີຊາຕິທຳມະສູດເປັນຕົ້ນ

[໓໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

(ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ)ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມເກີດເປັນທຳມະດາ

ກໍອັນໃດນໍ? ຊື່ວ່າ ສິ່ງທັງປວງມີຄວາມເກີດເປັນທຳມະດາ

ຄື ຈັກຂຸມີຄວາມເກີດເປັນທຳມະດາ ຮູບ ຯລຯ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດມີຄວາມເກີດເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍມີຄວາມເກີດເປັນທຳມະດາ ຯລຯ

ຊິວຫາ ຯລຯ ຣົດ ຯລຯ ຊິວຫາວິນຍານ ຯລຯ ຊິວຫາສຳຜັດມີຄວາມເກີດເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈກໍມີຄວາມເກີດເປັນທຳມະດາ

ກາຍ ຯລຯ

ມະໂນ ມີຄວາມເກີດເປັນທຳມະດາ ທຳມາຣົມມີຄວາມເກີດເປັນທຳມະດາ ມະໂນວິນຍານມີຄວາມເກີດເປັນທຳມະດາ ມະໂນສຳຜັດມີຄວາມເກີດເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈກໍມີຄວາມເກີດເປັນທຳມະດາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ແມ່ນໃນຮູບ ຯລຯ ແມ່ນໃນຈັກຂຸວິນຍານ ຯລຯ ແມ່ນໃນຈັກຂຸສຳຜັດ ຯລຯ

ຮູ້ແຈ້ງວ່າ ฯลฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສູດທີ ໑ ຈົບ**

[໓໔] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ແກ່ ເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໒ ຈົບ**

[໓໕] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ເຈັບໄຂ້ ເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໓ ຈົບ**

[໓໖] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ຕາຍ ເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໔ ຈົບ**

[໓໗] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ເສົ້າໂສກ ເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໕ ຈົບ**

[໓໘] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ເສົ້າໝອງ ເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໖ ຈົບ**

[໓໙] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ສິ້ນ ໄປເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໗ ຈົບ**

[໔໐] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ເສື່ອມ ໄປເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໘ ຈົບ**

[໔໑] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມ ເກີດ ຂຶ້ນເປັນທຳມະດາ ฯลฯ (ຫຍໍ້)

**ສູດທີ ໙ ຈົບ**

[໔໒] ພິກຂຸທັງຫຼາຍ ສິ່ງທັງປວງມີຄວາມດັບໄປເປັນທຳມະດາ

ກໍອັນໃດນໍ? ຊື່ວ່າ ສິ່ງທັງປວງມີຄວາມດັບໄປເປັນທຳມະດາ

ຄື ຈັກຂຸ ມີຄວາມດັບໄປເປັນທຳມະດາ ຮູບມີຄວາມດັບໄປເປັນທຳມະດາ ຈັກຂຸວິນຍານມີຄວາມດັບໄປເປັນທຳມະດາ ຈັກຂຸສຳຜັດມີຄວາມດັບໄປເປັນທຳມະດາ ແມ່ນຄວາມສະເຫວີຍອາລົມ ທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍມີຄວາມດັບໄປເປັນທຳມະດາ ຯລຯ

ຊິວຫາ ມີຄວາມດັບໄປເປັນທຳມະດາ ຣົດມີຄວາມດັບໄປເປັນທຳມະດາ ຊິວຫາວິນຍານມີຄວາມດັບໄປເປັນທຳມະດາ ຊິວຫາສຳຜັດມີຄວາມດັບໄປເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ກໍມີຄວາມດັບໄປເປັນທຳມະດາ ຯລຯ

ມະໂນ ມີຄວາມດັບໄປເປັນທຳມະດາ ທຳມາຣົມມີຄວາມດັບໄປເປັນທຳມະດາ ມະໂນວິນຍານມີຄວາມດັບໄປເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ກໍມີຄວາມດັບໄປເປັນທຳມະດາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ນິໂຣທະທຳມະສູດທີ ໑໐ ຈົບ**

**ຊາຕິທຳມະວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໔. ສັບພະອະນິດຈະວັກ

## ໝວດວ່າດ້ວຍສິ່ງທັງປວງບໍ່ທ່ຽງ

## ໑-໙. ອະນິດຈາທິສຸດຕະນະວະກະ

### ວ່າດ້ວຍພຣະສູດ ໙ ສູດມີອະນິດຈະສູດເປັນຕົ້ນ

[໔໖] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

(ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ)ໃນບ່ອນນັ້ນ ຯລຯ

ພິກຂຸທັງຫຼາຍ ສິ່ງທັງປວງບໍ່ທ່ຽງ
ກໍອັນໃດນໍ? ຊື່ວ່າສິ່ງທັງປວງບໍ່ທ່ຽງ

ຄື ຈັກຂຸບໍ່ທ່ຽງ ຮູບບໍ່ທ່ຽງ ຈັກຂຸວິນຍານບໍ່ທ່ຽງ ຈັກຂຸສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງ ຯລຯ

ຊິວຫາບໍ່ທ່ຽງ ຣົດບໍ່ທ່ຽງ ຊິວຫາວິນຍານບໍ່ທ່ຽງ ຊິວຫາສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈກໍບໍ່ທ່ຽງ

ກາຍບໍ່ທ່ຽງ ຯລຯ

ມະໂນບໍ່ທ່ຽງ ທຳມາຣົມບໍ່ທ່ຽງ ມະໂນວິນຍານບໍ່ທ່ຽງ ມະໂນສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດ ເປັນປັດໄຈກໍບໍ່ທ່ຽງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນ

ໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍ ອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສູດທີ ໑ ຈົບ**

[໔໔] ພິກຂຸທັງຫຼາຍ ສິ່ງທັງປວງເປັນ ທຸກ ຯລຯ

**ສູດທີ ໒ ຈົບ**

[໔໕] ພິກຂຸທັງຫຼາຍ ສິ່ງທັງປວງເປັນ ອະນັດຕາ ຯລຯ

**ສູດທີ ໓ ຈົບ**

[໔໖] ພິກຂຸທັງຫຼາຍ ສິ່ງທັງປວງຄວນ ຮູ້ຍິ່ງ ຯລຯ

**ສູດທີ ໔ ຈົບ**

[໔໗] ພິກຂຸທັງຫຼາຍ ສິ່ງທັງປວງຄວນ ກຳນົດຮູ້ ຯລຯ

**ສູດທີ ໕ ຈົບ**

[໔໘] ພິກຂຸທັງຫຼາຍ ສິ່ງທັງປວງຄວນ ລະ ຯລຯ

**ສູດທີ ໖ ຈົບ**

[໔໙] ພິກຂຸທັງຫຼາຍ ສິ່ງທັງປວງຄວນ ເຮັດໃຫ້ແຈ້ງ ຯລຯ

**ສູດທີ ໗ ຈົບ**

[໕໐] ພິກຂຸທັງຫຼາຍ ສິ່ງທັງປວງຄວນ ຮູ້ຍິ່ງແລ້ວກຳນົດຮູ້ ຯລຯ

**ສູດທີ ໘ ຈົບ**

[໕໑] ພິກຂຸທັງຫຼາຍ ສິ່ງທັງປວງ ຖືກປະທຸດສະຮ້າຍ ຯລຯ

**ສູດທີ ໙ ຈົບ**

# ໑໐. ອຸປັດສັດຖະສູດ

## ວ່າດ້ວຍສິ່ງທັງປວງຖືກບຽດບຽນ

[໕໘] ພິກຂຸທັງຫຼາຍ ສິ່ງທັງປວງຖືກບຽດບຽນ

ກໍອັນໃດນໍ? ຊື່ວ່າສິ່ງທັງປວງຖືກບຽດບຽນ

ຄື ຈັກຂຸຖືກບຽດບຽນ ຮູບຖືກບຽດບຽນ ຈັກຂຸວິນຍານຖືກບຽດບຽນ ຈັກຂຸສຳຜັດຖືກບຽດບຽນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍຖືກບຽດບຽນ ໆລໆ

ຊິວຫາ ຖືກບຽດບຽນ ຣົດຖືກບຽດບຽນ ຊິວຫາວິນຍານຖືກບຽດບຽນ ຊິວຫາສຳຜັດຖືກບຽດບຽນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ກໍຖືກບຽດບຽນ

ກາຍ ຖືກບຽດບຽນ ໆລໆ

ມະໂນ ຖືກບຽດບຽນ ທຳມາຣົມຖືກບຽດບຽນ ມະໂນວິນຍານຖືກບຽດບຽນ ມະໂນສຳຜັດຖືກບຽດບຽນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍຖືກບຽດບຽນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ໆລໆ

ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍ ອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອຸປັດສັດຖະສູດທີ ໑໐ ຈົບ**

**ສັບພະອະນິດຈະວັກທີ ໕ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

໑. ອະນິດຈະສູດ
໒. ອະນັດຕາສູດ
໓. ປະຣິນເຍີຍຍະສູດ
໔. ສັດສິກາຕັບພະສູດ
໕. ອຸປັດທຸຕະສູດ
໖. ທຸກຂະສູດ
໗. ອະພິນເຍີຍຍະສູດ
໘. ປະຫາຕັບພະສູດ
໙. ອະພິນເຍີຍຍະປະຣິນເຍີຍຍະສູດ
໑໐. ອຸປັດສັດຖະສູດ

### ປະຖົມປັນນາດໃນສະລາຍະຕະນະວັກ ຈົບບໍລິບູນ

## ລວມວັກທີ່ມີໃນປະຖົມປັນນາດນີ້ ຄື

໑. ອະນິດຈະວັກ
໒. ສັບພະວັກ
໓. ສັບພະອະນິດຈະວັກ
໔. ຍະມະກະວັກ
໕. ຊາຕິທຳມະວັກ

# ໘. ທຸຕິຍະປັນນາດ

# ໑. ອະວິດຊາວັກ

### ໝວດວ່າດ້ວຍອະວິດຊາ

## ໑. ອະວິດຊາປະຫານະສູດ

### ວ່າດ້ວຍການລະອະວິດຊາ

[໕໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ບຸກຄົນເມື່ອຮູ້ເຫັນຈັກຂຸໂດຍຄວາມບໍ່ທ່ຽງ ຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ ເມື່ອຮູ້ເຫັນຮູບໂດຍຄວາມບໍ່ທ່ຽງ ຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ ເມື່ອຮູ້ເຫັນຈັກຂຸວິນຍານ ฯลฯ ຈັກຂຸສຳຜັດ ฯลฯ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ໂດຍຄວາມບໍ່ທ່ຽງຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ

ເມື່ອຮູ້ເຫັນໂສຕະ ฯลฯ ຄານະ ฯลฯ ຊິວຫາ ฯลฯ ກາຍ ฯลฯ ມະໂນໂດຍຄວາມບໍ່ທ່ຽງຈຶ່ງຈະລະ ອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ ເມື່ອຮູ້ເຫັນທຳມາຣົມ ມະໂນວິນຍານ ມະໂນສຳຜັດ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດ ເປັນປັດໄຈໂດຍຄວາມບໍ່ທ່ຽງ ຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ

ພິກຂຸ ບຸກຄົນເມື່ອຮູ້ເຫັນແນວນີ້ແລ ຈຶ່ງຈະລະອະວິດຊາໄດ້ ວິດຊາຈຶ່ງຈະເກີດຂຶ້ນ

**ອະວິດຊາປະຫານະສູດທີ ໑ ຈົບ**

# ໘. ສັນໂຍຊະນະປະຫານະສູດ

## ວ່າດ້ວຍການລະສັງໂຍດ

[໕໔] ພິກຂຸທັງຫຼາຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດຈຶ່ງຈະລະສັງໂຍດໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນຈັກຂຸໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້ ເມື່ອຮູ້ເຫັນຮູບໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້ ເມື່ອຮູ້ເຫັນຈັກຂຸວິນຍານໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້ ເມື່ອຮູ້ເຫັນຈັກຂຸສຳຜັດໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດ ເປັນປັດໄຈໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້

ເມື່ອຮູ້ເຫັນໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ມະໂນ ฯລฯ ທຳມາຣົມ ฯລฯ ມະໂນວິນຍານ ฯລฯ ມະໂນສຳຜັດ ฯລฯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈໂດຍຄວາມບໍ່ທ່ຽງຈຶ່ງຈະລະສັງໂຍດໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນແນວນີ້ແລ ຈຶ່ງຈະລະສັງໂຍດໄດ້

**ສັນໂຍຊະນະປະຫານະສູດທີ ໘ ຈົບ**

# ໙. ສັນໂຍຊະນະສະມຸກຄາຕະສູດ

## ວ່າດ້ວຍການຖອນສັງໂຍດ

[໕໕] ພິກຂຸທັງຫຼາຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດ ຈຶ່ງຈະຖອນສັງໂຍດໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນຈັກຂຸໂດຍຄວາມເປັນອະນັດຕາຈຶ່ງຈະຖອນສັງໂຍດໄດ້ ເມື່ອຮູ້ເຫັນຮູບໂດຍຄວາມເປັນອະນັດຕາ ฯລฯ ຈັກຂຸວິນຍານ ฯລฯ ຈັກຂຸສຳຜັດ ฯລฯ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ໂດຍຄວາມເປັນອະນັດຕາຈຶ່ງຈະຖອນສັງໂຍດໄດ້

ເມື່ອຮູ້ເຫັນໂສຕະ ຯລຯ ຄານະຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນ ຯລຯ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈຈຶ່ງຈະຖອນສັງໂຍດໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນແນວນີ້ແລ ຈຶ່ງຈະຖອນສັງໂຍດໄດ້

**ສັນໂຍຊະນະສະມຸກຄາຕະສູດທີ ໓ ຈົບ**

# ໔. ອາສະວະປະຫານະສູດ

## ວ່າດ້ວຍການລະອາສະວະ

[໔໖] ພິກຂຸທັງຫຼາຍໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດ ຈຶ່ງຈະລະອາສະວະໄດ້ ຯລຯ

**ອາສະວະປະຫານະສູດທີ ໔ ຈົບ**

# ໕. ອາສະວະສະມຸກຄາຕະສູດ

## ວ່າດ້ວຍການຖອນອາສະວະ

[໔໗] ພິກຂຸທັງຫຼາຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດ ຈຶ່ງຈະຖອນອາສະວະໄດ້ ຯລຯ

**ອາສະວະສະມຸກຄາຕະສູດທີ ໕ ຈົບ**

# ໖. ອະນຸສະຍະປະຫານະສູດ

## ວ່າດ້ວຍການລະອະນຸໄສ

[໔໘] ພິກຂຸທັງຫຼາຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດຈຶ່ງຈະລະອະນຸໄສໄດ້ ຯລຯ

**ອະນຸສະຍະປະຫານະສູດທີ ໖ ຈົບ**

# ໗. ອະນຸສະຍະສະມຸກຄາຕະສູດ

## ວ່າດ້ວຍການຖອນອະນຸໄສ

[໕໙] ພິກຂຸທັງຫຼາຍ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ເຫັນແນວໃດ ຈຶ່ງຈະຖອນອະນຸໄສໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນຈັກຂຸໂດຍຄວາມເປັນອະນັດຕາ ຈຶ່ງຈະຖອນອະນຸໄສໄດ້ ฯລฯ

ບຸກຄົນເມື່ອຮູ້ເຫັນໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ມະໂນ ฯລฯ ທຳມາຣົມ ฯລฯ ມະໂນວິນຍານ ฯລฯ ມະໂນສຳຜັດ ฯລฯ ບຸກຄົນເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈໂດຍຄວາມເປັນອະນັດຕາຈຶ່ງ ຈະຖອນອະນຸໄສໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຮູ້ເຫັນແນວນີ້ແລ ຈຶ່ງຈະຖອນອະນຸໄສໄດ້

**ອະນຸສະຍະສະມຸກຄາຕະສູດທີ ໗ ຈົບ**

# ໘. ສັບພຸປາທານະປະຣິຍາທານະສູດ

## ວ່າດ້ວຍທຳເພື່ອກຳນົດຮູ້ອຸປາທານທັງປວງ

[໖໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເພື່ອກຳນົດຮູ້ອຸປາທານທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເພື່ອກຳນົດຮູ້ອຸປາທານທັງປວງ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ຍ້ອນລຸດພົ້ນ ຈຶ່ງຮູ້ແຈ້ງວ່າ ເຮົາກຳນົດຮູ້ອຸປາທານໄດ້ແລ້ວ

ຍ້ອນອາໄສໂສຕະແລະສັດທະ ໂສຕະວິນຍານຈຶ່ງເກີດ ฯລฯ

ຍ້ອນອາໄສຄານະແລະຄັນທະ ຯລຯ
ຍ້ອນອາໄສຊິວຫາແລະຣົດ ຯລຯ
ຍ້ອນອາໄສກາຍແລະໂຜດຖັບພະ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ຍ້ອນລຸດພົ້ນຈຶ່ງຮູ້ແຈ້ງວ່າ ເຮົາກຳນົດຮູ້ອຸປາທານໄດ້ແລ້ວ

ພິກຂຸທັງຫຼາຍ ທຳເພື່ອກຳນົດຮູ້ອຸປາທານທັງປວງເປັນແນວນີ້ແລ

**ສັບພຸປາທານະປະຣິຍາທານະສູດທີ ๗ ຈົບ**

# ໘. ປະຖົມສັບພຸປາທານະປະຣິຍາທານະສູດ

## ວ່າດ້ວຍທຳເພື່ອຄອບງຳອຸປາທານທັງປວງ ສູດທີ ໑

[໗໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເພື່ອຄອບງຳອຸປາທານທັງປວງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເພື່ອຄອບງຳອຸປາທານທັງປວງ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຣູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຣູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ຍ້ອນລຸດພົ້ນ ຈຶ່ງຮູ້ແຈ້ງວ່າ ເຮົາຄອບງຳອຸປາທານໄດ້ແລ້ວ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍ

ແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ຍ້ອນລຸດພົ້ນ ຈຶ່ງຮູ້ແຈ້ງວ່າ ເຮົາຄອບງຳອຸປາທານໄດ້ແລ້ວ

ພິກຂຸທັງຫຼາຍ ທຳເພື່ອຄອບງຳອຸປາທານທັງປວງເປັນແນວນີ້ແລ

**ປະຖົມສັບພຸປາທານະປະຣິຍາທານະສູດທີ ໗ ຈົບ**

## ໑໐. ທຸຕິຍະສັບພຸປາທານະປະຣິຍາທານະສູດ

### ວ່າດ້ວຍທຳເພື່ອຄອບງຳອຸປາທານທັງປວງ ສູດທີ ໘

[໖໘] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເພື່ອຄອບງຳອຸປາທານທັງປວງ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເພື່ອຄອບງຳອຸປາທານທັງປວງ ເປັນແນວໃດ?
ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຮູບ ฯລฯ ຈັກຂຸວິນຍານ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຈັກຂຸສຳຜັດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ມະໂນ ฯລฯ ທຳມາຣົມ ฯລฯ ມະໂນວິນຍານ ฯລฯ ມະໂນສຳຜັດ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນ ປັດໄຈ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນ

ຣົດ ຍ່ອມເບື່ອໜ່າຍແມ່ນໃນຊິວຫາວິນຍານ ຍ່ອມເບື່ອໜ່າຍແມ່ນໃນຊິວຫາສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ່ອມເບື່ອໜ່າຍແມ່ນໃນມະໂນວິນຍານ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ທຳເພື່ອຄອບງຳອຸປາທານທັງປວງ ເປັນແບບນີ້ແລ

**ທຸຕິຍະສັບພຸປາທານະປະຣິຍາທານະສູດທີ ໑໐ ຈົບ**

**ອະວິດຊາວັກທີ ໑ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໘. ມິຕະຊາລະວັກ

## ໝວດວ່າດ້ວຍພຣະມິຕະຊາລະ

# ໑. ປະຖົມມິຕະຊາລະສູດ

## ວ່າດ້ວຍພຣະມິຕະຊາລະ ສູດທີ ໑

[໖໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ທ່ານພຣະມິຕະຊາລະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ມີປົກກະຕິຢູ່ຜູ້ດຽວ ມີປົກກະຕິຢູ່ຜູ້ດຽວ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງຊື່ວ່າມີປົກກະຕິຢູ່ຜູ້ດຽວ ອັນໜຶ່ງ ດ້ວຍເຫດພຽງທໍ່ໃດ? ຈຶ່ງຊື່ວ່າມີປົກກະຕິຢູ່ກັບໝູ່ເພື່ອນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມິຕະຊາລະ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຍຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຍຶດຕິດຮູບນັ້ນ ຄວາມເພີດເພີນຍ່ອມເກີດຂຶ້ນ ເມື່ອມີຄວາມເພີດເພີນ ກໍມີຄວາມກຳໜັດ ເມື່ອມີຄວາມກຳໜັດ ກໍມີຄວາມກ່ຽວຂ້ອງ ພິກຂຸຜູ້ປະກອບດ້ວຍຄວາມເພີດເພີນໃນ ແລະຄວາມກ່ຽວຂ້ອງ ເຮົາຮຽກວ່າ ຜູ້ມີປົກກະຕິຢູ່ກັບໝູ່ເພື່ອນ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຍຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຍຶດຕິດທຳມາຣົມນັ້ນ ຄວາມເພີດເພີນໃນຍ່ອມເກີດຂຶ້ນ ເມື່ອມີຄວາມເພີດເພີນ ກໍມີຄວາມກຳໜັດ ເມື່ອມີຄວາມກຳໜັດ ກໍມີຄວາມກ່ຽວຂ້ອງ ພິກຂຸຜູ້ປະກອບດ້ວຍຄວາມເພີດເພີນໃນ ແລະຄວາມກ່ຽວຂ້ອງ ເຮົາຮຽກວ່າ ຜູ້ມີປົກກະຕິຢູ່ກັບເພື່ອນ ພິກຂຸຜູ້ມີປົກກະຕິຢູ່ແນວນີ້ ເຖິງຈະໃຊ້ສອຍເສນາສະນະທີ່ເປັນປ່າໂລ່ງແລະປ່າທຶບອັນສະຫງັດ ມີສຽງໜ້ອຍ ມີສຽງອຶກກະທຶກໜ້ອຍ ປາສະຈາກການສັນຈອນໄປມາຂອງຜູ້ຄົນ ຄວນເປັນບ່ອນເຮັດວຽກລັບຂອງມະນຸດ ສົມຄວນເປັນທີ່ຫຼີບຫຼີກກຳຈິງ ເຖິງແນວນັ້ນ ເຮົາກໍຍັງຮຽກວ່າ ຜູ້ມີປົກກະຕິຢູ່ກັບໝູ່ເພື່ອນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາຍັງລະຕັນຫາທີ່ເປັນເພື່ອນນັ້ນບໍ່ໄດ້ ດັ່ງນັ້ນເຮົາຈຶ່ງຮຽກວ່າ ຜູ້ມີປົກກະຕິຢູ່ກັບໝູ່ເພື່ອນ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບນັ້ນຢູ່ ເມື່ອທ່ານ ບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບນັ້ນ ຄວາມເພີດເພີນໃນຍ່ອມດັບໄປ ເມື່ອບໍ່ມີຄວາມເພີດເພີນກໍບໍ່ມີຄວາມກຳໜັດ ເມື່ອບໍ່ມີຄວາມກຳໜັດ ກໍບໍ່ມີຄວາມກ່ຽວຂ້ອງ ພິກຂຸຜູ້ບໍ່ປະກອບດ້ວຍຄວາມເພີດເພີນໃນແລະຄວາມກ່ຽວຂ້ອງ ເຮົາຮຽກວ່າ ຜູ້ມີປົກກະຕິຢູ່ຜູ້ດຽວ ຯລຯ

ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ມີຢູ່ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນ ຄວາມເພີດເພີນຍ່ອມດັບໄປ ເມື່ອບໍ່ມີຄວາມເພີດເພີນ ກໍບໍ່ມີຄວາມກຳໜັດ ເມື່ອບໍ່ມີຄວາມກຳໜັດ ກໍບໍ່ມີຄວາມກ່ຽວຂ້ອງ ພິກຂຸຜູ້ບໍ່ປະກອບດ້ວຍຄວາມເພີດເພີນໃນ ແລະຄວາມກ່ຽວຂ້ອງ ເຮົາຮຽກວ່າ ຜູ້ມີປົກກະຕິຢູ່ຜູ້ດຽວ

ພິກຂຸຜູ້ມີປົກກະຕິຢູ່ແບບນີ້ ແມ່ນຈະຢູ່ຮອບລ້ອມໄປດ້ວຍພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ພວກເດຍຣະຖີ ສາວົກຂອງເດຍຣະຖີ ໃນບໍລິເວນບ້ານກໍຈິງ ເຖິງແບບນັ້ນ ເຮົາກໍຮຽກວ່າ ຜູ້ມີປົກກະຕິຢູ່ຜູ້ດຽວ

(ມິຄະຊາລະ ພິກຂຸຜູ້ຢູ່ແບບນີ້ ເຮົາຮຽກວ່າ ຜູ້ມີປົກກະຕິຢູ່ຜູ້ດຽວ) ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທ່ານລະຕັນຫາທີ່ເປັນເພື່ອນນັ້ນໄດ້ແລ້ວ ດັ່ງນັ້ນເຮົາຈຶ່ງຮຽກວ່າ ຜູ້ມີປົກກະຕິຢູ່ຜູ້ດຽວ

**ປະຖົມມິຄະຊາລະສູດທີ ໑ ຈົບ**

# ໘. ທຸຕິຍະມິຄະຊາລະສູດ

## ວ່າດ້ວຍພຣະມິຄະຊາລະ ສູດທີ ໘

[໖໘] ຄັ້ງນັ້ນ ທ່ານພຣະມິຄະຊາລະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງ ແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມິຄະຊາລະ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າ

ຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ຄວາມເພີດເພີນ ຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນໃນເກີດ ທຸກຈຶ່ງເກີດ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນມີຢູ່ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນໃນຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນໃນເກີດ ທຸກຈຶ່ງເກີດ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນ ຄວາມເພີດເພີນໃນຍ່ອມດັບໄປ ເຮົາກ່າວວ່າ ຍ້ອນຄວາມເພີດເພີນໃນດັບ ທຸກຈຶ່ງດັບ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ມີຢູ່ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນໃນຍ່ອມດັບໄປ ເຮົາກ່າວວ່າ ຍ້ອນຄວາມເພີດເພີນໃນດັບ ທຸກຈຶ່ງດັບ

ຄັ້ງນັ້ນ ທ່ານພຣະມິຄະຊາລະ ຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ແລ້ວລຸກຂຶ້ນຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວຈາກໄປ ຕໍ່ມາ ທ່ານພຣະມິຄະຊາລະ ຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ອັນໜຶ່ງ ທ່ານພຣະມິຄະຊາລະໄດ້ເປັນພຣະອະຣະຫັນອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ທຸຕິຍະມິຄະຊາລະສູດທີ ໘ ຈົບ**

# ໑. ປະຖົມສະມິດທິມານປັນຫາສູດ

## ວ່າດ້ວຍພຣະສະມິດທິທູນຖາມປັນຫາເລື້ອງມານ ສູດທີ ໑

[໗໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ່ານພຣະສະມິດທິເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ມານ ມານ ດ້ວຍເຫດພຽງທີ່ໃດນໍ? ຈຶ່ງຊື່ວ່າມານ ຫຼື ການບັນຍັດວ່າ ມານ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສະມິດທິ ຈັກຂຸ ຮູບ ຈັກຂຸວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານມີຢູ່ໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ໂສຕະ ສັດທະ ໂສຕະວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງໂສຕະວິນຍານມີຢູ່ໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ຄານະ ຄັນທະ ຄານະວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຄານະວິນຍານມີຢູ່ໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ຊິວຫາ ຣົດ ຊິວຫາວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານມີຢູ່ໃນບ່ອນໃດ ມານຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ກາຍ ໂຜດຖັບພະ ກາຍວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງກາຍວິນຍານມີຢູ່ໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ມະໂນ ທຳມາຣົມ ມະໂນວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານມີຢູ່ໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍມີຢູ່ໃນບ່ອນນັ້ນ

ສະມິດທິ ສ່ວນຈັກຂຸ ຮູບ ຈັກຂຸວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານບໍ່ມີໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍບໍ່ມີໃນບ່ອນນັ້ນ

ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຣົດ ຊິວຫາວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານບໍ່ມີໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານກໍບໍ່ມີໃນບ່ອນນັ້ນ ກາຍ ຯລຯ

ມະໂນ ທຳມາຣົມ ມະໂນວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານບໍ່ມີໃນບ່ອນໃດ ມານ ຫຼື ການບັນຍັດວ່າ ມານ ກໍບໍ່ມີໃນບ່ອນນັ້ນ

**ປະຖົມສະມິດທິມານປັນຫາສູດທີ ໑ ຈົບ**

# ໔. ສະມິດທິສັດຕະປັນຫາສູດ

## ວ່າດ້ວຍພຣະສະມິດທິທູນຖາມບັນຫາເລື້ອງສັດ

[໖໖] ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ສັດ ສັດ ດ້ວຍເຫດພຽງທໍ່ໃດນໍ? ຈຶ່ງຊື່ວ່າ ສັດ ຫຼື ການບັນຍັດວ່າ ສັດ ຯລຯ

**ສະມິດທິສັດຕະປັນຫາສູດທີ ໔ ຈົບ**

# ໕. ສະມິດທິທຸກຂະປັນຫາສູດ

## ວ່າດ້ວຍພຣະສະມິດທິທູນຖາມບັນຫາເລື້ອງທຸກ

[໖໗] ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ທຸກ ທຸກ ດ້ວຍເຫດພຽງທໍ່ໃດນໍຈຶ່ງຊື່ວ່າ ທຸກຫຼືການບັນຍັດວ່າທຸກ ຯລຯ

**ສະມິດທິທຸກຂະປັນຫາສູດທີ ໕ ຈົບ**

# ໖. ສະມິດທິໂລກປັນຫາສູດ

## ວ່າດ້ວຍພຣະສະມິດທິທູນຖາມບັນຫາເລື້ອງໂລກ

[໖໘] ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ໂລກ ໂລກ ດ້ວຍເຫດພຽງທໍ່ໃດນໍ? ຈຶ່ງຊື່ວ່າໂລກ ຫຼື ການບັນຍັດວ່າ ໂລກ

ສະມິດທິ ຈັກຂຸ ຣູບ ຈັກຂຸວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານມີຢູ່ໃນບ່ອນໃດ ໂລກ ຫຼື ການບັນຍັດວ່າ ໂລກກໍມີຢູ່ໃນບ່ອນນັ້ນ ຯລຯ

ຊິວຫາ ຯລຯ ມະໂນ ທຳມາຣົມ ມະໂນວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານ ມີຢູ່ໃນບ່ອນໃດ ໂລກ ຫຼື ການບັນຍັດວ່າ ໂລກ ກໍມີຢູ່ໃນບ່ອນນັ້ນ

ສະມິດທິ ສ່ວນຈັກຂຸ ຣູບ ຈັກຂຸວິນຍານ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານບໍ່ມີໃນບ່ອນໃດ ໂລກ ຫຼື ການບັນຍັດວ່າ ໂລກກໍບໍ່ມີໃນບ່ອນນັ້ນ ຯລຯ ຊິວຫາ ຯລຯ ມະໂນ ທຳມາຣົມ

ມະໂນວິນຍານ ທໍາທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານບໍ່ມີໃນບ່ອນໃດ ໂລກ ຫຼື ການບັນຍັດວ່າ ໂລກ ກໍບໍ່ມີໃນບ່ອນນັ້ນ

**ສະມິດທິໂລກປັນຫາສູດທີ ໖ ຈົບ**

# ໗. ອຸປະເສນະອາສີວິສະສູດ

## ວ່າດ້ວຍພຣະອຸປະເສນະຖືກພິດງູ

[໖໙] ສະໄໝໜຶ່ງ ທ່ານພຣະສາຣີບຸດແລະທ່ານພຣະອຸປະເສນະຢູ່ທີ່ເງີບພູຊື່ ສັບປະໂສນະທິກະ ປ່າສີຕະວັນ ເຂດນະຄອນຣາດຊະຄືື ສະໄໝນັ້ນ ງູໂຕໜຶ່ງໄດ້ຕົກລົງມາໃສ່ກາຍຂອງທ່ານພຣະອຸປະເສນະ ຄັ້ງນັ້ນ ທ່ານຮຽກພິກຂຸທັງຫຼາຍມາກ່າວວ່າ ມາເທີ້ນ ທ່ານທັງຫຼາຍຊ່ອຍກັນຍົກກາຍຂອງຂ້ານ້ອຍຂຶ້ນຕຽງ ແລ້ວຫາມອອກໄປໄວ້ຂ້າງນອກ ກ່ອນທີ່ກາຍນີ້ຈະກະຈັດກະຈາຍໃນບ່ອນນີ້ຄືກໍາແກບ

ເມື່ອທ່ານພຣະອຸປະເສນະກ່າວແນວນີ້ແລ້ວ ທ່ານພຣະສາຣີບຸດກໍໄດ້ກ່າວກັບທ່ານວ່າ ພວກເຮົາຍັງບໍ່ເຫັນກາຍຂອງທ່ານອຸປະເສນະເປັນແນວອື່ນ ຫຼື ອິນຊີຂອງທ່ານຜັນແປໄປເລີຍ ເມື່ອເປັນແນວນີ້ ທ່ານອຸປະເສນະຍັງເວົ້າວ່າ ມາເທີ້ນ ທ່ານທັງຫຼາຍຊ່ອຍກັນຍົກກາຍຂອງຂ້ານ້ອຍຂຶ້ນຕຽງແລ້ວຫາມອອກໄປໄວ້ຂ້າງນອກ ກ່ອນທີ່ກາຍນີ້ຈະກະຈັດກະຈາຍໃນບ່ອນນີ້ຄືກໍາແກບ

ທ່ານພຣະອຸປະເສນະກ່າວວ່າ ທ່ານສາຣີບຸດ ຜູ້ໃດເພິ່ງມີຄວາມຄິດວ່າ ເຮົາເປັນຈັກຂຸ ຫຼື ຈັກຂຸເປັນຂອງເຮົາ ฯລฯ ເຮົາເປັນຊິວຫາ ຫຼື ຊິວຫາເປັນຂອງເຮົາ ฯລฯ ເຮົາເປັນມະໂນ ຫຼື ມະໂນເປັນຂອງເຮົາ ທ່ານສາຣີບຸດ ຄວາມທີ່ກາຍຂອງຜູ້ນັ້ນເປັນແນວອື່ນ ຫຼື ຄວາມທີ່ອິນຊີຂອງຜູ້ນັ້ນຜັນແປເພິ່ງມີແນວແນ່ນອນ ຂ້ານ້ອຍບໍ່ມີຄວາມນຶກຄິດເລີຍວ່າ ເຮົາເປັນຈັກຂຸ ຫຼື ຈັກຂຸເປັນຂອງເຮົາ ฯລฯ ເຮົາເປັນຊິວຫາ ຫຼື ຊິວຫາ ເປັນຂອງເຮົາ ฯລฯ ເຮົາເປັນມະໂນ ຫຼື ມະໂນເປັນຂອງເຮົາ ທ່ານສາຣີບຸດ ຄວາມທີ່ກາຍ ຂອງຂ້ານ້ອຍເປັນແນວອື່ນ ຫຼື ຄວາມທີ່ອິນຊີຂອງຂ້ານ້ອຍຜັນແປ ຈັກມີໄດ້ແນວໃດ

ຈິງແນວນັ້ນ ທ່ານພຣະອຸປະເສນະໄດ້ຖອນອະຫັງການ ມະມັງການ ແລະ ມານານຸໄສ (ກິເລດທີ່ນອນເນື່ອງຄືຄວາມຖືໂຕ) ໄດ້ເດັດຂາດດົນມາແລ້ວ ດັ່ງນັ້ນ ທ່ານພຣະອຸປະເສນະຈຶ່ງບໍ່ມີຄວາມຄິດວ່າ ເຮົາເປັນຈັກຂຸ ຫຼື ຈັກຂຸເປັນຂອງເຮົາ ฯລฯ ເຮົາເປັນຊິວຫາ ຫຼື ຊິວຫາເປັນຂອງເຮົາ ฯລฯ ເຮົາເປັນມະໂນ ຫຼື ມະໂນເປັນຂອງເຮົາ

ຕໍ່ມາ ພິກຂຸເຫຼົ່ານັ້ນ ໄດ້ຍົກກາຍຂອງທ່ານພຣະອຸປະເສນະຂຶ້ນຕຽງ ແລ້ວຫາມອອກໄປໄວ້ຂ້າງນອກ ໃນຂະນະນັ້ນ ກາຍຂອງທ່ານພຣະອຸປະເສນະ ກໍກະຈັດກະຈາຍໃນບ່ອນນັ້ນເອງຄືກຳແກບ

**ອຸປະເສນະອາສີວິສະສູດທີ ໗ ຈົບ**

# ໘. ອຸປະວານະສັນທິດຖິກະສູດ

## ວ່າດ້ວຍພຣະອຸປະວານະທູນຖາມທຳທີ່ເພິ່ງເຫັນເອງ

[໗໐] ຄັ້ງນັ້ນ ທ່ານພຣະອຸປະວານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງ ຕັດວ່າ ທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ທຳເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ດ້ວຍເຫດພຽງທໍ່ໃດນໍ? ພຣະທຳຈຶ່ງຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປະວານະ ກໍພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວເປັນຜູ້ສະເຫວີຍຮູບ ສະເຫວີຍຄວາມກຳໜັດໃນຮູບ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຮູບໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນຮູບໃນພາຍໃນຂອງເຮົາມີຢູ່ ການທີ່ພິກຂຸເຫັນຮູບທາງຕາແລ້ວເປັນຜູ້ສະເຫວີຍຮູບ ສະເຫວີຍຄວາມກຳໜັດໃນຮູບ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຮູບໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນຮູບໃນພາຍໃນຂອງເຮົາມີຢູ່ແນວນີ້ແລ ອຸປະວານະ ທຳຈຶ່ງຊື່ວ່າ ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຯລຯ

ອີກປະການໜຶ່ງ ພິກຂຸຊີມຣົດທາງລີ້ນແລ້ວເປັນຜູ້ສະເຫວີຍຣົດ ສະເຫວີຍຄວາມກຳໜັດໃນຣົດ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຣົດໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນຣົດໃນພາຍໃນຂອງເຮົາມີຢູ່ ການທີ່ພິກຂຸຊີມຣົດທາງລີ້ນແລ້ວເປັນຜູ້ສະເຫວີຍຣົດ ສະເຫວີຍຄວາມກຳໜັດໃນຣົດ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຣົດໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນຣົດໃນພາຍໃນຂອງເຮົາມີຢູ່ ແນວນີ້ແລ ອຸປະວານະ ທຳຈຶ່ງຊື່ວ່າເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຯລຯ

ອີກປະການໜຶ່ງ ພິກຂຸຮູ້ແຈ້ງທຳມາຣົມທາງໃຈແລ້ວເປັນຜູ້ສະເຫວີຍທຳມາຣົມ ສະເຫວີຍຄວາມກຳໜັດໃນທຳມາຣົມ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນທຳມາຣົມໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນທຳມາຣົມໃນພາຍໃນຂອງເຮົາມີຢູ່ ການທີ່ພິກຂຸຮູ້ແຈ້ງທຳມາຣົມ ທາງໃຈແລ້ວເປັນຜູ້ສະເຫວີຍທຳມາຣົມ ສະເຫວີຍຄວາມກຳໜັດໃນທຳມາຣົມ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນທຳມາຣົມໃນພາຍໃນເຊິ່ງມີຢູ່ວ່າ ຄວາມກຳໜັດໃນທຳມາຣົມໃນພາຍໃນຂອງເຮົາມີຢູ່ ແນວນີ້ແລ ອຸປະວານະ ທຳຈຶ່ງຊື່ວ່າ ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຯລຯ

ສ່ວນພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວເປັນຜູ້ສະເຫວີຍຮູບ ແຕ່ບໍ່ສະເຫວີຍຄວາມກຳໜັດໃນຮູບ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຮູບໃນພາຍໃນເຊິ່ງບໍ່ມີວ່າ ຄວາມກຳໜັດໃນຮູບໃນພາຍໃນຂອງເຮົາບໍ່ມີ ການທີ່ພິກຂຸເຫັນຮູບທາງຕາແລ້ວເປັນຜູ້ສະເຫວີຍຮູບ ແຕ່ບໍ່ສະເຫວີຍຄວາມກຳໜັດໃນຮູບ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຮູບໃນພາຍໃນເຊິ່ງບໍ່ມີວ່າ ຄວາມກຳໜັດໃນຮູບໃນພາຍໃນຂອງເຮົາບໍ່ມີ ແນວນີ້ແລ ອຸປະວານະ ທຳຈຶ່ງຊື່ວ່າເປັນທຳທີ່ຜູ້ປະຕິບັດ ຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ຯລຯ

ອີກປະການໜຶ່ງ ພິກຂຸຊີມຣົດທາງລີ້ນແລ້ວເປັນຜູ້ສະເຫວີຍຣົດ ແຕ່ບໍ່ສະເຫວີຍຄວາມກຳໜັດໃນຣົດ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນຣົດໃນພາຍໃນເຊິ່ງບໍ່ມີວ່າ ຄວາມກຳໜັດໃນຣົດໃນພາຍໃນ ຂອງເຮົາບໍ່ມີ ຯລຯ

ອີກປະການໜຶ່ງ ພິກຂຸຮູ້ແຈ້ງທຳມາຣົມທາງໃຈແລ້ວເປັນຜູ້ສະເຫວີຍທຳມາຣົມ ແຕ່ບໍ່ສະເຫວີຍຄວາມກຳໜັດໃນທຳມາຣົມ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນທຳມາຣົມໃນພາຍໃນເຊິ່ງບໍ່ມີວ່າ ຄວາມກຳໜັດໃນທຳມາຣົມໃນພາຍໃນຂອງເຮົາບໍ່ມີ ການທີ່ພິກຂຸຮູ້ແຈ້ງທຳມາຣົມທາງໃຈແລ້ວເປັນຜູ້ສະເຫວີຍທຳມາຣົມ ແຕ່ບໍ່ສະເຫວີຍຄວາມກຳໜັດໃນທຳມາຣົມ ແລະ ຮູ້ແຈ້ງເຖິງຄວາມກຳໜັດໃນທຳມາຣົມໃນພາຍໃນເຊິ່ງບໍ່ມີວ່າ ຄວາມກຳໜັດໃນພາຍໃນຂອງເຮົາບໍ່ມີ ແນວນີ້ແລ ອຸປະວານະ ທຳຈຶ່ງຊື່ວ່າເປັນທຳອັນຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

**ອຸປະວານະສັນທິດຖິກະສູດທີ ໗ ຈົບ**

# ໗. ປະຖົມສະຜັດສາຍະຕະນະສູດ

## ວ່າດ້ວຍຜັດສາຍະຕະນະ ໖ ປະການ ສູດທີ ໑

[໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸລາງອົງບໍ່ຮູ້ແຈ້ງເຖິງຄວາມ

ເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການ ຕາມຄວາມເປັນຈິງ ທ່ານຊື່ວ່າປະພຶດພົມມະຈັນຍັງບໍ່ຈົບ ເປັນຜູ້ໄກຈາກທຳວິໄນນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິນາດຍ່ອຍຍັບແລ້ວໃນສາດສະໜານີ້ ຍ້ອນຂ້າພຣະອົງບໍ່ຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ

ພິກຂຸ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຈັກຂຸວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ ຈັກຂຸ ທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ນີ້ແລ ຄືບ່ອນສຸດແຫ່ງທຸກ ຯລຯ ທ່ານພິຈາລະນາເຫັນຊິວຫາວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ ຊິວຫາ ທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ນີ້ແລ ຄືບ່ອນສຸດແຫ່ງທຸກ ຯລຯ ທ່ານພິຈາລະນາເຫັນມະໂນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ ມະໂນ ທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ນີ້ແລ ຄືບ່ອນສຸດແຫ່ງທຸກ

**ປະຖົມສະຜັດສາຍະຕະນະສູດທີ ໗ ຈົບ**

# ໑໐. ທຸຕິຍະສະຜັດສາຍະຕະນະສູດ

## ວ່າດ້ວຍຜັດສາຍະຕະນະ ໖ ປະການ ສູດທີ ໘

[໗໘] ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸລາງອົງບໍ່ຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ ທ່ານປະພຶດພົມມະຈັນຍັງບໍ່ຈົບ ເປັນຜູ້ໄກຈາກທຳວິໄນນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິນາດຍ່ອຍຍັບແລ້ວໃນສາດສະໜານີ້ ຍ້ອນຂ້າພຣະອົງບໍ່ຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ

ພິກຂຸ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຈັກຂຸວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ ຈັກຂຸ ທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ດ້ວຍການເຫັນແນວນີ້ ຜັດສາຍະຕະນະທີ ໑ ນີ້ຈັກເປັນອັນທ່ານລະໄດ້ແລ້ວ ເພື່ອ ບໍ່ໃຫ້ຜັດສາຍະຕະນະນັ້ນເກີດອີກຕໍ່ໄປ ຯລຯ

ທ່ານພິຈາລະນາເຫັນຊິວຫາວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ຊິວຫາທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ດ້ວຍການເຫັນແນວນີ້ ຜັດສາຍະຕະນະທີ ໔ ນີ້ຈັກເປັນອັນທ່ານລະໄດ້ແລ້ວ ເພື່ອບໍ່ໃຫ້ຜັດສາຍະຕະນະນັ້ນເກີດອີກຕໍ່ໄປ ຯລຯ

ທ່ານພິຈາລະນາເຫັນມະໂນວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ດີແລ້ວ ພິກຂຸ ໃນຂໍ້ນີ້ມະໂນທີ່ທ່ານພິຈາລະນາເຫັນແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຈັກເປັນອັນທ່ານເຫັນດີແລ້ວ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ດ້ວຍການເຫັນແນວນີ້ ຜັດສາຍະຕະນະທີ ໖ ນີ້ຈັກເປັນອັນທ່ານລະໄດ້ແລ້ວເພື່ອບໍ່ໃຫ້ຜັດສາຍະຕະນະນັ້ນເກີດອີກຕໍ່ໄປ

**ທຸຕິຍະສະຜັດສາຍະຕະນະສູດທີ ໑໐ ຈົບ**

# ໑໑. ຕະຕິຍະສະຜັດສາຍະຕະນະສູດ

## ວ່າດ້ວຍຜັດສາຍະຕະນະ ໖ ປະການ ສູດທີ ໓

[໗໓] ພິກຂຸທັງຫຼາຍ ພິກຂຸລາງອົງບໍ່ຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ ທ່ານປະພຶດພົມມະຈັນຍັງບໍ່ຈົບ ເປັນຜູ້ໄກຈາກທຳວິໄນນີ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງພິນາດຍ່ອຍຍັບແລ້ວໃນສາດສະໜານີ້ ຍ້ອນຂ້າພຣະອົງບໍ່ຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ

ພິກຂຸ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ມະໂນທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນໂສຕະ ຍ່ອມເບື່ອໜ່າຍແມ່ນໃນຄານະ ຯລຯ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນ ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບວນີ້ອີກຕໍ່ໄປ

**ຕະຕິຍະສະຜັດສາຍະຕະນະສູດທີ ໑໑ ຈົບ**

**ມິຄະຊາລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ຄິລານະວັກ

## ໝວດວ່າດ້ວຍພິກຂຸຜູ້ອາພາດ

# ໑. ປະຖົມຄິລານະສູດ

## ວ່າດ້ວຍພິກຂຸຜູ້ອາພາດ ສູດທີ ໑

[໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໃນວິຫານນັ້ນມີພິກຂຸ ໃໝ່ອົງໜຶ່ງ ບໍ່ມີໃຜຮູ້ຈັກ ອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະໂຜດສະເດັດໄປຢ້ຽມພິກຂຸນັ້ນຮອດບ່ອນຢູ່ດ້ວຍເທີ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະດັບວ່າ ພິກຂຸໃໝ່ເປັນໄຂ້ ຊົງຮູ້ວ່າ ເປັນພິກຂຸ ທີ່ບໍ່ມີໃຜຮູ້ຈັກ ຈຶ່ງສະເດັດເຂົ້າໄປຢ້ຽມພິກຂຸນັ້ນຮອດບ່ອນຢູ່ ພິກຂຸນັ້ນ ໄດ້ເຫັນພຣະຜູ້ມີພຣະພາກເຈົ້າ ກຳລັງສະເດັດມາແຕ່ໄກຈຶ່ງລຸກຂຶ້ນຈາກຕຽງ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນັ້ນດັ່ງນີ້ວ່າ ຢ່າເລີຍພິກຂຸ ທ່ານຢ່າລຸກຈາກຕຽງເລີຍ ເຮົາຈັກນັ່ງເທິງອາສະນະທີ່ປູລາດໄວ້ນີ້ເອງ ເມື່ອພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມພິກຂຸນັ້ນ ວ່າ ພິກຂຸ ທ່ານຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ? ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນແມ່ນບໍ? ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້າພຣະອົງກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ພິກຂຸ ທ່ານບໍ່ລຳຄານ ທຸຣົນທຸຣາຍແດ່ບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຈິງ ຂ້າພຣະອົງລຳຄານ ທຸຣົນທຸຣາຍຫຼາຍ ຂ້ານ້ອຍ

ພິກຂຸ ທ່ານຕິຕຽນຕົນເອງໂດຍສີນໄດ້ຫຼືບໍ່?

ຂ້າພຣະອົງຕິຕຽນຕົນເອງໂດຍສີນບໍ່ໄດ້ເລີຍ ຂ້ານ້ອຍ

ພິກຂຸ ຖ້າທ່ານຕິຕຽນຕົນເອງໂດຍສີນບໍ່ໄດ້ແລ້ວ ເມື່ອເປັນຈັ່ງຊັ້ນ ທ່ານຈະລຳຄານ ທຸຣົນທຸຣາຍໄປເຮັດຫຍັງ?

ຂ້າພຣະອົງ ຍັງບໍ່ຮູ້ທົ່ວເຖິງທຳທີ່ພຣະອົງຊົງສະແດງ ເພື່ອຄວາມມົດຈົດແຫ່ງສິນເລີຍ ຂ້ານ້ອຍ

ພິກຂຸ ຖ້າທ່ານຍັງບໍ່ຮູ້ທົ່ວເຖິງທຳທີ່ເຮົາສະແດງເພື່ອຄວາມມົດຈົດແຫ່ງສິນແລ້ວ ເມື່ອເປັນຈັ່ງຊັ້ນ ທ່ານຈະຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວປະພຶດເພື່ອອັນໃດ?

ຂ້າພຣະອົງ ຈະຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ເພື່ອຄາຍຄວາມກຳໜັດ ຂ້ານ້ອຍ

ດີແລ້ວ ດີແລ້ວ ພິກຂຸ ດີແລ້ວ ພິກຂຸ ທີ່ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວເພື່ອຄາຍຄວາມກຳໜັດ ຍ້ອນວ່າທຳທີ່ເຮົາສະແດງແລ້ວ ລ້ວນມີຄວາມມຸ້ງໝາຍເພື່ອຄາຍຄວາມກຳໜັດ ພິກຂຸ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ

ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດແນວນີ້ແລ້ວ ພິກຂຸນັ້ນກໍມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອົງຕັດໄວຍາກອນພາສິດນີ້ຢູ່ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ພິກຂຸນັ້ນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນ ທັງປວງມີຄວາມດັບໄປເປັນທຳມະດາ

**ປະຖົມຄິລານະສູດທີ່ ໑ ຈົບ**

# ໘. ທຸຕິຍະຄິລານະສູດ

## ວ່າດ້ວຍພິກຂຸຜູ້ອາພາດ ສູດທີ ໘

[໗໘] ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໃນວິຫານນັ້ນມີພິກຂຸໃໝ່ອົງໜຶ່ງ ບໍ່ມີໃຜຮູ້ຈັກ ອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຂໍປະທານອະໄຣກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງອາໄສຄວາມອະນຸເຄາະໂຜດ ສະເດັດໄປຢ້ຽມພິກຂຸນັ້ນຮອດບ່ອນຢູ່ດ້ວຍເທີ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະດັບວ່າພິກຂຸໃໝ່ເປັນໄຂ້ ຊົງຮູ້ວ່າ ເປັນພິກຂຸ ທີ່ບໍ່ມີໃຜຮູ້ຈັກ ຈຶ່ງສະເດັດໄປຢ້ຽມພິກຂຸນັ້ນຮອດບ່ອນຢູ່ ພິກຂຸນັ້ນໄດ້ເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກຈຶ່ງລຸກຂຶ້ນຈາກຕຽງ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນັ້ນດັ່ງນີ້ວ່າ ຢ່າເລີຍພິກຂຸ ທ່ານຢ່າລຸກຈາກຕຽງເລີຍ ເຮົາຈັກນັ່ງເທິງອາສະນະທີ່ປູລາດໄວ້ນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມພິກຂຸນັ້ນວ່າ ພິກຂຸທ່ານຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ? ທຸກຂະເວທະນາທຸເລົາລົງ? ບໍ່ກຳເຣີບຂຶ້ນແມ່ນບໍ? ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ຯລຯ ຂ້າພຣະອົງຕິຕຽນຕົນເອງໂດຍສີນບໍ່ໄດ້ເລີຍ ຂ້ານ້ອຍ

ພິກຂຸ ຖ້າທ່ານຕິຕຽນຕົນເອງໂດຍສີນບໍ່ໄດ້ແລ້ວ ເມື່ອເປັນຈັ່ງຊັ້ນ ທ່ານຈະລຳຄານທຸຣົນທຸຣາຍໄປເຮັດຫຍັງ?

ຂ້າພຣະອົງ ຍັງບໍ່ຮູ້ທົ່ວເຖິງທຳທີ່ພຣະອົງຊົງສະແດງ ເພື່ອຄວາມມົດຈົດແຫ່ງສີນເລີຍ ຂ້ານ້ອຍ

ພິກຂຸ ຖ້າທ່ານຍັງບໍ່ຮູ້ທົ່ວເຖິງທຳທີ່ເຮົາສະແດງເພື່ອຄວາມມົດຈົດແຫ່ງສີນແລ້ວ ເມື່ອເປັນຈັ່ງຊັ້ນ ທ່ານຈະຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວປະພຶດເພື່ອອັນໃດ?

ຂ້າພຣະອົງ ຈະຮູ້ທົ່ວເຖິງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວເພື່ອຄວາມດັບສະນິດໂດຍບໍ່ຢຶດໝັ້ນ ຂ້ານ້ອຍ

ດີແລ້ວ ດີແລ້ວ ພິກຂຸ ດີແລ້ວ ພິກຂຸ ທີ່ທ່ານຮູ້ທົ່ວເຖິງທຳທີ່ເຮົາສະແດງແລ້ວເພື່ອຄວາມດັບສະນິດໂດຍບໍ່ຢຶດໝັ້ນ ຍ້ອນວ່າທຳທີ່ເຮົາສະແດງແລ້ວລ້ວນມີຄວາມມຸ້ງໝາຍເພື່ອຄວາມດັບສະນິດໂດຍບໍ່ຢຶດໝັ້ນ ພິກຂຸ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດ ເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ພິກຂຸ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ແມ່ນໃນມະໂນ ຯລຯ ແມ່ນໃນມະໂນວິນຍານ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນສຳຜັດ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດແນວນີ້ແລ້ວ ພິກຂຸນັ້ນມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອົງຕັດໄວຍາກອນພາສິດນີ້ຢູ່ ຈິດຂອງພິກຂຸນັ້ນກໍລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

**ທຸຕິຍະຄິລານະສູດທີ ໘ ຈົບ**

# ໙. ຣາທະອະນິດຈະສູດ

## ວ່າດ້ວຍຊົງສະແດງອະນິດຈະທຳແກ່ພຣະຣາທະ

[໑໙] ຄັ້ງນັ້ນແລ ທ່ານພຣະຣາທະ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຣາທະ ສິ່ງໃດບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຄື ຈັກຂຸບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນຈັກຂຸນັ້ນ ຮູບບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນ ຯລຯ ຊິວຫາ ຯລຯ ກາຍ ຯລຯ ມະໂນບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນມະໂນນັ້ນ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນ

ຣາທະ ສິ່ງໃດບໍ່ທ່ຽງ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

**ຣາທະອະນິດຈະສູດທີ ໓ ຈົບ**

# ໔. ຣາທະທຸກຂະສູດ

## ວ່າດ້ວຍຊົງສະແດງທຸກຂະທຳແກ່ພຣະຣາທະ

[ກກ] ຣາທະ ສິ່ງໃດເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ກໍອັນໃດນໍຊື່ວ່າເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຄື ຈັກຂຸເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນຈັກຂຸນັ້ນ ຮູບເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນ ຯລຯ ມະໂນ ຯລຯ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນ

ຣາທະ ສິ່ງໃດເປັນທຸກ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

**ຣາທະທຸກຂະສູດທີ ໔ ຈົບ**

# ໕. ຣາຫະອະນັດຕະສູດ

## ວ່າດ້ວຍຊົງສະແດງອະນັດຕະທຳແກ່ພຣະຣາທະ

[໗໙] ຣາທະ ສິ່ງໃດເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ກໍອັນໃດບໍ? ຊື່ວ່າ ເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

ຄື ຈັກຂຸເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນຈັກຂຸນັ້ນ ຮູບເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນຮູບນັ້ນ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ມະໂນ ຯລຯ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍ ເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກ ບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນ

ຣາທະ ສິ່ງໃດເປັນອະນັດຕາ ທ່ານເພິ່ງລະຄວາມພໍໃຈໃນສິ່ງນັ້ນ

**ຣາຫະອະນັດຕະສູດທີ ໕ ຈົບ**

# ໖. ປະຖົມອະວິດຊາປະຫານະສູດ

## ວ່າດ້ວຍການລະອະວິດຊາ ສູດທີ ໑

[໗໑] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸລະ ອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນມີຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນຄືອັນໃດ?

ພິກຂຸ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນຄື ອະວິດຊາ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸເມື່ອຮູ້ເຫັນແນວໃດ ຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນບໍ ຂ້ານ້ອຍ

ພິກຂຸ ພິກຂຸເມື່ອຮູ້ເຫັນຈັກຂຸໂດຍຄວາມບໍ່ທ່ຽງ ຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ເມື່ອຮູ້ເຫັນຮູບ ຯລຯ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ໂດຍຄວາມບໍ່ທ່ຽງຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຯລຯ ເມື່ອຮູ້ເຫັນມະໂນໂດຍຄວາມບໍ່ທ່ຽງຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ເມື່ອຮູ້ເຫັນທຳ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ເມື່ອຮູ້ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ໂດຍຄວາມບໍ່ທ່ຽງຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ

ພິກຂຸ ເມື່ອຮູ້ເຫັນແນວນີ້ແລ ຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ

**ປະຖົມອະວິດຊາປະຫານະສູດທີ ໗ ຈົບ**

## ໘. ທຸຕິຍະອະວິດຊາປະຫານະສູດ

### ວ່າດ້ວຍການລະອະວິດຊາ ສູດທີ ໘

[໗໐] ຄັ້ງນັ້ນແລ ພິກຂຸອົງໜຶ່ງ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນມີຢູ່ບໍ?

ພິກຂຸ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນມີຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນຄືອັນໃດ?

ພິກຂຸ ລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ ຍ້ອນລະທຳແນວໜຶ່ງໃດ ທຳແນວໜຶ່ງນັ້ນຄືອະວິດຊາ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸເມື່ອຮູ້ເຫັນແນວໃດ? ຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ

ພິກຂຸໃນທຳວິໄນນີ້ໄດ້ສະດັບວ່າ ທຳທັງປວງບໍ່ຄວນຢຶດໝັ້ນ ເມື່ອທ່ານໄດ້ສະດັບແນວນີ້

ວ່າ ທຳທັງປວງບໍ່ຄວນຍຶດໝັ້ນ ກໍຮູ້ຍິ່ງທຳທັງປວງ ເມື່ອຮູ້ຍິ່ງທຳທັງປວງແລ້ວ ກໍກຳນົດຮູ້ທຳທັງປວງ ເມື່ອກຳນົດຮູ້ທຳທັງປວງແລ້ວກໍເຫັນນິມິດທັງປວງໂດຍອາການອື່ນ ເຫັນຈັກຂຸໂດຍອາການອື່ນ ເຫັນຮູບ ຯລຯ ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ເຫັນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດ ເປັນປັດໄຈໂດຍອາການອື່ນ ຯລຯ ເຫັນມະໂນໂດຍອາການອື່ນ ຯລຯ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈໂດຍອາການອື່ນ

ພິກຂຸ ເມື່ອຮູ້ເຫັນແນວນີ້ແລ ຈຶ່ງລະອະວິດຊາໄດ້ ວິດຊາຈຶ່ງເກີດຂຶ້ນ

**ທຸຕິຍະອະວິດຊາປະຫານະສູດທີ ໗ ຈົບ**

# ໘. ສຳພະຫຸລະພິກຂຸສູດ

## ວ່າດ້ວຍພິກຂຸຫຼາຍອົງ

[໘໑] ຄັ້ງນັ້ນແລ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພວກອັນຍະເດຍຣະຖີປະຣິພາຊົກໃນໂລກນີ້ ຖາມຂ້າພຣະອົງທັງຫຼາຍແນວນີ້ວ່າ ທ່ານຜູ້ມີອາຍຸທັງຫຼາຍ ພວກທ່ານປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອຕ້ອງການອັນໃດ? ເມື່ອຂ້າພຣະອົງທັງຫຼາຍ ຖືກຖາມແນວນີ້ ຈຶ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ພວກເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ທຸກ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍຖືກຖາມແນວນີ້ ຈຶ່ງຕອບແນວນີ້ ຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະບໍ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນບໍ ບໍ່ມີແດ່ບໍທີ່ຄຳກ່າວຈັ່ງຊັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ ຈຶ່ງຕອບແນວນີ້ ຊື່ວ່າເວົ້າກົງຕາມຄຳທີ່ເຮົາເວົ້າໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີທີ່ຄຳກ່າວຈັ່ງຊັ້ນ ແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ພິກຂຸທັງຫຼາຍ ຍ້ອນທ່ານທັງຫຼາຍ ປະພຶດພົມມະຈັນໃນເຮົາເພື່ອກຳນົດຮູ້ທຸກ ຖ້າພວກ

ອັນຍະເດຍຣະຖີປະຣິພາຊົກຈະເພິ່ງຖາມທ່ານທັງຫຼາຍວ່າ ຜູ້ມີອາຍຸທັງຫຼາຍ ກໍທຸກທີ່ພວກທ່ານປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອກໍານົດຮູ້ນັ້ນເປັນແນວໃດ?

ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸ ຈັກຂຸເປັນທຸກ ພວກເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກໍານົດ ຮູ້ຈັກຂຸທີ່ເປັນທຸກນັ້ນ ຮູບ ໆລໆ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສໍາຜັດເປັນປັດໄຈກໍເປັນທຸກ ພວກເຮົາປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າເພື່ອກໍານົດຮູ້ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສໍາຜັດເປັນປັດໄຈທີ່ເປັນທຸກນັ້ນ ໆລໆ ມະໂນເປັນທຸກ ໆລໆ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດ ເປັນປັດໄຈກໍເປັນທຸກ ພວກເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອກໍານົດຮູ້ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈທີ່ເປັນທຸກນັ້ນ ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ແລ ຄື ທຸກ ພວກເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອກໍານົດຮູ້ທຸກນັ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນັ້ນແລ

**ສໍາພະຫຸລະພິກຂຸສູດທີ ๗ ຈົບ**

# ໘. ໂລກປັນຫາສູດ

## ວ່າດ້ວຍບັນຫາເລື້ອງໂລກ

[໗໔] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໆລໆ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ໂລກ ໂລກ ດ້ວຍເຫດພຽງທໍ່ໃດນໍ? ຈຶ່ງຕັດວ່າ ໂລກ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ທີ່ເຮົາຮຽກວ່າ ໂລກ ຍ້ອນວ່າ ຕ້ອງແຕກສະຫຼາຍຫາຍໄປ

ກໍອັນໃດນໍ? ແຕກສະຫຼາຍຫາຍໄປ

ຄື ຈັກຂຸແຕກສະຫຼາຍ ຮູບແຕກສະຫຼາຍ ຈັກຂຸວິນຍານແຕກສະຫຼາຍ ຈັກຂຸສໍາຜັດແຕກສະຫຼາຍ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນ

ຈັກຂຸສຳຜັດເປັນປັດໄຈກໍແຕກສະຫຼາຍ ຯລຯ ຊິວຫາແຕກສະຫຼາຍ ຯລຯ ມະໂນແຕກສະຫຼາຍ ຯລຯ ທຳມາຣົມແຕກສະຫຼາຍ ຯລຯ ມະໂນວິນຍານແຕກສະຫຼາຍ ຯລຯ ມະໂນສຳຜັດແຕກສະຫຼາຍ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍແຕກສະຫຼາຍ

ພິກຂຸ ທີ່ເຮົາຮຽກວ່າ ໂລກ ຍ້ອນຕ້ອງແຕກສະຫຼາຍຫາຍໄປ

**ໂລກປັນຫາສູດທີ ໙ ຈົບ**

# ໑໐. ຜັກຄຸນະປັນຫາສູດ

## ວ່າດ້ວຍພຣະຜັກຄຸນະທູນຖາມປັນຫາ

[໗໘] ຄັ້ງນັ້ນແລ ທ່ານພຣະຜັກຄຸນະ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມ

ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດຜູ້ຕັດທຳເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຈັກຂຸໃດ ຈັກຂຸນັ້ນມີຢູ່ບໍ ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍ ຯລຯ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຊິວຫາໃດ ຊິວຫານັ້ນມີຢູ່ບໍ ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດຜູ້ຕັດທຳເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍມະໂນໃດ ມະໂນນັ້ນມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຜັກຄຸນະ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດຜູ້ຕັດທຳເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຈັກຂຸໃດ ຈັກຂຸນັ້ນບໍ່ມີເລີຍ ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດຜູ້ຕັດທຳເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍຊິວຫາໃດ ຊິວຫານັ້ນບໍ່ມີເລີຍ ຯລຯ ບຸກຄົນເມື່ອຈະບັນຍັດພຣະພຸດທະເຈົ້າທັງຫຼາຍໃນອະດີດຜູ້ຕັດທຳເຄື່ອງລ້າຊ້າ ຜູ້ຕັດທາງໄດ້ແລ້ວ ຜູ້ຄອບງຳວັດຕະໄດ້ແລ້ວ ຜູ້ລ່ວງພົ້ນ ທຸກທັງປວງໄດ້ແລ້ວ ປະຣິນິບພານແລ້ວ ເພິ່ງບັນຍັດດ້ວຍມະໂນໃດ ມະໂນນັ້ນບໍ່ມີເລີຍ

**ຜັກຄຸນະປັນຫາສູດທີ ໑໐ ຈົບ**

### ຄິລານະວັກທີ ໒ ຈົບ

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໔. ສັນນະວັກ

### ໝວດວ່າດ້ວຍພຣະສັນນະ

## ໑. ປະໂລກະທຳມະສູດ

### ວ່າດ້ວຍສິ່ງທີ່ມີຄວາມແຕກສະຫຼາຍເປັນທຳມະດາ

[໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ໂລກ ໂລກ ດ້ວຍເຫດພຽງທໍ່ໃດນໍຈຶ່ງຕັດວ່າ ໂລກ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ສິ່ງໃດ ມີຄວາມແຕກສະຫຼາຍຫາຍໄປເປັນທຳມະດາ ສິ່ງນັ້ນ ເຮົາຮຽກວ່າ ໂລກ ໃນອະຣິຍະວິໄນ

ກໍອັນໃດນໍ? ຊື່ວ່າ ມີຄວາມແຕກສະຫຼາຍຫາຍໄປເປັນທຳມະດາ

ຄື ຈັກຂຸມີຄວາມແຕກສະຫຼາຍເປັນທຳມະດາ ຮູບມີຄວາມແຕກສະຫຼາຍເປັນທຳມະດາ ຈັກຂຸວິນຍານມີຄວາມແຕກສະຫຼາຍເປັນທຳມະດາ ຈັກຂຸສຳຜັດມີຄວາມແຕກສະຫຼາຍເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດ ເປັນປັດໄຈກໍມີຄວາມແຕກສະຫຼາຍເປັນທຳມະດາ ຯລຯ

ຊິວຫາມີຄວາມແຕກສະຫຼາຍເປັນທຳມະດາ ຣົດມີຄວາມແຕກສະຫຼາຍເປັນທຳມະດາ ຊິວຫາວິນຍານມີຄວາມແຕກສະຫຼາຍເປັນທຳມະດາ ຊິວຫາສຳຜັດມີຄວາມແຕກສະຫຼາຍເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດ ເປັນປັດໄຈກໍມີຄວາມແຕກສະຫຼາຍເປັນທຳມະດາ ຯລຯ

ມະໂນມີຄວາມແຕກສະຫຼາຍເປັນທຳມະດາ ທຳມາຣົມມີຄວາມແຕກສະຫຼາຍເປັນທຳມະດາ ມະໂນວິນຍານມີຄວາມແຕກສະຫຼາຍເປັນທຳມະດາ ມະໂນສຳຜັດມີຄວາມແຕກສະຫຼາຍເປັນທຳມະດາ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດ ເປັນປັດໄຈກໍມີຄວາມແຕກສະຫຼາຍເປັນທຳມະດາ

ອານົນ ສິ່ງໃດມີຄວາມແຕກສະຫຼາຍເປັນທຳມະດາ ນີ້ເຮົາຮຽກວ່າ ໂລກ ໃນອະຣິຍະວິໄນນີ້

**ປະໂລກະທຳມະສູດທີ ໑ ຈົບ**

# ໘. ສູນຍະຕະໂລກະສູດ

## ວ່າດ້ວຍໂລກວ່າງ

[໗໘] ຄັ້ງນັ້ນແລ ທ່ານພຣະອານົນ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ໂລກວ່າງ ໂລກວ່າງ ດ້ວຍເຫດພຽງທໍ່ໃດນໍ? ຈຶ່ງຕັດວ່າ ໂລກວ່າງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ຍ້ອນວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ສະນັ້ນ ຈຶ່ງຮຽກວ່າ ໂລກວ່າງ

ກໍອັນໃດນໍ? ຊື່ວ່າ ວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ

ຄື ຈັກຂຸວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຮູບວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈັກຂຸວິນຍານວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈັກຂຸສຳຜັດວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ

ອານົນ ຍ້ອນວ່າງຈາກອັດຕາ ຫຼື ຈາກສິ່ງທີ່ເນື່ອງດ້ວຍອັດຕາ ສະນັ້ນ ເຮົາຈຶ່ງຮຽກວ່າ ໂລກວ່າງ

**ສູນຍະຕະໂລກະສູດທີ ໘ ຈົບ**

# ໙. ສັງຂິດຕະທຳມະສູດ

## ວ່າດ້ວຍທຳໂດຍຫຍໍ້

[໗໙] ທ່ານພຣະອານົນນັ່ງຢູ່ບ່ອນທີ່ສົມຄວນ ແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ຈັກຂຸທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ຮູບ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼືບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ ຯລຯ

ຊິວຫາ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຊິວຫາວິນຍານ ຯລຯ ຊິວຫາສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ອານົນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ

ສຳຜັດ ໆລໆ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໃຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ສັງຂິດຕະທຳມະສູດທີ ໓ ຈົບ**

# ໔. ສັນນະສູດ

## ວ່າດ້ວຍພຣະສັນນະ

[໗໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ທ່ານພຣະສາຣີບຸດ ທ່ານພຣະມະຫາຈຸນທະ ແລະທ່ານພຣະສັນນະຢູ່ທີ່ພູຄິດຊະກູດ ຄັ້ງນັ້ນ ທ່ານພຣະສັນນະອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຕໍ່ມາໃນເວລາຄ່ຳ ທ່ານພຣະສາຣີບຸດອອກຈາກບ່ອນຫຼີບຫຼີກ ແລ້ວເຂົ້າໄປຫາທ່ານພຣະມະຫາຈຸນທະຮອດບ່ອນຢູ່ ໄດ້ກ່າວກັບທ່ານພຣະມະຫາຈຸນທະດັ່ງນີ້ວ່າ ມາເທີ້ນທ່ານ

ຈຸນທະ ເຮົາເຂົ້າໄປຖາມອາການອາພາດຂອງທ່ານພຣະສັນນະກັນເທີ້ນ ທ່ານພຣະມະຫາຈຸນທະຮັບຄຳທ່ານພຣະສາຣີບຸດແລ້ວ

ລຳດັບນັ້ນ ທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາຈຸນທະເຂົ້າໄປຫາທ່ານພຣະສັນນະຮອດບ່ອນຢູ່ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ທ່ານພຣະສາຣີບຸດໄດ້ຖາມທ່ານພຣະສັນນະດັ່ງນີ້ວ່າ ທ່ານສັນນະ ທ່ານຍັງສະບາຍດີບໍ? ຍັງພໍເປັນຢູ່ໄດ້ບໍ? ທຸກຂະເວທະນາທຸເລົາລົງ ບໍ່ກຳເຮີບຂຶ້ນແມ່ນບໍ? ອາການທຸເລົາຜາກົດ ອາການກຳເຮີບບໍ່ຜາກົດແມ່ນບໍ?

ທ່ານພຣະສັນນະກ່າວວ່າ ທ່ານສາຣີບຸດ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາຂອງຂ້ານ້ອຍກຳເຮີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຮີບຜາກົດ ອາການ ທຸເລົາບໍ່ຜາກົດ ຄົນທີ່ແຂງແຮງໃຊ້ເຫຼັກທີ່ແຫຼມຄົມສຽບແທງຫົວແມ່ນສັນໃດ ລົມອັນແຮງກ້າສຽບແທງຫົວຂອງຂ້ານ້ອຍກໍຄືກັນສັນນັ້ນ ຜູ້ມີອາຍຸ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ໆລໆ ອາການທຸເລົາບໍ່ຜາກົດ ຄົນທີ່ແຂງແຮງໃຊ້ເຊືອກໜັງທີ່ໜຽວຂັນທີ່ຫົວແມ່ນສັນໃດ ລົມອັນແຮງກ້າສຽດແທງຫົວຂອງຂ້ານ້ອຍກໍຄືກັນສັນນັ້ນ ຂ້ານ້ອຍ ບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ໆລໆ ອາການທຸເລົາບໍ່ຜາກົດ ຄົນຂ້າງົວຫຼືລູກມືຄົນຂ້າງົວ ຜູ້ຊ່ຽວຊານໃຊ້ມີດຄົວຊີ້ນທີ່ຄົມຂີດທ້ອງແມ່ນສັນໃດ ລົມອັນແຮງກ້າສຽບແທງທ້ອງຂອງຂ້ານ້ອຍ ກໍຄືກັນສັນນັ້ນ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ໆລໆ ອາການ

ທຸເລົາບໍ່ຜາກົດ ຄືນທີ່ແຂງແຮງ ໔ ຄົນຈັບແຂນຄົນທີ່ອ່ອນແອກວ່າຄົນລະຂ້າງຢ້າງໃຫ້ຮ້ອນເທິງຂຸມຖ່ານໄຟ ແມ່ນສັນໃດ ອາການຮ້ອນຮົນໃນກາຍຂອງຂ້ານ້ອຍກໍມີຫຼາຍຢ່າງຍິ່ງຄືກັນສັນນັ້ນ ຜູ້ມີອາຍຸ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ ທ່ານສາຣີບຸດ ຂ້ານ້ອຍ ຈັກນຳສັດຕາມາ ຂ້ານ້ອຍບໍ່ຍາກມີຊີວິດຢູ່

ທ່ານພຣະສາຣີບຸດກ່າວວ່າ ທ່ານສັນນະຢ່ານຳອາວຸດມາ ທ່ານຈົ່ງຮັກສາໂຕໃຫ້ຢູ່ຕໍ່ໄປເທີ້ນ ພວກເຮົາຢາກໃຫ້ທ່ານຮັກສາໂຕຢູ່ຕໍ່ໄປ ຖ້າທ່ານສັນນະບໍ່ມີໂພຊະນະທີ່ເປັນສັບປາຍະ ຂ້ານ້ອຍຈັກສະແຫວງຫາມາໃຫ້ ຖ້າທ່ານສັນນະບໍ່ມີເພສັດທີ່ເປັນສັບປາຍະ ຂ້ານ້ອຍກໍຈັກສະແຫວງຫາມາໃຫ້ ຖ້າທ່ານສັນນະບໍ່ມີພວກອຸປັດຖາກຜູ້ເໝາະສົມ ຂ້ານ້ອຍຈັກອຸປັດຖາກເອງ ທ່ານສັນນະຢ່ານຳອາວຸດມາເລີຍ ຂໍທ່ານສັນນະຈົ່ງຮັກສາໂຕໃຫ້ຢູ່ຕໍ່ໄປເທີ້ນ ພວກເຮົາຢາກໃຫ້ທ່ານສັນນະຮັກສາໂຕຢູ່ຕໍ່ໄປ

ທ່ານສາຣີບຸດ ໂພຊະນະທີ່ເປັນສັບປາຍະຂອງຂ້ານ້ອຍບໍ່ແມ່ນບໍ່ມີ ໂພຊະນະທີ່ເປັນສັບປາຍະຂອງຂ້ານ້ອຍມີຢູ່ ເພສັດທີ່ເປັນສັບປາຍະຂອງຂ້ານ້ອຍບໍ່ແມ່ນບໍ່ມີ ເພສັດທີ່ເປັນສັບປາຍະຂອງຂ້ານ້ອຍມີຢູ່ ພວກອຸປັດຖາກທີ່ເໝາະສົມຂອງຂ້ານ້ອຍບໍ່ແມ່ນບໍ່ມີ ພວກອຸປັດຖາກທີ່ເໝາະສົມຂອງຂ້ານ້ອຍມີຢູ່ ອີກປະການໜຶ່ງ ຂ້ານ້ອຍກໍປົບນິບັດພຣະສາດສະດາດ້ວຍຄວາມເຕັມໃຈມາຕະຫຼອດຢ່າງແນ່ນອນ ບໍ່ແມ່ນປົບນິບັດດ້ວຍຄວາມບໍ່ເຕັມໃຈ ຂໍທ່ານສາຣີບຸດຈົ່ງຈື່ຂໍ້ຄວາມນີ້ໄວ້ແບບນີ້ເທີ້ນວ່າ ຂໍ້ທີ່ພຣະສາວົກປົບນິບັດພຣະສາດສະດາດ້ວຍຄວາມເຕັມໃຈ ບໍ່ແມ່ນປົບນິບັດດ້ວຍຄວາມບໍ່ເຕັມໃຈ ນີ້ເປັນການສົມຄວນແກ່ພຣະສາວົກ ສັນນະພິກຂຸຈັກນຳສັດຕາມາຈຶ່ງບໍ່ຄວນຖືກຕິຕຽນ

ພວກເຮົາຂໍຖາມບັນຫາບາງຂໍ້ກັບທ່ານສັນນະ ຖ້າທ່ານສັນນະຈະໃຫ້ໂອກາດຕອບບັນຫາ

ທ່ານສາຣີບຸດ ນິມົນຖາມມາເທີ້ນ ຂ້ານ້ອຍຟັງແລ້ວຈັກຕອບໃຫ້ຮູ້

ທ່ານສັນນະ ທ່ານພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ທ່ານພິຈາລະນາເຫັນຊິວຫາ ຊິວຫາວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ທ່ານພິຈາລະນາເຫັນມະໂນ ມະໂນວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາແມ່ນບໍ?

ທ່ານສາຣີບຸດ ຂ້ານ້ອຍ ພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ຂ້ານ້ອຍພິຈາລະນາເຫັນຊິວຫາ ຊິວຫາວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ຂ້ານ້ອຍ ພິຈາລະນາເຫັນ ມະໂນ ມະໂນວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ທ່ານສັນນະ ທ່ານພິຈາລະນາເຫັນອັນໃດ ຮູ້ອັນໃດໃນຈັກຂຸ ໃນຈັກຂຸວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານຈຶ່ງພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ຯລຯ ທ່ານສັນນະ ທ່ານພິຈາລະນາເຫັນອັນໃດ ຮູ້ອັນໃດໃນຊິວຫາ ໃນຊິວຫາວິນຍານ ແລະ ໃນທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານຈຶ່ງພິຈາລະນາເຫັນຊິວຫາ ຊິວຫາວິນຍານ ແລະ ທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ທ່ານສັນນະ ທ່ານເຫັນອັນໃດ ຮູ້ອັນໃດໃນມະໂນ ໃນມະໂນວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານຈຶ່ງພິຈາລະນາເຫັນມະໂນ ມະໂນວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ທ່ານສາຣີບຸດ ຂ້ານ້ອຍພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນຈັກຂຸ ໃນຈັກຂຸວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານຈຶ່ງພິຈາລະນາເຫັນຈັກຂຸ ຈັກຂຸວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງຈັກຂຸວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ທ່ານສາຣີບຸດ ຂ້ານ້ອຍພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນຊິວຫາ ໃນຊິວຫາວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານຈຶ່ງພິຈາລະນາເຫັນຊິວຫາ ຊິວຫາວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ທ່ານສາຣີບຸດ ຂ້ານ້ອຍພິຈາລະນາເຫັນຄວາມດັບ ຮູ້ຄວາມດັບໃນມະໂນ ໃນມະໂນວິນຍານ ແລະໃນທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານຈຶ່ງພິຈາລະນາເຫັນມະໂນ ມະໂນວິນຍານ ແລະທຳທີ່ເພິ່ງຮູ້ແຈ້ງທາງມະໂນວິນຍານວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເມື່ອທ່ານພຣະສັນນະກ່າວແນວນີ້ແລ້ວ ທ່ານພຣະມະຫາຈຸນທະໄດ້ກ່າວກັບທ່ານພຣະສັນນະດັ່ງນີ້ວ່າ ທ່ານສັນນະ ຍ້ອນເຫດນີ້ແລ ແມ່ນການເຫັນນີ້ ກໍເປັນຄຳສອນຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ທ່ານເພິ່ງໃສ່ໃຈໃຫ້ດີຕະຫລອດການເປັນປະຈຳ ບຸກຄົນຜູ້ມີຕັນຫາ ມານະ ແລະທິດຖິອາໄສຢູ່ ຍ່ອມມີຄວາມຫວັ່ນໄຫວ ບຸກຄົນຜູ້ບໍ່ມີຕັນຫາ ມານະແລະທິດຖິອາໄສຢູ່ ຍ່ອມບໍ່ມີຄວາມຫວັ່ນໄຫວ ເມື່ອບໍ່ມີຄວາມຫວັ່ນໄຫວ ກໍມີຄວາມສະງົບ ເມື່ອມີຄວາມສະງົບ ກໍບໍ່ມີຄວາມນ້ອມໄປ ເມື່ອບໍ່ມີຄວາມນ້ອມໄປ ການມາແລະການໄປກໍບໍ່ມີ ເມື່ອບໍ່ມີການມາແລະການ

ໄປ ຄວາມຕາຍແລະຄວາມເກີດກໍບໍ່ມີ ເມື່ອບໍ່ມີຄວາມຕາຍແລະຄວາມເກີດ ໂລກນີ້ໂລກໜ້າກໍບໍ່ມີ ລະຫວ່າງໂລກທັງສອງກໍບໍ່ມີ ນີ້ແລ ເປັນບ່ອນສຸດແຫ່ງທຸກ

ເມື່ອທ່ານພຣະສາຣີບຸດ ແລະທ່ານພຣະມະຫາຈຸນທະສອນທ່ານພຣະສັນນະດ້ວຍໂອວາດນີ້ແລ້ວ ກໍລຸກຂຶ້ນຈາກອາສະນະແລ້ວຈາກໄປ ຕໍ່ມາທ່ານພຣະສັນນະກໍໄດ້ນໍາອາວຸດມາເມື່ອທ່ານທັງສອງຈາກໄປໄດ້ບໍ່ດົນ

ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານສັນນະໄດ້ນໍາອາວຸດມາ ທ່ານມີຄະຕິເປັນແນວໃດ? ມີອະພິສໍາປະຣາຍະພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສາຣີບຸດ ສັນນະພິກຂຸໄດ້ບອກວ່າ ຈະບໍ່ຖືກຕິຕຽນໄວ້ຕໍ່ໜ້າທ່ານແລ້ວບໍ່ແມ່ນບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ມີໝູ່ບ້ານຊາວວັດຊີຊື່ ປຸບພະວິດຊະນະ ໃນໝູ່ບ້ານນັ້ນຕະກູນທີ່ເປັນມິດ ຕະກູນທີ່ເປັນສະຫາຍເປັນຕະກູນທີ່ທ່ານສັນນະເຂົ້າໄປອາໄສກໍມີຢູ່

ສາຣີບຸດ ຕະກູນທີ່ເປັນມິດຕະກູນທີ່ເປັນສະຫາຍເຫຼົ່ານັ້ນ ເປັນຕະກູນທີ່ສັນນະພິກຂຸເຂົ້າໄປອາໄສມີຢູ່ ແຕ່ເຮົາບໍ່ກ່າວວ່າ ສັນນະພິກຂຸມີຕະກູນທີ່ຕົນເພິ່ງເຂົ້າໄປອາໄສດ້ວຍເຫດພຽງເທົ່ານີ້ ທ່ານຈົ່ງຈືຂໍ້ຄວາມນີ້ໄວ້ແນວນີ້ເທີ້ນວ່າ ເຮົາກ່າວເຖິງພິກຂຸທີ່ລະກາຍນີ້ເຂົ້າຖືກາຍອື່ນ ວ່າມີຕະກູນທີ່ຕົນເພິ່ງເຂົ້າໄປອາໄສ ຕະກູນນັ້ນບໍ່ມີສໍາລັບສັນນະພິກຂຸ ສັນນະພິກຂຸນໍາອາວຸດມາຈຶ່ງບໍ່ຄວນຖືກຕິຕຽນ

**ສັນນະສູດທີ ๔ ຈົບ**

# ๕. ປຸນນະສູດ

## ວ່າດ້ວຍພຣະປຸນນະ

[໘໘] ຄັ້ງນັ້ນ ທ່ານພຣະປຸນນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທໍາແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງເມື່ອຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ປຸນນະ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ຄວາມເພີດເພີນໃນຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນເກີດ ທຸກຈຶ່ງເກີດ ฯລฯ

ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ ມີຢູ່ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນໃນຍ່ອມເກີດຂຶ້ນ ເຮົາກ່າວວ່າ ຍ້ອນຄວາມເພີດເພີນເກີດ ທຸກຈຶ່ງເກີດ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນ ຄວາມເພີດເພີນໃນຍ່ອມດັບໄປ ເຮົາກ່າວວ່າ ຍ້ອນຄວາມເພີດເພີນດັບ ທຸກຈຶ່ງດັບ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ຄວາມເພີດເພີນໃນຍ່ອມດັບ ເຮົາກ່າວວ່າ ຍ້ອນຄວາມເພີດເພີນໃນດັບ ທຸກຈຶ່ງດັບ

ປຸນນະ ເຮົາກ່າວສອນດ້ວຍໂອວາດຢ່າງຫຍໍ້ນີ້ ແລ້ວທ່ານຈັກໄປຢູ່ໃນຊົນນະບົດໃດ?

ທ່ານພຣະປຸນນະຂາບທູນດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກຢູ່ໃນຊົນນະບົດຊື່ວ່າ ສຸນາປະຣັນຕະ

ປຸນນະ ພວກມະນຸດຊາວສຸນາປະຣັນຕະຊົນນະບົດເປັນຄົນດຸຮ້າຍຫຼາຍ ພວກມະນຸດຊາວສຸນາປະຣັນຕະຊົນນະບົດເປັນຄົນຫຍາບຄາຍຫຼາຍ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກດ່າ ກ່າວໂທດທ່ານໃນບ່ອນນັ້ນ ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກດ່າ ກ່າວໂທດ ຂ້າພຣະອົງໃນບ່ອນນັ້ນ ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ຕີເຮົາດ້ວຍຝາມື ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກຕີທ່ານດ້ວຍຝາມື ໃນເລື້ອງນີ້ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກຕີຂ້າພຣະອົງດ້ວຍຝາມື ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍກ້ອນດິນ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍກ້ອນດິນໃນເລື້ອງນີ້ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າພຣະອົງດ້ວຍກ້ອນດິນ ໃນເລື້ອງນີ້ ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍໄມ້ຄ້ອນ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍໄມ້ຄ້ອນໃນເລື້ອງນີ້ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າພຣະອົງດ້ວຍໄມ້ຄ້ອນ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປະຫານເຮົາດ້ວຍອາວຸດ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປະຫານທ່ານດ້ວຍອາວຸດໃນເລື້ອງນີ້ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປະຫານຂ້າພຣະອົງດ້ວຍອາວຸດ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ມະນຸດຊາວສຸນາປຣັນຕຊົນນະບົດເຫຼົ່ານີ້ດີນໍ ມະນຸດຊາວສຸນາປະຣັນຕະຊົນນະບົດເຫຼົ່ານີ້ດີແທ້ນໍ ທີ່ບໍ່ປົງຊີວິດຂອງເຮົາດ້ວຍອາວຸດທີ່ມີຄົມ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ປຸນນະ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດ ຈັກປົງຊີວິດທ່ານດ້ວຍອາວຸດທີ່ຄົມ ໃນເລື້ອງນີ້ທ່ານຈັກຄິດແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າພວກມະນຸດຊາວສຸນາປະຣັນຕະຊົນນະບົດຈັກປົງຊີວິດຂ້າພຣະອົງດ້ວຍອາວຸດທີ່ຄົມ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ວ່າ ພຣະສາວົກທັງຫຼາຍຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນອຶດອັດ ຣະອາ ລັງກຽດຢູ່ດ້ວຍຮ່າງກາຍແລະຊີວິດສະແຫວງຫາອາວຸດເຄື່ອງປົງຊີວິດກໍມີຢູ່ ເຮົາໄດ້ອາວຸດເຄື່ອງປົງຊີວິດທີ່ບໍ່ໄດ້ສະແຫວງຫາເລີຍ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້ ຂ້າແດ່ ພຣະສຸຄົດເຈົ້າ ໃນເລື້ອງນີ້ຂ້າພຣະອົງຈັກຄິດແນວນີ້

ດີແລ້ວ ດີແລ້ວ ປຸນນະ ທ່ານປະກອບດ້ວຍຄວາມຂົ່ມໃຈ ແລະຄວາມສະງົບໃຈນີ້ຈັກສາມາດຢູ່ໃນສຸນາປະຣັນຕະຊົນນະບົດໄດ້ ປຸນນະ ທ່ານຈົ່ງຮູ້ເວລາອັນສົມຄວນໃນບັດນີ້ເທີ້ນ

ຄັ້ງນັ້ນ ທ່ານພຣະປຸນນະຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຂຶ້ນຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນ ເກັບມ້ຽນເສນາສະນະຮຽບຮ້ອຍແລ້ວຖືບາດ ແລະຈີວອນຫຼີກຈາຣິກໄປທາງສຸນາປະຣັນຕະຊົນນະບົດ ເມື່ອຈາຣິກໄປໂດຍລຳດັບກໍເຖິງສຸນາປະຣັນຕະຊົນນະບົດ ໄດ້ຂ່າວວ່າ ທ່ານພຣະປຸນນະຢູ່ທີ່ສຸນາປະຣັນຕະຊົນນະບົດນັ້ນ ຄັ້ງນັ້ນລະຫວ່າງພັນສານັ້ນເອງ ທ່ານໃຫ້ຊາວສຸນາປະຣັນຕະຊົນນະບົດສະແດງຕົນເປັນອຸປາສົກປະມານ ໕໐໐ ຄົນ ແລະ ອຸປາສິກາປະມານ ໕໐໐ ຄົນ ລະຫວ່າງພັນສານັ້ນ ທ່ານໄດ້ບັນລຸວິດຊາ ໓ ແລະນິບພານແລ້ວ

ຄັ້ງນັ້ນແລ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໗ລ໗ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ກຸນລະບຸດຊື່ປຸນນະທີ່ພຣະອົງຊົງສັ່ງສອນດ້ວຍພຣະໂອວາດຢ່າງຫຍໍ້ນັ້ນ ໄດ້ຕາຍໄປແລ້ວ ເຂົາມີຄະຕິເປັນແນວໃດ? ມີອະພິສຳປະຣາຍະພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ກຸນລະບຸດຊື່ປຸນນະເປັນບັນດິດ ປະຕິບັດທຳສົມຄວນແກ່ທຳ ທັງບໍ່ບຽດບຽນເຮົາຍ້ອນເຫດແຫ່ງທຳ ພິກຂຸທັງຫຼາຍ ກຸນລະບຸດຊື່ປຸນນະປະຣິນິບພານແລ້ວ

**ປຸນນະສູດທີ ໕ ຈົບ**

# ๗. ພາຫິຍະສູດ

## ວ່າດ້ວຍພຣະພາຫິຍະ

[໗໙] ຄັ້ງນັ້ນ ທ່ານພຣະພາຫິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາຫິຍະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ຮູບທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຈັກຂຸວິນຍານ ຯລຯ ຈັກຂຸສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ພາຫິຍະ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນ

ທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໃຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຄັ້ງນັ້ນ ທ່ານພຣະພາຫິຍະຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຂຶ້ນ ຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວຈາກໄປ ຕໍ່ມາທ່ານພຣະພາຫິຍະຫຼີກອອກໄປຢູ່ຄົນດຽວ ບໍ່ປະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ທ່ານພຣະພາຫິຍະໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນັ້ນ?

**ພາຫິຍະສູດທີ ໘ ຈົບ**

# ໗. ປະຄົມເອຊາສູດ

## ວ່າດ້ວຍຄວາມຫວັ່ນໄຫວ ສູດທີ ໑

[໖໐] ພິກຂຸທັງຫຼາຍ ຄວາມຫວັ່ນໄຫວເປັນພະຍາດ ຄວາມຫວັ່ນໄຫວເປັນຫົວຝີ ຄວາມຫວັ່ນໄຫວເປັນລູກສອນ ຍ້ອນເຫດນັ້ນແລ ຕະຖາຄົດຈຶ່ງເປັນຜູ້ບໍ່ຫວັ່ນໄຫວ ປາສະຈາກລູກສອນຢູ່ ຍ້ອນເຫດນັ້ນແລ ຖ້າພິກຂຸຫວັງວ່າ ເຮົາເພິ່ງເປັນຜູ້ບໍ່ຫວັ່ນໄຫວ ປາສະຈາກລູກສອນຢູ່

ທ່ານບໍ່ເພິ່ງກຳນົດໝາຍຈັກຂຸ ບໍ່ເພິ່ງກຳນົດໝາຍໃນຈັກຂຸ ບໍ່ເພິ່ງກຳນົດໝາຍຍ້ອນຈັກຂຸ ບໍ່ເພິ່ງກຳນົດໝາຍວ່າ ຈັກຂຸຂອງເຮົາ

ບໍ່ເພິ່ງກຳນົດໝາຍຮູບ ບໍ່ເພິ່ງກຳນົດໝາຍໃນຮູບ ບໍ່ເພິ່ງກຳນົດໝາຍຍ້ອນຮູບ ບໍ່ເພິ່ງກຳນົດໝາຍວ່າ ຮູບຂອງເຮົາ

ບໍ່ເພິ່ງກຳນົດໝາຍຈັກຂຸວິນຍານ ບໍ່ເພິ່ງກຳນົດໝາຍໃນຈັກຂຸວິນຍານ ບໍ່ເພິ່ງກຳນົດໝາຍຍ້ອນຈັກຂຸວິນຍານ ບໍ່ເພິ່ງກຳນົດໝາຍວ່າ ຈັກຂຸວິນຍານຂອງເຮົາ

ບໍ່ເພິ່ງກຳນົດໝາຍຈັກຂຸສຳຜັດ ບໍ່ເພິ່ງກຳນົດໝາຍໃນຈັກຂຸສຳຜັດ ບໍ່ເພິ່ງກຳນົດໝາຍຍ້ອນຈັກຂຸສຳຜັດ ບໍ່ເພິ່ງກຳນົດໝາຍວ່າ ຈັກຂຸສຳຜັດຂອງເຮົາ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນຂອງເຮົາ

ບໍ່ເພິ່ງກຳນົດໝາຍ ໂສຕະ ຯລຯ
ບໍ່ເພິ່ງກຳນົດໝາຍ ຄານະ ຯລຯ
ບໍ່ເພິ່ງກຳນົດໝາຍ ຊິວຫາ ຯລຯ
ບໍ່ເພິ່ງກຳນົດໝາຍ ຣົດ ຯລຯ
ບໍ່ເພິ່ງກຳນົດໝາຍ ຊິວຫາ ວິນຍານ ຯລຯ
ບໍ່ເພິ່ງກຳນົດໝາຍ ຊິວຫາສຳຜັດ ຯລຯ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈນັ້ນຂອງເຮົາ

ບໍ່ເພິ່ງກຳນົດໝາຍ ກາຍ ຯລຯ

ບໍ່ເພິ່ງກຳນົດໝາຍ ມະໂນ ບໍ່ເພິ່ງກຳນົດໝາຍໃນມະໂນ ບໍ່ເພິ່ງກຳນົດໝາຍຍ້ອນມະໂນ ບໍ່ເພິ່ງກຳນົດໝາຍວ່າ ມະໂນຂອງເຮົາ

ບໍ່ເພິ່ງກຳນົດໝາຍທຳມາຣົມ ຯລຯ
ມະໂນວິນຍານ ຯລຯ
ມະໂນສຳຜັດ ຯລຯ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍ

ແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນຂອງເຮົາ

ບໍ່ເພິ່ງກຳນົດໝາຍສິ່ງທັງປວງ ບໍ່ເພິ່ງກຳນົດໝາຍໃນສິ່ງທັງປວງ ບໍ່ເພິ່ງກຳນົດໝາຍຍ້ອນສິ່ງທັງປວງ ບໍ່ເພິ່ງກຳນົດໝາຍວ່າ ສິ່ງທັງປວງຂອງເຮົາ

ພິກຂຸຜູ້ບໍ່ກຳນົດໝາຍຢູ່ແນວນີ້ຍ່ອມບໍ່ຖືໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຖືໝັ້ນຍ່ອມ ບໍ່ສະດຸ້ງຢ້ານ ເມື່ອບໍ່ສະດຸ້ງຢ້ານຍ່ອມດັບສະເພາະຕົນເອງ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ປະຖົມເອຊາສູດທີ ၇ ຈົບ**

# ໘. ທຸຕິຍະເອຊາສູດ

## ວ່າດ້ວຍຄວາມຫວັ່ນໄຫວ ສູດທີ ໘

[໙໑] ພິກຂຸທັງຫຼາຍ ຄວາມຫວັ່ນໄຫວເປັນພະຍາດ ຄວາມຫວັ່ນໄຫວເປັນຫົວຝີ ຄວາມຫວັ່ນໄຫວເປັນລູກສອນ ຍ້ອນເຫດນັ້ນແລ ຕະຖາຄົດຈຶ່ງເປັນຜູ້ບໍ່ຫວັ່ນໄຫວ ປາສະຈາກລູກສອນຢູ່

ຍ້ອນເຫດນັ້ນແລ ຖ້າພິກຂຸຫວັງວ່າ ເຮົາເພິ່ງເປັນຜູ້ບໍ່ຫວັ່ນໄຫວ ປາສະຈາກລູກສອນຢູ່

ທ່ານບໍ່ເພິ່ງກຳນົດໝາຍຈັກຂຸ ບໍ່ເພິ່ງກຳນົດໝາຍໃນຈັກຂຸ ບໍ່ເພິ່ງກຳນົດໝາຍຍ້ອນຈັກຂຸ ບໍ່ເພິ່ງກຳນົດໝາຍວ່າ ຈັກຂຸຂອງເຮົາ

ບໍ່ເພິ່ງກຳນົດໝາຍຮູບ ຯລຯ
ຈັກຂຸວິນຍານ ຯລຯ
ຈັກຂຸສຳຜັດ ຯລຯ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນ ສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນຂອງເຮົາ

ບຸກຄົນກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນ ຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີໃນພົບຢູ່ນັ້ນເອງ ຯລຯ

ບໍ່ເພິ່ງກຳນົດໝາຍຊິວຫາ ບໍ່ເພິ່ງກຳນົດໝາຍໃນຊິວຫາ ບໍ່ເພິ່ງກຳນົດໝາຍຍ້ອນຊິວຫາ ບໍ່ເພິ່ງກຳນົດໝາຍວ່າ ຊິວຫາຂອງເຮົາ

ບໍ່ເພິ່ງກຳນົດໝາຍຣົດ ຯລຯ
ຊິວຫາວິນຍານ ຯລຯ
ຊິວຫາສຳຜັດ ຯລຯ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນ ສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈນັ້ນຂອງເຮົາ

ບຸກຄົນກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີໃນພົບຢູ່ນັ້ນເອງ ຯລຯ

ບໍ່ເພິ່ງກຳນົດໝາຍມະໂນ ບໍ່ເພິ່ງກຳນົດໝາຍໃນມະໂນ ບໍ່ເພິ່ງກຳນົດໝາຍຍ້ອນມະໂນ ບໍ່ເພິ່ງກຳນົດໝາຍວ່າ ມະໂນຂອງເຮົາ

ບໍ່ເພິ່ງກຳນົດໝາຍທຳມາຣົມ ຯລຯ
ມະໂນວິນຍານ ຯລຯ
ມະໂນສຳຜັດ ຯລຯ

ບໍ່ເພິ່ງກຳນົດໝາຍແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍແມ່ນຍ້ອນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ບໍ່ເພິ່ງກຳນົດໝາຍວ່າ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນຂອງເຮົາ

ບຸກຄົນກຳນົດໝາຍສິ່ງໃດ ກຳນົດໝາຍໃນສິ່ງໃດ ກຳນົດໝາຍຍ້ອນສິ່ງໃດ ກຳນົດໝາຍວ່າ ສິ່ງໃດຂອງເຮົາ ສິ່ງນັ້ນຍ່ອມເປັນໂດຍອາການອື່ນຈາກທີ່ກຳນົດໝາຍນັ້ນ ຄື ສັດໂລກຂ້ອງຢູ່ໃນພົບ ມີຄວາມປ່ຽນແປງໂດຍອາການອື່ນ ກໍຍັງຍິນດີພົບຢູ່ນັ້ນເອງ

ພິກຂຸທັງຫຼາຍ ບຸກຄົນບໍ່ເພິ່ງກຳນົດໝາຍແມ່ນຂັນ ທາດ ແລະອາຍະຕະນະທີ່ທີ່ມີຢູ່ ບໍ່ເພິ່ງກຳນົດໝາຍໃນຂັນ ທາດ ແລະອາຍະຕະນະທີ່ທີ່ມີຢູ່ ບໍ່ເພິ່ງກຳນົດໝາຍຍ້ອນຂັນ ທາດ ແລະອາຍະຕະນະທີ່ທີ່ມີຢູ່ ບໍ່ເພິ່ງກຳນົດໝາຍວ່າ ຂັນ ທາດ ແລະ ອາຍະຕະນະທີ່ທີ່ມີຢູ່ນັ້ນຂອງເຮົາ

ບຸກຄົນຜູ້ບໍ່ກຳນົດໝາຍຢູ່ແນວນີ້ຍ່ອມບໍ່ຖືໝັ້ນອັນໃດ ໆ ໃນໂລກ ເມື່ອບໍ່ຖືໝັ້ນກໍ ບໍ່ສະດຸ້ງຢ້ານ ເມື່ອບໍ່ສະດຸ້ງຢ້ານ ຍ່ອມດັບສະເພາະຕົນເອງ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ທຸຕິຍະເອຊາສູດທີ ໗ ຈົບ**

# ໘. ປະຖົມທະວະຍະສູດ

## ວ່າດ້ວຍທຳຄູ່ກັນ ສູດທີ ໑

[໙໒] ພິກຂຸທັງຫຼາຍ ເຮົາຈັກສະແດງທຳຄູ່ກັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ກໍອັນໃດນໍ? ຊື່ວ່າທຳຄູ່ກັນ

ຄື (໑) ຈັກຂຸກັບຮູບ (໒) ໂສຕະກັບສັດທະ (໓) ຄານະກັບຄັນທະ (໔) ຊິວຫາກັບຣົດ (໕) ກາຍກັບໂຜດຖັບພະ (໖) ມະໂນກັບທຳມາຣົມ

ນີ້ຮຽກວ່າ ທຳຄູ່ກັນ

ພິກຂຸທັງຫຼາຍ ຜູ້ໃດເພິ່ງກ່າວແນວນີ້ວ່າ ຂ້າພະເຈົ້າຈັກບອກເຊົາທຳຄູ່ກັນນັ້ນ ແລ້ວບັນຍັດທຳຄູ່ກັນແນວອື່ນແທນ ຄຳເວົ້າຂອງຜູ້ນັ້ນຄົງເປັນພຽງຄຳເວົ້າທີ່ນັ້ນ ເມື່ອຖືກຖາມເຂົ້າກໍຄົງຕອບບໍ່ໄດ້ ແລະເພິ່ງເຖິງຄວາມລຳບາກຢ່າງຍິ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຂົາຖືກຖາມໃນສິ່ງອັນບໍ່ແມ່ນວິໄສ

**ປະຖົມທະວະຍະສູດທີ ໘ ຈົບ**

# ໑໐. ທຸຕິຍະທະວະຍະສູດ

## ວ່າດ້ວຍທຳຄູ່ກັນ ສູດທີ ໘

[໖໘] ພິກຂຸທັງຫຼາຍ ຍ້ອນອາໄສທຳຄູ່ກັນວິນຍານຈຶ່ງເກີດຂຶ້ນ ຍ້ອນອາໄສທຳຄູ່ກັນ ວິນຍານຈຶ່ງເກີດຂຶ້ນ ແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດຂຶ້ນ ຈັກຂຸບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ຮູບບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ທຳຄູ່ກັນນີ້ ຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ຈັກຂຸວິນຍານບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຈັກຂຸວິນຍານກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍຈັກຂຸວິນຍານເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ?

ຄວາມພົບກັນ ຄວາມປະຊຸມ ຄວາມພ້ອມພຽງກັນແຫ່ງທຳ ໓ ປະການນີ້ ຮຽກວ່າຈັກຂຸສຳຜັດ ແມ່ນຈັກຂຸສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຈັກຂຸສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍຈັກຂຸສຳຜັດເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ? ບຸກຄົນຖືກຜັດສະກະທົບແລ້ວຍ່ອມຮູ້ສຶກ ຖືກຜັດສະກະທົບແລ້ວຍ່ອມຄິດໄດ້ ຖືກຜັດສະກະທົບແລ້ວຍ່ອມຈືໄດ້ ແມ່ນທຳເຫຼົ່ານີ້ກໍຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ۶ລ۶

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດຂຶ້ນ ຊິວຫາບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ຣົດບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ທຳຄູ່ກັນນີ້ ຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ຊິວຫາວິນຍານກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຊິວຫາວິນຍານກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍຊິວຫາວິນຍານເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ?

ຄວາມພົບກັນ ຄວາມປະຊຸມ ຄວາມພ້ອມພຽງກັນແຫ່ງທຳ ໓ ປະການນີ້ ຮຽກວ່າຊິວຫາສຳຜັດ ແມ່ນຊິວຫາສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຊິວຫາສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍຊິວຫາສຳຜັດເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ?

ບຸກຄົນຖືກຜັດສະກະທົບແລ້ວຍ່ອມຮູ້ສຶກ ຖືກຜັດສະກະທົບແລ້ວຍ່ອມຄິດໄດ້ ຖືກຜັດສະກະທົບແລ້ວຍ່ອມຈືໄດ້ ແມ່ນທຳເຫຼົ່ານີ້ ກໍຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດຂຶ້ນ ມະໂນບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ທຳມາຣົມບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ທຳຄູ່ກັນນີ້ຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ມະໂນວິນຍານບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງມະໂນວິນຍານກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍມະໂນວິນຍານທີ່ເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ນໍ?

ຄວາມພົບກັນ ຄວາມປະຊຸມ ຄວາມພ້ອມພຽງກັນແຫ່ງທຳ ໓ ປະການນີ້ ຮຽກວ່າມະໂນສຳຜັດ ແມ່ນມະໂນສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງມະໂນສຳຜັດກໍບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ ກໍມະໂນສຳຜັດເກີດຂຶ້ນຍ້ອນອາໄສປັດໄຈທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ນໍ?

ບຸກຄົນຖືກຜັດສະກະທົບແລ້ວຍ່ອມຮູ້ສຶກ ຖືກຜັດສະກະທົບແລ້ວຍ່ອມຄິດໄດ້ ຖືກຜັດສະກະທົບແລ້ວຍ່ອມຈືໄດ້ ແມ່ນທຳເຫຼົ່ານີ້ກໍຫວັ່ນໄຫວແລະເສື່ອມ ບໍ່ທ່ຽງ ມີຄວາມຜັນແປ ມີພາວະໂດຍອາການອື່ນ

ພິກຂຸທັງຫຼາຍ ຍ້ອນອາໄສທຳຄູ່ກັນນີ້ແລ ວິນຍານຈຶ່ງເກີດຂຶ້ນ

**ທຸຕິຍະທະວະຍະສູດທີ ໑໐ ຈົບ**

**ສັນນະວັກທີ ໔ ຈົບ**

## ລວມພຣະສູດທີ່ ມີໃນວັກນີ້ ຄື

# ໔. ສະລະວັກ

## ໝວດວ່າດ້ວຍອາຍະຕະນະ ໖ ປະການ

## ໑. ອະທັນຕະອະຄຸດຕະສູດ

### ວ່າດ້ວຍການບໍ່ເຝິກບໍ່ຄຸ້ມຄອງອາຍະຕະນະ

[໗໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຜັດສາຍະຕະນະ ໖ ປະການນີ້ທີ່ບຸກຄົນບໍ່ເຝິກ ບໍ່ຄຸ້ມຄອງ ບໍ່ຖືຮັກສາ ບໍ່ສັງລວມແລ້ວ ຍ່ອມນໍາທຸກມີປະມານຍິ່ງມາໃຫ້

ຜັດສາຍະຕະນະ ໖ ປະການ ອັນໃດແດ່ ຄື

໑. ຜັດສາຍະຕະນະຄື ຈັກຂຸ ທີ່ບຸກຄົນບໍ່ເຝິກ ບໍ່ຄຸ້ມຄອງ ບໍ່ຖືຮັກສາ ບໍ່ສັງລວມແລ້ວ ຍ່ອມນໍາທຸກມີປະມານຍິ່ງມາໃຫ້ ຯລຯ
໔. ຜັດສາຍະຕະນະຄື ຊິວຫາ ທີ່ບຸກຄົນບໍ່ເຝິກ ບໍ່ຄຸ້ມຄອງ ບໍ່ຖືຮັກສາ ບໍ່ສັງລວມແລ້ວ ຍ່ອມນໍາທຸກມີປະມານຍິ່ງມາໃຫ້ ຯລຯ
໖. ຜັດສາຍະຕະນະຄື ມະໂນ ທີ່ບຸກຄົນບໍ່ເຝິກ ບໍ່ຄຸ້ມຄອງ ບໍ່ຖືຮັກສາ ບໍ່ສັງລວມແລ້ວ ຍ່ອມນໍາທຸກມີປະມານຍິ່ງມາໃຫ້

ພິກຂຸທັງຫຼາຍ ຜັດສາຍະຕະນະ ໖ ປະການນີ້ແລ ທີ່ບຸກຄົນບໍ່ເຝິກ ບໍ່ຄຸ້ມຄອງ ບໍ່ຖືຮັກສາ ບໍ່ສັງລວມແລ້ວຍ່ອມນໍາທຸກມີປະມານຍິ່ງມາໃຫ້

ພິກຂຸທັງຫຼາຍ ຜັດສາຍະຕະນະ ໖ ປະການນີ້ທີ່ບຸກຄົນເຝິກດີ ຄຸ້ມຄອງດີ ຖືຮັກສາດີ ສັງລວມດີແລ້ວຍ່ອມນໍາສຸກມີປະມານຍິ່ງມາໃຫ້

ຜັດສາຍະຕະນະ ໖ ປະການ ອັນໃດແດ່ ຄື

໑. ຜັດສາຍະຕະນະຄືຈັກຂຸທີ່ບຸກຄົນເຝິກດີ ຄຸ້ມຄອງດີ ຖືຮັກສາດີ ສັງລວມດີແລ້ວ ຍ່ອມນໍາສຸກມີປະມານຍິ່ງມາໃຫ້ ຯລຯ
໔. ຜັດສາຍະຕະນະຄື ຊິວຫາ ທີ່ບຸກຄົນເຝິກດີ ຄຸ້ມຄອງດີ ຖືຮັກສາດີ ສັງລວມດີແລ້ວ ຍ່ອມນໍາສຸກມີປະມານຍິ່ງມາໃຫ້ ຯລຯ

໖. ຜັດສາຍະຕະນະຄື ມະໂນ ທີ່ບຸກຄົນເຝິກດີ ຄຸ້ມຄອງດີ ຖືຮັກສາດີ ສັງລວມ ດີແລ້ວ ຍ່ອມນຳສຸກມີປະມານຍິ່ງມາໃຫ້

ພິກຂຸທັງຫຼາຍ ຜັດສາຍະຕະນະ ໖ ປະການນີ້ແລ ທີ່ບຸກຄົນເຝິກດີ ຄຸ້ມຄອງດີ ຖືຮັກສາ ດີ ສັງລວມດີແລ້ວຍ່ອມນຳສຸກຍິ່ງມາໃຫ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດ ຄາຖາປະພັນຕໍ່ໄປອີກວ່າ

ພິກຂຸທັງຫຼາຍ ບຸກຄົນຜູ້ບໍ່ສັງລວມຜັດສາຍະຕະນະ ໖ ປະການນັ້ນແລ
ໃນອາຍະຕະນະ ໖ ປະການໃດ ຍ່ອມປະສົບທຸກ
ສ່ວນບຸກຄົນເຫຼົ່າໃດ ໄດ້ການສັງລວມອາຍະຕະນະ ໖ ປະການນັ້ນ
ບຸກຄົນເຫຼົ່ານັ້ນ ມີສັດທາເປັນເພື່ອນ ເປັນຜູ້ບໍ່ຊຸ່ມດ້ວຍຣາຄະຢູ່
ບຸກຄົນເຫັນຮູບທີ່ໜ້າພໍໃຈ ຫຼື ເຫັນຮູບທີ່ບໍ່ໜ້າພໍໃຈແລ້ວ
ເພິ່ງບັນເທົາທາງຂອງຣາຄະໃນຮູບທີ່ໜ້າພໍໃຈ
ແລະບໍ່ເພິ່ງເສຍໃຈວ່າ ຮູບຂອງເຮົາບໍ່ໜ້າຮັກ
ໄດ້ຍິນສຽງທີ່ໜ້າຮັກແລະບໍ່ໜ້າຮັກແລ້ວ
ບໍ່ເພິ່ງຢາກໃນສຽງທີ່ໜ້າຮັກ
ແລະເພິ່ງບັນເທົາຄວາມບໍ່ພໍໃຈໃນສຽງທີ່ບໍ່ໜ້າຮັກ
ແລະບໍ່ເພິ່ງເສຍໃຈວ່າ ສຽງຂອງເຮົາບໍ່ໜ້າຮັກ
ໄດ້ດົມກິ່ນຫອມທີ່ໜ້າພໍໃຈ
ແລະໄດ້ດົມກິ່ນເໝັນທີ່ບໍ່ໜ້າພໍໃຈແລ້ວ
ເພິ່ງບັນເທົາຄວາມມຸດມັດໃນກິ່ນທີ່ບໍ່ໜ້າພໍໃຈ
ແລະບໍ່ເພິ່ງພໍໃຈໃນກິ່ນທີ່ໜ້າພໍໃຈ
ໄດ້ຊີມຣົດທີ່ບໍ່ແຊບແລະແຊບ
ແລະຊີມຣົດທີ່ບໍ່ແຊບໃນບາງເວລາແລ້ວ
ບໍ່ເພິ່ງຕິດໃຈຊີມຣົດທີ່ແຊບ
ແລະບໍ່ຄວນຍິນຮ້າຍໃນຣົດທີ່ບໍ່ແຊບ
ຖືກຜັດສະທີ່ເປັນສຸກກະທົບແລ້ວບໍ່ເພິ່ງມົວເມົາ
ແມ່ນຖືກຜັດສະທີ່ເປັນທຸກກະທົບແລ້ວກໍບໍ່ເພິ່ງຫວັ່ນໄຫວ
ຄວນວາງເສີຍຜັດສະທັງສອງທັງທີ່ເປັນສຸກແລະເປັນທຸກ
ບໍ່ຄວນຍິນດີ ບໍ່ຄວນຍິນຮ້າຍກັບຜັດສະອັນໃດ ໆ
ນໍຣະຊົນທັງຫຼາຍຜູ້ຕ່ຳຊາມ

ມີປະປັນຈະສັນຍາ (ຄວາມໝາຍຮູ້ໃນກິເລດເຄື່ອງເຮັດໃຫ້ລ້າຊ້າ)
ປຸງແຕ່ງຢູ່ ເປັນສັດທີ່ມີສັນຍາ ວົນວຽນຢູ່
ກໍບຸກຄົນບັນເທົາໃຈທີ່ອາໄສເຮືອນ ໕ ທັງປວງແລ້ວ
ຍ່ອມປ່ຽນຈິດໃຫ້ປະກອບດ້ວຍເນກຂຳມະ
ໃນການໃດທີ່ບຸກຄົນອົບຮົມໃຈດີແລ້ວ
ໃນອາລົມ ໖ ປະການແນວນີ້
ໃນການນັ້ນຈິດຂອງເຂົາຖືກສຸກສຳຜັດຫຼືທຸກຂະສຳຜັດກະທົບແລ້ວ
ຍ່ອມບໍ່ຫວັ່ນໄຫວໃນທີ່ໃດ ໆ
ພິກຂຸທັງຫຼາຍ ທ່ານທັງຫຼາຍຄອບງຳຣາຄະແລະໂທສະໄດ້ແລ້ວ
ຍ່ອມເປັນຜູ້ເຖິງຈຸດຈົບແຫ່ງຄວາມເກີດແລະຄວາມຕາຍ

**ອະທັນຕະອະຄຸດຕະສູດທີ ໑ ຈົບ**

# ໘. ມາລຸກະຍະປຸດຕະສູດ

## ວ່າດ້ວຍພຣະມາລຸກະຍະບຸດ

[໗໕] ຄັ້ງນັ້ນ ທ່ານພຣະມາລຸກະຍະບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມາລຸກະຍະບຸດ ໃນການຂໍໂອວາດຂອງທ່ານນີ້ ໃນບັດນີ້ ເຮົາຈັກບອກພວກພິກຂຸໜຸ່ມແນວໃດວ່າ ທ່ານເປັນພິກຂຸຜູ້ຊະຣາ ສູງອາຍຸ ເປັນຜູ້ເຖົ້າ ລ່ວງການມາຫຼາຍ ຜ່ານໄວມາດົນ ຂໍໂອວາດໂດຍຫຍໍ້

ທ່ານພຣະມາລຸກະຍະບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເປັນຜູ້ຊະຣາ ສູງອາຍຸ ເປັນຜູ້ເຖົ້າ ລ່ວງການມາຫຼາຍ ຜ່ານໄວມາດົນແລ້ວກໍຈິງຢູ່ ແຕ່ຂໍພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຮັດແນວໃດ ຂ້າພຣະອົງເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເພິ່ງເປັນຜູ້ສືບຕໍ່ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

ມາລຸກະຍະບຸດ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທີ່ຈະຮັບຮູ້ແຈ້ງທາງຕາເຫຼົ່າໃດ ທ່ານບໍ່ໄດ້ເຫັນ ບໍ່ເຄີຍເຫັນແລ້ວ ຍ່ອມບໍ່ເຫັນ (ທັງການກຳນົດ) ວ່າ ເຮົາເພິ່ງເຫັນ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດ ຫຼື ຮັກແພງໃນຮູບເຫຼົ່ານັ້ນບໍ?

ບໍ່ມີເລີຍ ຂ້ານ້ອຍ

ສຽງ ທີ່ເພິ່ງຮູ້ແຈ້ງທາງຫູເຫຼົ່າໃດ ທ່ານບໍ່ໄດ້ຟັງ ບໍ່ເຄີຍຟັງແລ້ວ ຍ່ອມບໍ່ຟັງ ທັງການກຳນົດວ່າ ເຮົາເພິ່ງຟັງ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດ ຫຼືຮັກແພງໃນສຽງເຫຼົ່ານັ້ນບໍ?

ບໍ່ມີເລີຍ ຂ້ານ້ອຍ

ກິ່ນ ທີ່ເພິ່ງຮູ້ແຈ້ງທາງດັງເຫຼົ່າໃດ ທ່ານບໍ່ໄດ້ດົມ ບໍ່ເຄີຍດົມແລ້ວ ຍ່ອມບໍ່ດົມ ທັງການກຳນົດວ່າ ເຮົາເພິ່ງດົມ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດ ຫຼືຮັກແພງໃນກິ່ນເຫຼົ່ານັ້ນບໍ?

ບໍ່ມີເລີຍ ຂ້ານ້ອຍ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນເຫຼົ່າໃດ ທ່ານບໍ່ໄດ້ຊີມ ບໍ່ເຄີຍຊີມແລ້ວ ຍ່ອມບໍ່ຊີມ ທັງການກຳນົດວ່າ ເຮົາເພິ່ງຊີມ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດຫຼືຮັກແພງໃນຣົດເຫຼົ່ານັ້ນບໍ

ບໍ່ມີເລີຍ ຂ້ານ້ອຍ

ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍເຫຼົ່າໃດ ທ່ານບໍ່ໄດ້ຖືກຕ້ອງ ບໍ່ເຄີຍຖືກຕ້ອງ ຍ່ອມບໍ່ຖືກຕ້ອງ ທັງການກຳນົດວ່າ ເຮົາເພິ່ງຖືກຕ້ອງ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດ ຫຼື ຮັກແພງໃນໂຜດຖັບພະເຫຼົ່ານັ້ນບໍ?

ບໍ່ມີເລີຍ ຂ້ານ້ອຍ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຫຼົ່າໃດ ທ່ານບໍ່ໄດ້ຮູ້ແຈ້ງບໍ່ເຄີຍຮູ້ແຈ້ງແລ້ວ ຍ່ອມບໍ່ຮູ້ແຈ້ງ ທັງການກຳນົດວ່າ ເຮົາເພິ່ງຮູ້ແຈ້ງ ກໍບໍ່ມີແກ່ທ່ານ ທ່ານຈະມີຄວາມພໍໃຈ ກຳໜັດ ຫຼືຮັກແພງໃນທຳມາຣົມເຫຼົ່ານັ້ນບໍ?

ບໍ່ມີເລີຍ ຂ້ານ້ອຍ

ມາລຸກະຍະບຸດ ບັນດາທຳເຫຼົ່ານີ້ ຄື ຮູບທີ່ທ່ານເຫັນ ສຽງທີ່ທ່ານຟັງ ອາລົມທີ່ທ່ານຮູ້ ແລະທຳທີ່ທ່ານເພິ່ງຮູ້ແຈ້ງ ໃນຮູບທີ່ເຫັນຈັກເປັນພຽງແຕ່ວ່າເຫັນ ໃນສຽງທີ່ຟັງຈັກເປັນພຽງແຕ່ວ່າຟັງ ໃນອາລົມທີ່ຮູ້ຈັກເປັນພຽງແຕ່ວ່າຮູ້ ໃນທຳທີ່ຮູ້ແຈ້ງຈັກເປັນພຽງແຕ່ວ່າຮູ້ແຈ້ງ

ເມື່ອໃດບັນດາທຳທັງຫຼາຍ ຄື ຮູບທີ່ທ່ານເຫັນ ສຽງທີ່ທ່ານຟັງ ອາລົມທີ່ທ່ານຮູ້ ແລະທຳທີ່ທ່ານເພິ່ງຮູ້ແຈ້ງ ໃນຮູບທີ່ເຫັນຈັກເປັນພຽງແຕ່ວ່າເຫັນ ໃນສຽງທີ່ຟັງຈັກເປັນພຽງແຕ່ວ່າຟັງ ໃນອາລົມທີ່ຮູ້ຈັກເປັນພຽງແຕ່ວ່າຮູ້ ໃນທຳທີ່ຮູ້ແຈ້ງຈັກເປັນພຽງແຕ່ວ່າຮູ້ແຈ້ງ ເມື່ອນັ້ນທ່ານຈັກບໍ່ຖືກສິ່ງນັ້ນຄອບງຳ

ເມື່ອໃດ ທ່ານຈັກບໍ່ຖືກສິ່ງນັ້ນຄອບງຳ ເມື່ອນັ້ນທ່ານຈັກບໍ່ພົວພັນໃນສິ່ງນັ້ນ

ເມື່ອໃດທ່ານຈັກບໍ່ພົວພັນໃນສິ່ງນັ້ນ ເມື່ອນັ້ນທ່ານຈັກບໍ່ມີໃນໂລກນີ້ ບໍ່ມີໃນໂລກອື່ນ ບໍ່ມີໃນລະຫວ່າງໂລກທັງສອງ ນີ້ເປັນບ່ອນສຸດແຫ່ງທຸກ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ທົ່ວເຖິງເນື້ອຄວາມແຫ່ງທຳທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວຢ່າງຫຍໍ້ ໂດຍພິດສະດານແນວນີ້ ວ່າ

ຍ້ອນເຫັນຮູບຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກຮູບຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາ ແລະ ວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ
ຍ້ອນຟັງສຽງຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກສຽງຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ
ຍ້ອນດົມກິ່ນຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກກິ່ນຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ

ຍ້ອນຊິມຣົດຈຶ່ງຫຼົງລືມສະຕິ
ບຸກຄົນເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກຣົດຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ

ຍ້ອນຖືກຕ້ອງໂຜດຖັບພະຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກໂຜດຖັບພະຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ

ຍ້ອນຮູ້ທຳມາຣົມຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກທຳມາຣົມຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຍັງຫ່າງໄກນິບພານ

ບຸກຄົນນັ້ນເຫັນຮູບແລ້ວມີສະຕິບໍ່ກຳໜັດໃນຮູບ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາເຫັນຮູບແລະສະເຫວີຍເວທະນາຢູ່
ທຸກຍ່ອມສິ້ນໄປບໍ່ຖືກສັ່ງສົມໄວ້ ສັນໃດ
ເຂົາກໍເປັນຜູ້ມີສະຕິທ່ຽວໄປ ສັນນັ້ນ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ

ບຸກຄົນນັ້ນຟັງສຽງແລ້ວມີສະຕິບໍ່ກຳໜັດໃນສຽງ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາຟັງສຽງແລະສະເຫວີຍເວທະນາຢູ່

ທຸກຍ່ອມສິ້ນໄປບໍ່ຖືກສັ່ງສົມໄວ້ ສັນໃດ
ເຂົາເປັນຜູ້ມີສະຕິທ່ຽວໄປ ສັນນັ້ນ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ
ບຸກຄົນນັ້ນດົມກິ່ນແລ້ວມີສະຕິບໍ່ກຳໜັດໃນກິ່ນ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາດົມກິ່ນແລະສະເຫວີຍເວທະນາຢູ່
ທຸກຍ່ອມສິ້ນໄປບໍ່ຖືກສັ່ງສົມໄວ້ ສັນໃດ
ເຂົາເປັນຜູ້ມີສະຕິທ່ຽວໄປ ສັນນັ້ນ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ
ບຸກຄົນນັ້ນຊີມຣົດແລ້ວມີສະຕິບໍ່ກຳໜັດໃນຣົດ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາຊີມຣົດແລະສະເຫວີຍເວທະນາຢູ່ ຯລຯ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ
ບຸກຄົນນັ້ນຖືກຕ້ອງຜັດສະແລ້ວມີສະຕິບໍ່ກຳໜັດໃນຜັດສະ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາຖືກຕ້ອງຜັດສະແລະສະເຫວີຍເວທະນາຢູ່ ຯລຯ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ
ບຸກຄົນນັ້ນຮູ້ທຳມາຣົມແລ້ວ
ມີສະຕິບໍ່ກຳໜັດໃນທຳມາຣົມ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາຮູ້ທຳມາຣົມແລະສະເຫວີຍເວທະນາຢູ່
ທຸກຍ່ອມສິ້ນໄປບໍ່ຖືກສັ່ງສົມໄວ້ ສັນໃດ
ເຂົາເປັນຜູ້ມີສະຕິທ່ຽວໄປ ສັນນັ້ນ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ບັນດິດກ່າວວ່າ ຢູ່ໃກ້ນິບພານ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ທົ່ວເຖິງເນື້ອຄວາມແຫ່ງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວຢ່າງຫຍໍ້ໂດຍພິດສະດານແນວນີ້

ດີແລ້ວ ດີແລ້ວ ມາລຸກະຍະບຸດ ດີແລ້ວທີ່ທ່ານຮູ້ທົ່ວເຖິງເນື້ອຄວາມແຫ່ງທຳທີ່ເຮົາສະແດງແລ້ວໂດຍຫຍໍ້ ໄດ້ພິດສະດານແນວນີ້ ວ່າ

ຍ້ອນເຫັນຮູບຈຶ່ງຫຼົງລືມສະຕິ
ເມື່ອໃສ່ໃຈນິມິດທີ່ໜ້າຮັກ
ກໍມີຈິດກຳໜັດສະເຫວີຍອາລົມນັ້ນ ທັງຕິດໃຈອາລົມນັ້ນຢູ່
ເວທະນາທີ່ເກີດຈາກຮູບຈຳນວນຫຼາຍກໍຈະເລີນແກ່ເຂົາ
ແລະຈິດຂອງເຂົາກໍຖືກອະພິດຊາແລະວິຫິງສາເຂົ້າໄປກະທົບ
ເມື່ອເຂົາສັ່ງສົມທຸກຢູ່ແນວນີ້
ເຮົາກ່າວວ່າ ຍັງຫ່າງໄກນິບພານ

໗໑໗

ບຸກຄົນນັ້ນຮູ້ທຳມາຣົມແລ້ວ
ມີສະຕິບໍ່ກຳໜັດໃນທຳມາຣົມ
ມີຈິດຄາຍກຳໜັດສະເຫວີຍອາລົມນັ້ນ ທັງບໍ່ຕິດໃຈອາລົມນັ້ນຢູ່
ເມື່ອເຂົາຮູ້ທຳມາຣົມແລະສະເຫວີຍເວທະນາຢູ່
ທຸກຍ່ອມສິ້ນໄປບໍ່ຖືກສັ່ງສົມໄວ້ ສັນໃດ
ເຂົາເປັນຜູ້ມີສະຕິທ່ຽວໄປ ສັນນັ້ນ
ເມື່ອເຂົາບໍ່ສັ່ງສົມທຸກຢູ່ແນວນີ້
ເຮົາກ່າວວ່າ ຢູ່ໃກ້ນິບພານ

ມາລຸກະຍະບຸດ ທ່ານເພິ່ງເຫັນເນື້ອຄວາມແຫ່ງທຳທີ່ເຮົາສະແດງແລ້ວໂດຍຫຍໍ້ ໄວ້ໂດຍພິດສະດານແນວນີ້ເທີ້ນ

ຄັ້ງນັ້ນ ທ່ານພຣະມາລຸກະຍະບຸດຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າລຸກຂຶ້ນຈາກອາສະນະ ຖວາຍອະພິວາດ ກະທຳປະທັກຂິນແລ້ວຈາກໄປ ຕໍ່ມາ ທ່ານພຣະມາລຸກະຍະບຸດກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ທ່ານພຣະມາລຸກະຍະບຸດໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ມາລຸກະຍະປຸດຕະສູດທີ ໘ ຈົບ**

# ៦. ປະຣິຫານະທຳມະສູດ

## ວ່າດ້ວຍປະຣິຫານະທຳ

[ລ៦] ພິກຂຸທັງຫຼາຍ ເຮົາຈັກສະແດງປະຣິຫານະທຳ ອະປະຣິຫານະທຳ ແລະອະພິພາຍະຕະນະ ៦ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ປະຣິຫານະທຳ ເປັນແນວໃດ?

ຄື ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນເຫັນຮູບທາງຕາ ຖ້າພິກຂຸໃຫ້ກິເລດນັ້ນອາໄສຢູ່ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ໃຫ້ເຖິງຄວາມບໍ່ມີອີກ ຂໍ້ນັ້ນ ພິກຂຸເພິ່ງຮູ້ວ່າ ເຮົາ ກຳລັງເສື່ອມຈາກກຸສົນທຳ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມເສື່ອມ ຯລຯ

ອີກປະການໜຶ່ງ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຊີມຣົດທາງລີ້ນ ຯລຯ

ອີກປະການໜຶ່ງ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຮູ້ແຈ້ງທຳມາຣົມທາງໃຈ ຖ້າພິກຂຸໃຫ້ກິເລດນັ້ນອາໄສຢູ່ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ໝົດສິ້ນໄປ ບໍ່ໃຫ້ເຖິງຄວາມບໍ່ມີອີກ ຂໍ້ນັ້ນ ພິກຂຸເພິ່ງຮູ້ວ່າ ເຮົາກຳລັງເສື່ອມຈາກກຸສົນທຳ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມເສື່ອມ

ປະຣິຫານະທຳເປັນແນວນີ້ແລ

ອະປະຣິຫານະທຳ ເປັນແນວໃດ?

ຄື ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນເຫັນຮູບທາງຕາ ຖ້າພິກຂຸບໍ່ໃຫ້ກິເລດນັ້ນອາໄສຢູ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ຂໍ້ນັ້ນພິກຂຸເພິ່ງຮູ້ວ່າ ເຮົາບໍ່ເສື່ອມຈາກກຸສົນທຳ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມບໍ່ເສື່ອມ ຯລຯ

ອີກປະການໜຶ່ງ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຊີມຣົດທາງລີ້ນ ຯລຯ

ອີກປະການໜຶ່ງ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ

ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຮູ້ແຈ້ງທຳມາຣົມທາງໃຈ ຖ້າພິກຂຸບໍ່ໃຫ້ກິເລດນັ້ນ ອາໄສຢູ່ ລະ ບັນເທົາ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກ ຂໍ້ນັ້ນ ພິກຂຸ ເພິ່ງຮູ້ວ່າ ເຮົາບໍ່ເສື່ອມຈາກກຸສົນທຳ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມບໍ່ເສື່ອມ

ອະປະຣິຫານະທຳເປັນແນວນີ້ແລ

ອະພິພາຍະຕະນະ ໖ ປະການ ເປັນແນວໃດ?

ຄື ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດຍ່ອມບໍ່ເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນເຫັນຮູບທາງຕາ ພິກຂຸທັງຫຼາຍ ຂໍ້ນັ້ນ ພິກຂຸເພິ່ງຮູ້ວ່າ ອາຍະຕະນະນີ້ເຮົາຄອບງຳໄດ້ແລ້ວ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນອະພິພາຍະຕະນະ ໗ລ໗

ອີກປະການໜຶ່ງ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດຍ່ອມບໍ່ເກີດຂຶ້ນແກ່ພິກຂຸ ຍ້ອນຮູ້ແຈ້ງທຳມາຣົມທາງໃຈ ຂໍ້ນັ້ນ ພິກຂຸເພິ່ງຮູ້ວ່າ ອາຍະຕະນະນີ້ເຮົາຄອບງຳໄດ້ແລ້ວ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນອະພິພາຍະຕະນະ

ພິກຂຸທັງຫຼາຍ ອາຍະຕະນະເຫຼົ່ານີ້ ເຮົາຮຽກວ່າ ອະພິພາຍະຕະນະ ໖ ປະການ

**ປະຣິຫານະທຳມະສູດທີ ໓ ຈົບ**

# ໔. ປະມາທະວິຫາຣີສູດ

## ວ່າດ້ວຍພິກຂຸຜູ້ຢູ່ດ້ວຍຄວາມຜະໝາດ

[໙໗] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງພິກຂຸຜູ້ຢູ່ດ້ວຍຄວາມຜະໝາດ ແລະ ພິກຂຸຜູ້ຢູ່ດ້ວຍຄວາມບໍ່ຜະໝາດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈ

ພິກຂຸຜູ້ຢູ່ດ້ວຍຄວາມຜະໝາດ ເປັນແນວໃດ?

ຄື ເມື່ອພິກຂຸບໍ່ສັງລວມຈັກຂຸນຊີຢູ່ ຈິດຍ່ອມຊ່ານໄປໃນຮູບທັງຫຼາຍທີ່ເພິ່ງຮູ້ແຈ້ງທາງຕາ ເມື່ອທ່ານມີຈິດຊ່ານໄປແລ້ວ ປາໂມດ (ຄວາມບັນເທີງໃຈ) ກໍບໍ່ມີ ເມື່ອບໍ່ມີປາໂມດ ປີຕິ (ຄວາມອີ່ມໃຈ) ກໍບໍ່ມີ ເມື່ອບໍ່ມີປີຕິ ປັດສັດທິ (ຄວາມສະງົບກາຍສະງົບໃຈ) ກໍບໍ່ມີ ເມື່ອບໍ່ມີປັດສັດທິ ພິກຂຸນັ້ນ ຍ່ອມຢູ່ລຳບາກ ຈິດຂອງທ່ານຜູ້ຢູ່ລຳບາກຍ່ອມບໍ່ຕັ້ງໝັ້ນ ເມື່ອຈິດບໍ່ຕັ້ງໝັ້ນ ທຳທັງ

ຫຼາຍກໍບໍ່ຜາກົດ ຍ້ອນທຳທັງຫຼາຍບໍ່ຜາກົດ ທ່ານຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມຜະໝາດແທ້ຈິງ ຯລຯ

ເມື່ອພິກຂຸບໍ່ສັງລວມຊິວຫີນຊີຢູ່ ຈິດຍ່ອມຊ່ານໄປໃນຣົດທັງຫຼາຍ ທີ່ເພິ່ງຮູ້ແຈ້ງທາງລີ້ນ ເມື່ອທ່ານມີຈິດຊ່ານໄປແລ້ວ ຯລຯ ທ່ານຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມຜະໝາດແທ້ຈິງ ຯລຯ

ເມື່ອພິກຂຸບໍ່ສັງລວມມະນິນຊີຢູ່ ຈິດຍ່ອມຊ່ານໄປໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ເມື່ອທ່ານມີຈິດຊ່ານໄປແລ້ວ ປາໂມດກໍບໍ່ມີ ເມື່ອບໍ່ມີປາໂມດ ປີຕິກໍບໍ່ມີ ເມື່ອບໍ່ມີປີຕິ ປັດສັດທິກໍບໍ່ມີ ເມື່ອບໍ່ມີປັດສັດທິ ທ່ານຍ່ອມຢູ່ລຳບາກ ຈິດຂອງພິກຂຸຜູ້ຢູ່ລຳບາກຍ່ອມບໍ່ຕັ້ງໝັ້ນ ເມື່ອຈິດບໍ່ຕັ້ງໝັ້ນ ທຳທັງຫຼາຍກໍບໍ່ຜາກົດ ຍ້ອນທຳທັງຫຼາຍບໍ່ຜາກົດ ພິກຂຸນັ້ນຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມຜະໝາດແທ້ຈິງ

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ດ້ວຍຄວາມຜະໝາດເປັນແນວນີ້ແລ

ພິກຂຸຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ເປັນແນວໃດ?

ຄື ເມື່ອພິກຂຸສັງລວມຈັກຂຸນຊີຢູ່ ຈິດຍ່ອມບໍ່ຊ່ານໄປໃນຮູບທັງຫຼາຍທີ່ເພິ່ງຮູ້ແຈ້ງທາງຕາ ເມື່ອທ່ານມີຈິດບໍ່ຊ່ານໄປແລ້ວ ປາໂມດກໍເກີດ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ພິກຂຸຜູ້ມີກາຍສະງົບ ຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ ເມື່ອຈິດຕັ້ງໝັ້ນ ທຳທັງຫຼາຍກໍຜາກົດ ຍ້ອນທຳທັງຫຼາຍຜາກົດ ທ່ານຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ແທ້ຈິງ ຯລຯ

ເມື່ອພິກຂຸສັງລວມຊິວຫີນຊີຢູ່ ຈິດຍ່ອມບໍ່ຊ່ານໄປ ຯລຯ ທ່ານຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ແທ້ຈິງ ຯລຯ

ເມື່ອພິກຂຸສັງລວມມະນິນຊີຢູ່ ຈິດຍ່ອມບໍ່ຊ່ານໄປໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ເມື່ອທ່ານມີຈິດບໍ່ຊ່ານໄປແລ້ວ ປາໂມດກໍເກີດ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອເກີດປີຕິ ກາຍກໍສະງົບ ພິກຂຸຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ ເມື່ອຈິດຕັ້ງໝັ້ນ ທຳທັງຫຼາຍກໍຜາກົດ ຍ້ອນທຳທັງຫຼາຍຜາກົດ ທ່ານຍ່ອມນັບວ່າ ເປັນຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ແທ້ຈິງ

ພິກຂຸທັງຫຼາຍ ພິກຂຸຜູ້ຢູ່ດ້ວຍຄວາມບໍ່ຜະໝາດເປັນແນວນີ້ແລ

**ປະມາທະວິຫາຣີສູດທີ ໔ ຈົບ**

# ໕. ສັງວະຣະສູດວ່າ

## ດ້ວຍຄວາມສັງລວມ

[໙໗] ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມສັງລວມ ແລະບໍ່ສັງລວມແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ຄວາມບໍ່ສັງລວມ ເປັນແນວໃດ?

ຄື ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ຂໍ້ນີ້ ພິກຂຸເພິ່ງຮູ້ວ່າ ເຮົາກຳລັງເສື່ອມຈາກກຸສົນທຳທັງຫຼາຍ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມເສື່ອມ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງຊິວຫາວິນຍານ ฯລฯ ມີຢູ່ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ຂໍ້ນີ້ ພິກຂຸເພິ່ງຮູ້ວ່າ ເຮົາກຳລັງເສື່ອມຈາກກຸສົນທຳທັງຫຼາຍ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມເສື່ອມ

ພິກຂຸທັງຫຼາຍ ຄວາມບໍ່ສັງລວມເປັນແນວນີ້ແລ

ຄວາມສັງລວມ ເປັນແນວໃດ?

ຄື ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ຂໍ້ນີ້ພິກຂຸເພິ່ງຮູ້ວ່າ ເຮົາບໍ່ເສື່ອມຈາກກຸສົນທຳທັງຫຼາຍ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າ ເປັນຄວາມບໍ່ເສື່ອມ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ ມີຢູ່ ฯລฯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່ ຂໍ້ນີ້ພິກຂຸເພິ່ງຮູ້ວ່າ ເຮົາບໍ່ເສື່ອມຈາກກຸສົນທຳທັງຫຼາຍ ນີ້ພຣະຜູ້ມີພຣະພາກເຈົ້າຕັດວ່າເປັນຄວາມບໍ່ເສື່ອມ

ພິກຂຸທັງຫຼາຍ ຄວາມສັງລວມເປັນແນວນີ້ແລ

**ສັງວະຣະສູດທີ ໕ ຈົບ**

# ໙. ສະມາທິສູດ
## ວ່າດ້ວຍສະມາທິ

[໙໙] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນສະມາທິເທີ້ນ ພິກຂຸຜູ້ມີຈິດຕັ້ງໝັ້ນຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ຮູ້ແຈ້ງອັນໃດນໍຕາມຄວາມເປັນຈິງ ຄື

ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸວິນຍານບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸສຳຜັດບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງ ฯลฯ

ຮູ້ແຈ້ງຕາມຄວາມເປັນຈິງວ່າ ມະໂນບໍ່ທ່ຽງ ฯลฯ ທຳມາຣົມ ฯลฯ ມະໂນວິນຍານ ฯลฯ ມະໂນສຳຜັດ ฯลฯ ຮູ້ແຈ້ງຕາມຄວາມເປັນຈິງວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍບໍ່ທ່ຽງ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນສະມາທິເທີ້ນ ພິກຂຸຜູ້ມີຈິດຕັ້ງໝັ້ນຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

**ສະມາທິສູດທີ ໙ ຈົບ**

# ໑. ປະຕິສັນລານະສູດ
## ວ່າດ້ວຍການຫຼີບຫຼີກ

[໑໐໐] ພິກຂຸທັງຫຼາຍ ທ່ານທັງຫຼາຍຫຼີບຫຼີກແລ້ວ ຈົ່ງປະກອບຄວາມພຽນເທີ້ນ ພິກຂຸຜູ້ຫຼີບຫຼີກແລ້ວຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ຮູ້ແຈ້ງອັນໃດນໍຕາມຄວາມເປັນຈິງ ຄື

ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຮູບບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸວິນຍານບໍ່ທ່ຽງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ຈັກຂຸສຳຜັດບໍ່ທ່ຽງ ฯลฯ ຮູ້ແຈ້ງຕາມຄວາມເປັນຈິງວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍບໍ່ທ່ຽງ

ພິກຂຸທັງຫຼາຍ ທ່ານທັງຫຼາຍຫຼີບຫຼີກແລ້ວ ຈົ່ງປະກອບຄວາມພຽນເທີ້ນ ພິກຂຸຜູ້ຫຼີບຫຼີກແລ້ວຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

**ປະຕິສັນລານະສູດທີ ໑ ຈົບ**

# ໗. ປະຖົມນະຕຸມຫາກະສູດ

## ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ ສູດທີ ໑

[໑໐໑] ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ກໍອັນໃດນໍ? ຊື່ວ່າ ສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

ຈັກຂຸ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸນັ້ນ ຈັກຂຸທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຮູບ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຈັກຂຸວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸວິນຍານນັ້ນ ຈັກຂຸວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຈັກຂຸສຳຜັດ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸສຳຜັດນັ້ນ ຈັກຂຸສຳຜັດທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງລະຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈນັ້ນ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຯລຯ

ຊິວຫາ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຊິວຫານັ້ນ ຊິວຫາທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຣົດ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຣົດນັ້ນ ຣົດທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຊິວຫາວິນຍານບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຊິວຫາວິນຍານນັ້ນ

ຊິວຫາວິນຍານ ທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຊິວຫາສຳຜັດ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຊິວຫາສຳຜັດນັ້ນ ຊິວຫາສຳຜັດທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈກໍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈນັ້ນ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ໆລໆ

ມະໂນບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະມະໂນນັ້ນ ມະໂນທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ທຳມາຣົມ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະທຳມາຣົມນັ້ນ ທຳມາຣົມທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ມະໂນວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະມະໂນວິນຍານນັ້ນ ມະໂນວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ມະໂນສຳຜັດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະມະໂນສຳຜັດນັ້ນ ມະໂນສຳຜັດທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ປຽບຄື ຄົນເພິ່ງນຳຫຍ້າ ໄມ້ ງ່າໄມ້ ແລະໃບໄມ້ທີ່ມີຢູ່ໃນເຊຕະວັນນີ້ໄປເຜົາ ຫຼື ຈັດການໄປຕາມເລື້ອງ ທ່ານທັງຫຼາຍຈະເພິ່ງມີຄວາມຄິດແນວນີ້ແດ່ບໍວ່າ ຄົນນຳເຮົາທັງຫຼາຍໄປເຜົາ ຫຼື ຈັດການໄປຕາມເລື້ອງ

ບໍ່ຄິດ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນຫຍ້າເປັນຕົ້ນນັ້ນບໍ່ແມ່ນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາຂອງພວກຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຈັກຂຸບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸນັ້ນ ຈັກຂຸທີ່ທ່ານທັງຫຼາຍລະໄດ້ແລ້ວຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ฯລฯ ຈັກຂຸວິນຍານ ฯລฯ ຈັກຂຸສໍາຜັດ ฯລฯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈ ກໍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈນັ້ນ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສໍາຜັດເປັນປັດໄຈທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

**ປະຖົມນະຕຸມຫາກະສູດທີ ໗ ຈົບ**

# ໘. ທຸຕິຍະນະຕຸມຫາກະສູດ

## ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ ສູດທີ ໘

[໑໐໘] ພິກຂຸທັງຫຼາຍ ແມ່ນສິ່ງໃດທີ່ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ກໍອັນໃດນໍຊື່ວ່າ ສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ

ຈັກຂຸ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸນັ້ນ ຈັກຂຸທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຮູບ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຈັກຂຸວິນຍານ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸວິນຍານນັ້ນ ຈັກຂຸວິນຍານທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ຈັກຂຸສໍາຜັດ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸສໍາຜັດນັ້ນ ຈັກຂຸສໍາຜັດທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ฯລฯ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈນັ້ນ ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ພິກຂຸທັງຫຼາຍ ແມ່ນສິ່ງໃດທີ່ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

**ທຸຕິຍະນະຕຸມຫາກະສູດທີ ໙ ຈົບ**

# ໑໐. ອຸທະກະສູດ

## ວ່າດ້ວຍອຸທະກະດາບົດ

[໑໐໓] ພິກຂຸທັງຫຼາຍ ໄດ້ຂ່າວວ່າ ອຸທະກະດາບົດ ຣາມະບຸດກ່າວວາຈາແນວນີ້ວ່າ ເຮົາເປັນຜູ້ເຖິງເວທະແນ່ນອນ ເຮົາເປັນຜູ້ຊະນະວັດຕະທັງປວງແນ່ນອນ ຣາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ ເຮົາຂຸດໄດ້ແລ້ວແນ່ນອນ ອຸທະກະດາບົດ ຣາມະບຸດ ຍັງເປັນຜູ້ບໍ່ເຖິງເວທະ ແຕ່ກ່າວວ່າ ເຮົາເປັນຜູ້ເຖິງເວທະ ຍັງເປັນຜູ້ບໍ່ຊະນະວັດຕະທັງປວງ ແຕ່ກ່າວວ່າ ເຮົາຊະນະວັດຕະທັງປວງ ຍັງຂຸດຣາກເຫງົ້າແຫ່ງທຸກບໍ່ໄດ້ ແຕ່ກ່າວວ່າ ເຮົາຂຸດຣາກເຫງົ້າແຫ່ງທຸກໄດ້ແລ້ວ

ພິກຂຸໃນທຳວິໄນນີ້ ເມື່ອຈະກ່າວເລື້ອງນັ້ນໃຫ້ຖືກຕ້ອງ ຄວນກ່າວວ່າ ເຮົາເປັນຜູ້ເຖິງເວທະແນ່ນອນ ເຮົາເປັນຜູ້ຊະນະວັດຕະທັງປວງແນ່ນອນ ຣາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ເຮົາຂຸດໄດ້ແລ້ວແນ່ນອນ

ພິກຂຸເປັນຜູ້ເຖິງເວທະ ເປັນແນວໃດ?

ຄື ພິກຂຸຍ່ອມຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ

ພິກຂຸ ເປັນຜູ້ເຖິງເວທະເປັນແນວນີ້ແລ

ພິກຂຸ ເປັນຜູ້ຊະນະວັດຕະທັງປວງ ເປັນແນວໃດ?

ຄື ພິກຂຸຮູ້ແຈ້ງເຖິງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງແລ້ວ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ

ພິກຂຸ ເປັນຜູ້ຊະນະວັດຕະທັງປວງເປັນແນວນີ້ແລ

ຮາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ ພິກຂຸຂຸດໄດ້ແລ້ວ ເປັນແນວໃດ?

ຄື ຄຳວ່າ ຄັນຖະ ນີ້ ເປັນຊື່ຂອງກາຍນີ້ ເຊິ່ງປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນໄວຍ້ອນເຂົ້າສຸກແລະເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນຕ້ອງແຕກກະຈັດກະຈາຍໄປເປັນທຳມະດາ

ຄຳວ່າ ຄັນຖມູນ ນີ້ເປັນຊື່ຂອງຕັນຫາ ພິກຂຸລະຕັນຫາໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ຮາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ ພິກຂຸຂຸດໄດ້ແລ້ວ ເປັນແນວນີ້ແລ

ໄດ້ຂ່າວວ່າ ອຸທະກະດາບົດ ຣາມະບຸດກ່າວວາຈາແນວນີ້ວ່າ ເຮົາເປັນຜູ້ເຖິງເວທະແນ່ນອນ ເຮົາເປັນຜູ້ຊະນະວັດຕະທັງປວງແນ່ນອນ ຮາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ ເຮົາຂຸດໄດ້ແລ້ວແນ່ນອນ ອຸທະກະດາບົດ ຣາມະບຸດຍັງເປັນຜູ້ບໍ່ເຖິງເວທະ ແຕ່ກ່າວວ່າ ເຮົາເປັນຜູ້ເຖິງເວທະ ຍັງບໍ່ຊະນະວັດຕະທັງປວງ ແຕ່ກ່າວວ່າ ເຮົາຊະນະວັດຕະທັງປວງ ຍັງຂຸດຮາກເຫງົ້າແຫ່ງທຸກບໍ່ໄດ້ ແຕ່ກ່າວວ່າ ເຮົາຂຸດຮາກເຫງົ້າແຫ່ງທຸກໄດ້ແລ້ວ

ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ ເມື່ອຈະກ່າວເລື້ອງນັ້ນໃຫ້ຖືກຕ້ອງ ຄວນກ່າວວ່າ ເຮົາເປັນຜູ້ເຖິງເວທະແນ່ນອນ ເຮົາຊະນະວັດຕະທັງປວງແນ່ນອນ ຮາກເຫງົ້າແຫ່ງທຸກທີ່ໃຜ ໆ ຂຸດບໍ່ໄດ້ ເຮົາຂຸດໄດ້ແລ້ວແນ່ນອນ

**ອຸທະກະສູດທີ ໑໐ ຈົບ**

**ສະລະວັກທີ ໕ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

| | |
|---|---|
| ໑. ອະທັນຕະອະຄຸດຕະສູດ | ໒. ມາລຸກະຍະປຸດຕະສູດ |
| ໓. ປະຣິຫານະທຳມະສູດ | ໔. ປະມາທະວິຫາຣີສູດ |
| ໕. ສັງວະຣະສູດ | ໖. ສະມາທິສູດ |
| ໗. ປະຕິສັນລານະສູດ | ໘. ປະຖົມມະຕຸມຫາກະສູດ |
| ໙. ທຸຕິຍະນະຕຸມຫາກະສູດ | ໑໐. ອຸທະກະສູດ |

**ທຸຕິຍະປັນນາດໃນສະລາຍະຕະນະວັກ ຈົບບໍລິບູນ**

## ລວມວັກທີ່ມີໃນທຸຕິຍະປັນນາດນີ້ ຄື

໑. ອະວິດຊາວັກ

໒. ຄິລານະວັກ

໓. ມິຄະຊາລະວັກ

໔. ສັນນະວັກ

໕. ສະລະວັກ

**ທຸຕິຍະປັນນາດ ຈົບ**

**໑໐໐ ສູດທຳອິດຈົບ**

# ໓. ຕະຕິຍະປັນນາດ

# ໑. ໂຍຄັກເຂມິວັກ

## ໝວດວ່າດ້ວຍທຳທີ່ເປັນເຫດໃຫ້ບຸກຄົນມີຄວາມກະເສມຈາກໂຍຄະ

# ໑. ໂຍຄັກເຂມິສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ບຸກຄົນມີຄວາມກະເສມຈາກໂຍຄະ

[໑໐໔] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍທີ່ເປັນເຫດໃຫ້ບຸກຄົນມີຄວາມກະເສມຈາກໂຍຄະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳບັນລະຍາຍທີ່ເປັນເຫດໃຫ້ບຸກຄົນມີຄວາມກະເສມຈາກໂຍຄະ ເປັນແນວໃດ?

ຄື ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຕະຖາຄົດລະຮູບເຫຼົ່ານັ້ນໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານ ທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດໄດ້ບອກຄວາມພຽນທີ່ຄວນປະກອບເພື່ອລະຮູບເຫຼົ່ານັ້ນ ຍ້ອນເຫດນັ້ນບັນດິດຈຶ່ງກ່າວວ່າ ຕະຖາຄົດເປັນຜູ້ມີຄວາມກະເສມຈາກໂຍຄະ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຕະຖາຄົດລະທຳມາຣົມນັ້ນໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດໄດ້ບອກຄວາມພຽນທີ່ຄວນປະກອບເພື່ອລະທຳມາຣົມນັ້ນ ຍ້ອນເຫດນັ້ນ ບັນດິດຈຶ່ງກ່າວວ່າ ຕະຖາຄົດເປັນຜູ້ມີຄວາມກະເສມຈາກໂຍຄະ

ພິກຂຸທັງຫຼາຍ ທຳບັນລະຍາຍທີ່ເປັນເຫດໃຫ້ບຸກຄົນ ມີຄວາມກະເສມຈາກໂຍຄະເປັນແນວນີ້ແລ

**ໂຍຄັກເຂມິສູດທີ ໑ ຈົບ**

# ๘. ອຸປາທາຍະສູດ

## ວ່າດ້ວຍສຸກທຸກອາໄສປັດໄຈເກີດຂຶ້ນ

[๑๐๘] ພິກຂຸທັງຫຼາຍ ເມື່ອມີອັນໃດ? ຍ້ອນອາໄສອັນໃດ? ສຸກ ແລະທຸກພາຍໃນຈຶ່ງເກີດຂຶ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯลฯ

ເມື່ອມີ ຈັກຂຸ ຍ້ອນອາໄສຈັກຂຸ ສຸກແລະທຸກພາຍໃນຈຶ່ງເກີດຂຶ້ນ ฯลฯ
ເມື່ອມີ ຊິວຫາ ຍ້ອນອາໄສຊິວຫາ ສຸກແລະທຸກພາຍໃນຈຶ່ງເກີດຂຶ້ນ ฯลฯ
ເມື່ອມີ ມະໂນ ຍ້ອນອາໄສມະໂນ ສຸກແລະທຸກພາຍໃນຈຶ່ງເກີດຂຶ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ສຸກແລະທຸກພາຍໃນເພິ່ງເກີດຂຶ້ນຍ້ອນບໍ່ອາໄສສິ່ງນັ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ ฯลฯ

ຊິວຫາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ສຸກແລະທຸກພາຍໃນເພິ່ງເກີດຂຶ້ນຍ້ອນບໍ່ອາໄສສິ່ງນັ້ນໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ ฯลฯ

ມະໂນທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ສຸກ ແລະທຸກພາຍໃນເພິ່ງເກີດຂຶ້ນ ຍ້ອນບໍ່ອາໄສສິ່ງນັ້ນໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ແມ່ນໃນຊິວຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບວນີ້ອີກຕໍ່ໄປ

**ອຸປາທາຍະສູດທີ ໘ ຈົບ**

# ໙. ທຸກຂະສະມຸທະຍະສູດ

## ວ່າດ້ວຍຄວາມເກີດແຫ່ງທຸກ

[໑໐໙] ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດ ແລະຄວາມດັບແຫ່ງທຸກ ທ່ານທັງຫຼາຍຈົ່ງຟັງ

ຄວາມເກີດແຫ່ງທຸກ ເປັນແບວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈຕັນຫາຈຶ່ງເກີດ

ຄວາມເກີດແຫ່ງທຸກເປັນແບວນີ້ແລ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈຕັນຫາຈຶ່ງເກີດ

ຄວາມເກີດແຫ່ງທຸກເປັນແບວນີ້ແລ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ

ຄວາມເກີດແຫ່ງທຸກເປັນແບວນີ້ແລ

ຄວາມດັບແຫ່ງທຸກ ເປັນແບວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນເອງດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດ (ຄວາມເກີດ) ຈຶ່ງດັບ ຍ້ອນຊາດດັບ ຊະຣາ (ຄວາມແກ່) ມໍລະນະ (ຄວາມຕາຍ) ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະ ອຸປາຍາດ (ຄວາມຄັບແຄ້ນໃຈ) ຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້ຄວາມດັບແຫ່ງທຸກເປັນແນວນີ້ແລ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການ ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນເອງດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ

ຄວາມດັບແຫ່ງທຸກເປັນແນວນີ້ແລ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນເອງດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຄວາມດັບແຫ່ງທຸກເປັນແນວນີ້ແລ

**ທຸກຂະສະມຸທະຍະສູດທີ ໓ ຈົບ**

# ໔. ໂລກະສະມຸທະຍະສູດ

## ວ່າດ້ວຍຄວາມເກີດແຫ່ງໂລກ

[໑໐໗] ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດ ແລະຄວາມດັບແຫ່ງໂລກ ທ່ານທັງຫຼາຍຈົ່ງຟັງ

ຄວາມເກີດແຫ່ງໂລກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການ

ເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງເກີດ ຍ້ອນພົບເປັນປັດໄຈ ຊາດຈຶ່ງເກີດ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງເກີດ

ຄວາມເກີດແຫ່ງໂລກເປັນແນວນີ້ແລ ຯລຯ

ຍ້ອນອາໄສຊິວຫາ ແລະຣົດ ຊິວຫາວິນຍານຈຶ່ງເກີດ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງເກີດ ຍ້ອນພົບເປັນປັດໄຈ ຊາດຈຶ່ງເກີດ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດ

ຄວາມເກີດແຫ່ງໂລກເປັນແນວນີ້ແລ

ຄວາມດັບແຫ່ງໂລກ ເປັນແນວໃດ?

ຄື ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນເອງດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້ ຄວາມດັບແຫ່ງໂລກເປັນແນວນີ້ແລ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫານັ້ນເອງດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ຄວາມດັບແຫ່ງໂລກເປັນແນວນີ້ແລ

**ໂລກະສະມຸທະຍະສູດທີ ໔ ຈົບ**

# ໔. ເສີຍໂຍຫະມັດສະມີສູດ

## ວ່າດ້ວຍຄວາມຖືໂຕວ່າເຮົາເລີດກວ່າເຂົາ

[໑໐໘] ພິກຂຸທັງຫຼາຍ ເມື່ອມີອັນໃດ? ຍ້ອນຍຶດໝັ້ນອັນໃດ? ຍ້ອນຖືໝັ້ນອັນໃດ ຄວາມຖືໂຕວ່າ ເຮົາເລີດກວ່າເຂົາ ຄວາມຖືໂຕວ່າ ເຮົາສະເໝີເຂົາ ຫຼື ຄວາມຖືໂຕວ່າ ເຮົາຕ່ຳຕ້ອຍກວ່າເຂົາຈຶ່ງມີ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເມື່ອມີຈັກຂຸ ຍ້ອນຍຶດໝັ້ນຈັກຂຸ ຍ້ອນຖືໝັ້ນຈັກຂຸ ຄວາມຖືໂຕວ່າ ເຮົາເລີດກວ່າເຂົາ ຄວາມຖືໂຕວ່າ ເຮົາສະເໝີເຂົາ ຫຼື ຄວາມຖືໂຕວ່າ ເຮົາຕ່ຳຕ້ອຍກວ່າເຂົາຈຶ່ງມີ ຯລຯ

ເມື່ອມີຊິວຫາ ຯລຯ ເມື່ອມີມະໂນ ຍ້ອນຍຶດໝັ້ນມະໂນ ຍ້ອນຖືໝັ້ນມະໂນ ຄວາມຖືໂຕວ່າ ເຮົາເລີດກວ່າເຂົາ ຄວາມຖືໂຕວ່າ ເຮົາສະເໝີເຂົາ ຫຼື ຄວາມຖືໂຕວ່າ ເຮົາຕ່ຳຕ້ອຍກວ່າເຂົາ ຈຶ່ງມີ

ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງບໍບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຍຶດໝັ້ນສິ່ງນັ້ນ ຄວາມຖືໂຕວ່າ ເຮົາເລີດກວ່າເຂົາ ຄວາມຖືໂຕວ່າ ເຮົາສະເໝີເຂົາ ຫຼືຄວາມຖືໂຕວ່າ ເຮົາຕ່ຳຕ້ອຍກວ່າເຂົາຈະເພິ່ງມີໄດ້ບໍ?
ບໍ່ໄດ້ ຂ້ານ້ອຍ ຯລຯ

ຊິວຫາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ມະໂນທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຍ້ອນບໍ່ຍຶດໝັ້ນສິ່ງນັ້ນ ຄວາມຖື

ໂຕວ່າ ເຮົາເລີດກວ່າເຂົາ ຄວາມຖືໂຕວ່າ ເຮົາສະເໝີເຂົາ ຫຼື ຄວາມຖືໂຕວ່າ ເຮົາຕໍ່າຕ້ອຍກວ່າເຂົາ ຈະເພິ່ງມີໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ເສີຍໂຍທະມັດສະມິສູດທີ ៥ ຈົບ**

# ៦. ສັນໂຍຊະນິຍະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ສັງໂຍດ

[໑໐໙] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ສັງໂຍດແລະສັງໂຍດ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ສັງໂຍດ ເປັນແນວໃດ? ແລະສັງໂຍດ ເປັນແນວໃດ?

ຄື ຈັກຂຸຊື່ວ່າທຳທີ່ເກື້ອກູນແກ່ສັງໂຍດ ສັນທະຣາຄະໃນຈັກຂຸນັ້ນຊື່ວ່າສັງໂຍດ ຯລຯ ຊິວຫາຊື່ວ່າທຳທີ່ເກື້ອກູນແກ່ສັງໂຍດ ຯລຯ ມະໂນຊື່ວ່າ ທຳທີ່ເກື້ອກູນແກ່ສັງໂຍດ ສັນທະຣາຄະໃນມະໂນນັ້ນຊື່ວ່າ ສັງໂຍດ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ສັງໂຍດ
ນີ້ເຮົາຮຽກວ່າ ສັງໂຍດ

**ສັນໂຍຊະນິຍະສູດທີ ៦ ຈົບ**

# ໗. ອຸປາທານິຍະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ອຸປາທານ

[໑໑໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ອຸປາທານແລະອຸປາທານ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ອຸປາທານ ເປັນແນວໃດ? ແລະອຸປາທານ ເປັນແນວໃດ?

ຄື ຈັກຂຸຊື່ວ່າ ທຳທີ່ເກື້ອກູນແກ່ອຸປາທານ ສັນທະຣາຄະໃນຈັກຂຸນັ້ນຊື່ວ່າ ອຸປາທານ ฯລฯ ຊິວຫາຊື່ວ່າ ທຳທີ່ເກື້ອກູນແກ່ອຸປາທານ ฯລฯ ມະໂນຊື່ວ່າ ທຳທີ່ເກື້ອກູນແກ່ອຸປາທານ ສັນທະຣາຄະໃນມະໂນນັ້ນຊື່ວ່າ ອຸປາທານ

ພິກຂຸທັງຫຼາຍ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ອຸປາທານ

ນີ້ເຮົາຮຽກວ່າ ອຸປາທານ

**ອຸປາທານິຍະສູດທີ ໗ ຈົບ**

# ໘. ອັດຊັດຕິກາຍະຕະນະປະຣິຊານນະສູດ

## ວ່າດ້ວຍການກຳນົດຮູ້ອາຍະຕະນະພາຍໃນ

[໑໑໗] ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະຈັກຂຸ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ฯລฯ ໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະມະໂນ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ສ່ວນບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະຈັກຂຸໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ฯລฯ ຊິວຫາ ฯລฯ ກາຍ ฯລฯ ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະມະໂນໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

**ອັດຊັດຕິກາຍະຕະນະປະຣິຊານນະສູດທີ ໘ ຈົບ**

# ໙. ພາຫິຣາຍະຕະນະປະຣິຊານນະສູດ

## ວ່າດ້ວຍການກຳນົດຮູ້ອາຍະຕະນະພາຍນອກ

[໑໑໘] ພິກຂຸທັງຫຼາຍ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະຮູບ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ ฯລฯ ສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ບຸກຄົນເມື່ອຍັງບໍ່ຮູ້ຍິ່ງ ບໍ່ກຳນົດຮູ້ ບໍ່ຄາຍກຳໜັດ ບໍ່ລະທຳມາຣົມ ເປັນຜູ້ບໍ່ຄວນເພື່ອຄວາມສິ້ນທຸກ

ພິກຂຸທັງຫຼາຍ ສ່ວນບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະຮູບໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ ຯລຯ ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ບຸກຄົນເມື່ອຮູ້ຍິ່ງ ກຳນົດຮູ້ ຄາຍກຳໜັດ ລະທຳມາຣົມໄດ້ ເປັນຜູ້ຄວນເພື່ອຄວາມສິ້ນທຸກ

**ພາຫິຣາຍະຕະນະປະຣິຊານນະສູດທີ ໙ ຈົບ**

# ໑໐. ອຸປັດສຸຕິສູດ

## ວ່າດ້ວຍການຈອບຟັງທຳ

[໑໑໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ພຣະຕຳໜັກດິນຈີ່ໃນໝູ່ບ້ານ ຍາຕິກະ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫຼີບຫຼີກຢູ່ໃນບ່ອນສະງັດໄດ້ຕັດທຳບັນລະຍາຍນີ້ ວ່າ

ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງເກີດ ຍ້ອນພົບເປັນປັດໄຈ ຊາດຈຶ່ງເກີດ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດ ຄວາມເກີດແຫ່ງກອງທຸກ ທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຯລຯ

ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງເກີດ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງເກີດ ຍ້ອນພົບເປັນປັດໄຈ ຊາດຈຶ່ງເກີດ ຍ້ອນຊາດເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດຈຶ່ງເກີດ ຄວາມເກີດແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້

ຍ້ອນອາໄສຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ

ຍ້ອນຕັນຫານັ້ນແລ ດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຍ້ອນພົບດັບ ຊາດຈຶ່ງດັບ ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈຶ່ງດັບ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍ

ປະການຢ່າງນີ້ ຯລຯ

ຍ້ອນອາໄສຊິວຫາແລະຣົດ ຊິວຫາວິນຍານຈຶ່ງເກີດ ຯລຯ ຍ້ອນອາໄສມະໂນແລະທຳມາຣົມ ມະໂນວິນຍານຈຶ່ງເກີດ ຄວາມພົບກັນແຫ່ງທຳ ໓ ປະການເປັນຜັດສະ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງເກີດ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງເກີດ

ຍ້ອນຕັນຫານັ້ນແລ ດັບບໍ່ເຫຼືອດ້ວຍວິຣາຄະ ອຸປາທານຈຶ່ງດັບ ຍ້ອນອຸປາທານດັບ ພົບຈຶ່ງດັບ ຯລຯ ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້

ສະໄໝນັ້ນ ພິກຂຸອົງໜຶ່ງຢືນຈອບຟັງພຣະຜູ້ມີພຣະພາກເຈົ້າຢູ່ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນພິກຂຸນັ້ນ ຜູ້ຢືນຈອບຟັງຢູ່ ໄດ້ຕັດຖາມພິກຂຸນັ້ນດັ່ງນີ້ວ່າ ພິກຂຸ ທ່ານໄດ້ຟັງທຳບັນລະຍາຍນີ້ບໍ?

ພິກຂຸນັ້ນຂາບທູນວ່າ ໄດ້ຟັງ ຂ້ານ້ອຍ

ພິກຂຸ ທ່ານຈົ່ງສຶກສາທຳບັນລະຍາຍນີ້ ທ່ານຈົ່ງຮ່ຳຮຽນທຳບັນລະຍາຍນີ້ ທ່ານຈົ່ງຊົງຈຳທຳບັນລະຍາຍນີ້ໄວ້ເທີ້ນ ຍ້ອນວ່າທຳບັນລະຍາຍນີ້ ປະກອບດ້ວຍປະໂຫຍດ ເປັນເບື້ອງຕົ້ນແຫ່ງພົມມະຈັນ

**ອຸປັດສຸຕິສູດທີ ໑໐ ຈົບ**

**ໂຍຄັກເຂມິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໘. ໂລກກາມມະຄຸນວັກ

## ໝວດວ່າດ້ວຍໂລກແລະກາມມະຄຸນ

## ໑. ປະຖົມມາຣະປາສະສູດ

### ວ່າດ້ວຍບ້ວງມານ ສູດທີ ໑

[໑໑໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອົງທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຍຶດຕິດ ຮູບນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ໄປສູ່ທີ່ຢູ່ຂອງມານ ໄປສູ່ອຳນາດຂອງມານ ຖືກບ້ວງມານຄ້ອງໄວ້ ຖືກເຄື່ອງມັດຂອງມານມັດໄວ້ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຍຶດຕິດທຳມາຣົມນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ໄປສູ່ທີ່ຢູ່ຂອງມານ ໄປສູ່ອຳນາດຂອງມານ ຖືກບ້ວງມານຄ້ອງໄວ້ ຖືກເຄື່ອງມັດຂອງມານມັດໄວ້ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ບໍ່ໄປສູ່ທີ່ຢູ່ຂອງມານ ບໍ່ໄປສູ່ອຳນາດຂອງມານ ບໍ່ຖືກບ້ວງມານຄ້ອງໄວ້ ພົ້ນຈາກເຄື່ອງມັດຂອງມານ ບໍ່ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຣົດນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ບໍ່ໄປສູ່ທີ່ຢູ່ຂອງມານ ບໍ່ໄປສູ່ອຳນາດຂອງມານ ບໍ່ຖືກບ້ວງມານຄ້ອງໄວ້ ພົ້ນຈາກເຄື່ອງມັດຂອງມານ ບໍ່ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ ฯລฯ

ພິກຂຸທັງຫຼາຍ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ບໍ່ໄປສູ່ທີ່ຢູ່ຂອງມານ ບໍ່ໄປສູ່ອຳນາດຂອງມານ ບໍ່ຖືກບ້ວງມານ

ຄ້ອງໄວ້ ພົ້ນຈາກເຄື່ອງມັດຂອງມານ ບໍ່ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ

**ປະຖົມມາຣະປາສະສູດທີ ໑ ຈົບ**

# ໘. ທຸຕິຍະມາຣະປາສະສູດ

## ວ່າດ້ວຍບ້ວງມານ ສູດທີ ໘

[໑໑໕] ພິກຂຸທັງຫຼາຍອົງທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຍຶດຕິດຮູບນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ພົວພັນຢູ່ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ໄປສູ່ທີ່ຢູ່ຂອງມານ ໄປສູ່ອຳນາດຂອງມານ ຯລຯ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸເພີດເພີນ ເຊີຍຊົມ ຍຶດຕິດທຳມາຣົມນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ພົວພັນຢູ່ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ໄປສູ່ທີ່ຢູ່ຂອງມານ ໄປສູ່ອຳນາດຂອງມານ ຯລຯ ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ

ພິກຂຸທັງຫຼາຍ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດຮູບນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ພົ້ນແລ້ວຈາກຮູບທີ່ເພິ່ງຮູ້ແຈ້ງທາງຕາ ບໍ່ໄປສູ່ທີ່ຢູ່ຂອງມານ ບໍ່ໄປສູ່ອຳນາດຂອງມານ ຯລຯ ບໍ່ຖືກມານໃຈບາບເຮັດໄດ້ຕາມໃຈປາຖະໜາ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ພິກຂຸທັງຫຼາຍ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນຢູ່ ພິກຂຸນີ້ເຮົາກ່າວວ່າ ພົ້ນແລ້ວຈາກທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ບໍ່ໄປສູ່ທີ່ຢູ່ຂອງມານ ບໍ່ໄປສູ່ອຳນາດຂອງມານ ຯລຯ ບໍ່ຖືກມານໃຈບາບເຮັດໄດ້ຕາມ ໃຈປາຖະໜາ

**ທຸຕິຍະມາຣະປາສະສູດທີ ໘ ຈົບ**

# ៦. ໂລກັນຕະຄະມະນະສູດ

## ວ່າດ້ວຍການເຖິງບ່ອນສຸດແຫ່ງໂລກ

[໑໑៦] ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກ໌ແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ເມື່ອຕັດດັ່ງນີ້ແລ້ວກໍສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພິກຂຸເຫຼົ່ານັ້ນຈຶ່ງໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກ ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນແລ້ວແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດ ສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ

ເມື່ອແລ້ວພິກຂຸເຫຼົ່ານັ້ນ ຈຶ່ງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທິງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນວ່າ

ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກ ບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພວກຂ້ານ້ອຍຈຶ່ງໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງ

ຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຜູ້ມີອາຍຸ ພວກຂ້ານ້ອຍໄດ້ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ແລພຣະສາດສະດາຊົງສັນເສີນແລ້ວ ແລະ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ຂໍທ່ານອານົນຈົ່ງຈຳແນກເທີ້ນ

ທ່ານພຣະອານົນກ່າວວ່າ ຜູ້ມີອາຍຸທັງຫຼາຍ ເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າທ່ານຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ ກັບແນມຜ່ານພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສາ

ສຳຄັນເນື້ອຄວາມນີ້ວ່າ ຄວນຖາມຂ້ານ້ອຍ ປຽບຄື ບຸຣຸດຜູ້ຕ້ອງການແກ່ນໄມ້ ສະແຫວງຫາແກ່ນໄມ້ ທ່ຽວສະແຫວງຫາແກ່ນໄມ້ຢູ່ ເມື່ອຕົ້ນໄມ້ໃຫຍ່ມີແກ່ນມີຢູ່ ກໍແນມຂ້າມຮາກແລະລຳຕົ້ນໄປເສຍ ສຳຄັນງ່າແລະໃບວ່າເປັນແກ່ນໄມ້ທີ່ຕົນສະແຫວງຫາ ຜູ້ມີອາຍຸທັງຫຼາຍ ແທ້ຈິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນຜູ້ປະເສີດຕັດບອກໄດ້ ຊົງໃຫ້ເປັນໄປໄດ້ ຊົງສະແດງປະໂຫຍດ ປະທານອະມະຕະທຳ ເປັນເຈົ້າຂອງທຳເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານີ້ແລເປັນເວລາສົມຄວນທີ່ທ່ານທັງຫຼາຍ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ທ່ານທັງຫຼາຍ

ພິກຂຸເຫຼົ່ານັ້ນ ຮຽນວ່າ ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນຜູ້ປະເສີດ ຕັດບອກໄດ້ ຊົງໃຫ້ເປັນໄປໄດ້ ຊົງສະແດງປະໂຫຍດ ປະທານອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານີ້ແລ ເປັນເວລາສົມຄວນທີ່ພວກຂ້ານ້ອຍເພິ່ງເຂົ້າ ໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ແລະ ຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ພວກຂ້ານ້ອຍຢ່າງແນ່ນອນ ທ່ານອານົນເອງພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ຖ້າທ່ານອານົນບໍ່ມີຄວາມໜັກໃຈແລ້ວ ຂໍຈົ່ງຈຳແນກເທີ້ນ

ທ່ານພຣະອານົນກ່າວວ່າ ຜູ້ມີອາຍຸທັງຫຼາຍ ຖ້າຈັ່ງຊັ້ນ ຂໍທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງທ່ານທັງຫຼາຍ ຊົງສະແດງອຸດເທດໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍ ຍ່ອມຮູ້ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ຜູ້ມີອາຍຸທັງຫຼາຍບຸກຄົນມີຄວາມໝາຍຮູ້ ແລະກຳນົດໝາຍໂລກວ່າເປັນໂລກດ້ວຍທຳໃດ? ນີ້ຮຽກວ່າ ໂລກໃນອະຣິຍະວິໄນ

ບຸກຄົນມີຄວາມໝາຍຮູ້ ແລະກຳນົດໝາຍໂລກວ່າເປັນໂລກດ້ວຍທຳອັນໃດນໍ?

ຄື ບຸກຄົນມີຄວາມໝາຍຮູ້ ແລະ ກຳນົດໝາຍໂລກວ່າເປັນໂລກດ້ວຍຈັກຂຸ ຯລຯ ດ້ວຍໂສຕະ ຯລຯ ດ້ວຍຄານະ ບຸກຄົນມີຄວາມໝາຍຮູ້ ແລະກຳນົດໝາຍໂລກວ່າເປັນໂລກດ້ວຍຊິວຫາ ຯລຯ ດ້ວຍກາຍ ບຸກຄົນມີຄວາມໝາຍຮູ້ແລະກຳນົດໝາຍໃນໂລກວ່າເປັນໂລກດ້ວຍມະໂນ ຜູ້ມີອາຍຸທັງຫຼາຍ ເທດທີ່ບຸກຄົນມີຄວາມໝາຍຮູ້ ແລະກຳນົດໝາຍໂລກວ່າເປັນໂລກ ນີ້ຮຽກວ່າ ໂລກໃນອະຣິຍະວິໄນ

ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງທ່ານທັງຫຼາຍຊົງສະແດງອຸດເທດໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າ ບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍ ຍ່ອມຮູ້ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ຢ່າງນີ້ ກໍທ່ານທັງຫຼາຍ ເມື່ອຫວັງຢູ່ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ເທີ້ນ ຂໍທ່ານທັງຫຼາຍ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບແກ່ທ່ານທັງຫຼາຍເທີ້ນ

ພິກຂຸເຫຼົ່ານັ້ນ ກ່າວຮັບຄຳທ່ານພຣະອານົນແລ້ວ ລຸກຂຶ້ນຈາກອາສະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຂອງຂ້າພຣະອົງທັງຫຼາຍ ຊົງສະແດງອຸດເທດໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງ

ເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດໄວ້ໂດຍຫຍໍ້ ວ່າ

ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ບ່ອນສຸດແຫ່ງໂລກບຸກຄົນເພິ່ງຮູ້ ເພິ່ງເຫັນ ເພິ່ງເຖິງດ້ວຍການໄປ ແຕ່ເຮົາກໍບໍ່ກ່າວວ່າບຸກຄົນຍັງບໍ່ເຖິງບ່ອນສຸດແຫ່ງໂລກແລ້ວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍ? ຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼົ່ານັ້ນໄດ້ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ

ເມື່ອແລ້ວ ຂ້າພຣະອົງທັງຫຼາຍ ຈຶ່ງເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມດັ່ງນີ້ ທ່ານອານົນໄດ້ຈຳແນກເນື້ອຄວາມແນວຊັດເຈນແກ່ຂ້າພຣະອົງທັງຫຼາຍດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອານົນເປັນບັນດິດ ມີປັນຍາຫຼາຍ ແມ່ນຫາກທ່ານທັງຫຼາຍ ຈະເພິ່ງຖາມເນື້ອຄວາມນີ້ກັບເຮົາ ເຖິງເຮົາເອງກໍເພິ່ງຕອບເນື້ອຄວາມນັ້ນແນວທີ່ອານົນໄດ້ຕອບແລ້ວນັ້ນເອງ ນີ້ແລ ເປັນເນື້ອຄວາມແຫ່ງອຸດເທດນັ້ນ ແລະທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ

**ໂລກັນຕະຄະມະນະສູດທີ ໓ ຈົບ**

# ໔. ກາມມະຄຸນສູດ

## ວ່າດ້ວຍກາມມະຄຸນ

[໑໑໗] ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຮູ້ ໄດ້ມີຄວາມຄິດດັ່ງນີ້ວ່າ

ກາມມະຄຸນ ໕ ປະການທີ່ໃຈຂອງເຮົາເຄີຍສຳຜັດ ລ່ວງໄປແລ້ວ ດັບໄປແລ້ວ ຜັນແປໄປແລ້ວ ຈິດຂອງເຮົາເມື່ອເກີດ ເພິ່ງເກີດຂຶ້ນໃນກາມມະຄຸນ ໕ ປະການທີ່ເປັນປັດຈຸບັນຫຼາຍ ຫຼື ທີ່ເປັນອະນາຄົດໜ້ອຍ

ເຮົານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ກາມມະຄຸນ ໕ ປະການທີ່ໃຈຂອງເຮົາເຄີຍສຳຜັດ ລ່ວງໄປແລ້ວ ດັບໄປແລ້ວ ຜັນແປໄປແລ້ວ ເຮົາຜູ້ຕ້ອງການປະໂຫຍດຕົນ ເພິ່ງທຳຄວາມບໍ່ຜະໝາດໃນກາມມະຄຸນ ໕ ນັ້ນ ແລະເຮັດໃຫ້ສະຕິເປັນເຄື່ອງຖືຮັກສາຈິດ

ຍ້ອນເຫດນັ້ນແລ ກາມມະຄຸນ ໕ ແມ່ນທີ່ໃຈຂອງທ່ານທັງຫຼາຍເຄີຍສຳຜັດ ກໍຫຼົ່ນລົງແລ້ວ ດັບໄປແລ້ວ ຜັນແປໄປແລ້ວ ຈິດຂອງທ່ານທັງຫຼາຍເມື່ອເກີດ ເພິ່ງເກີດຂຶ້ນໃນກາມມະຄຸນ ໕ ປະການທີ່ເປັນປັດຈຸບັນຫຼາຍຫຼືທີ່ເປັນອະນາຄົດໜ້ອຍ

ຍ້ອນເຫດນັ້ນແລ ກາມມະຄຸນ ໕ ແມ່ນທີ່ໃຈຂອງທ່ານທັງຫຼາຍເຄີຍສຳຜັດ ກໍຫຼົ່ນລົງແລ້ວ ດັບໄປແລ້ວ ຜັນແປໄປແລ້ວ ທ່ານທັງຫຼາຍ ຜູ້ຕ້ອງການປະໂຫຍດຕົນ ເພິ່ງທຳຄວາມບໍ່ຜະໝາດໃນກາມມະຄຸນ ໕ ນັ້ນ ແລະ ເຮັດໃຫ້ສະຕິເປັນເຄື່ອງຖືຮັກສາຈິດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາ (ຄວາມໝາຍຮູ້ໃນຮູບ) ກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ຊິວຫາດັບໃນບ່ອນໃດ ຣະສະສັນຍາ (ຄວາມໝາຍຮູ້ໃນຣົດ) ກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະ ວ່າ ມະໂນດັບໃນບ່ອນໃດ ທຳສັນຍາ (ຄວາມໝາຍຮູ້ໃນທຳມາຣົມ) ກໍດັບໃນບ່ອນນັ້ນ

ພຣະຜູ້ມີພຣະພາກເຈົ້າ ເມື່ອຕັດດັ່ງນີ້ແລ້ວ ກໍສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພິກຂຸເຫຼົ່ານັ້ນ ຈຶ່ງໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ? ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ຊິວຫາດັບໃນບ່ອນໃດ? ຣະສະສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ? ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍ? ຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນ ແລະ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະ ທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ

ເມື່ອແລ້ວ ພິກຂຸເຫຼົ່ານັ້ນ ຈຶ່ງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນ ວ່າ

ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ຊິວຫາດັບໃນບ່ອນໃດ ຣະສະສັນຍາ ກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ພວກຂ້ານ້ອຍຈຶ່ງໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ຊິວຫາດັບໃນບ່ອນໃດ ຣະສະສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍ? ຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຜູ້ມີອາຍຸ ພວກຂ້ານ້ອຍໄດ້ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ຂໍທ່ານອານົນຈົ່ງຈຳແນກເທີ້ນ

ທ່ານພຣະອານົນກ່າວວ່າ ຜູ້ມີອາຍຸທັງຫຼາຍ ເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າທ່ານຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍລະເລີຍພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສາ ສຳຄັນເນື້ອຄວາມນີ້ວ່າຄວນຖາມຂ້ານ້ອຍ ປຽບຄື ບຸຣຸດຜູ້ຕ້ອງການແກ່ນໄມ້ ສະແຫວງຫາແກ່ນໄມ້ ທ່ຽວ

ສະແຫວງຫາແກ່ນໄມ້ຢູ່ ເມື່ອຕົ້ນໄມ້ໃຫຍ່ ຯລຯ ຖ້າທ່ານອານົນບໍ່ມີຄວາມໜັກໃຈແລ້ວ ຂໍຈົ່ງຈຳແນກເທີ້ນ

ທ່ານພຣະອານົນກ່າວ ວ່າ ຜູ້ມີອາຍຸທັງຫຼາຍ ຖ້າຈັ່ງຊັ້ນ ຂໍທ່ານທັງຫຼາຍ ຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ

ເມື່ອ ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະອານົນ ຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດໂດຍຫຍໍ້ ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍຍ່ອມຮູ້ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ພຣະດຳຣັດວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາ ກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ຕັດໝາຍເຖິງຄວາມດັບອາຍະຕະນະ ໖ ປະການ

ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບ-ສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍຍ່ອມຮູ້ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ຢ່າງນີ້ ກໍທ່ານທັງຫຼາຍເມື່ອຫວັງ ຢູ່ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ເທີ້ນ ຂໍທ່ານທັງຫຼາຍ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ ຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດຕອບແກ່ທ່ານທັງຫຼາຍເທີ້ນ

ພິກຂຸເຫຼົ່ານັ້ນ ກ່າວຮັບຄຳທ່ານພຣະອານົນແລ້ວ ລຸກຂຶ້ນຈາກອາສະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຂອງຂ້າພຣະອົງທັງຫຼາຍຊົງສະແດງອຸດເທດໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະ ວ່າ

ຊິວຫາດັບໃນບ່ອນໃດ ຣະສະສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ປຶກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ບຸກຄົນເພິ່ງຮູ້ອາຍະຕະນະ ຄື ເພິ່ງຮູ້ອາຍະຕະນະວ່າ ຈັກຂຸດັບໃນບ່ອນໃດ ຮູບສັນຍາກໍດັບໃນບ່ອນນັ້ນ ຯລຯ ເພິ່ງຮູ້ອາຍະຕະນະວ່າ ມະໂນດັບໃນບ່ອນໃດ ທຳສັນຍາ ກໍດັບໃນບ່ອນນັ້ນ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍ? ຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼົ່ານັ້ນໄດ້ມີຄວາມເຫັນຮ່ວມກັນວ່າ ທ່ານອານົນນີ້ ພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ແລະທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວ ຮຽນຖາມເນື້ອຄວາມນີ້ກັບທ່ານ

ເມື່ອແລ້ວຂ້າພຣະອົງທັງຫຼາຍ ຈຶ່ງເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ ທ່ານອານົນໄດ້ຈຳແນກເນື້ອຄວາມແນວຊັດເຈນແກ່ຂ້າພຣະອົງທັງຫຼາຍ ດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອານົນເປັນບັນດິດ ມີປັນຍາຫຼາຍ ແມ່ນຫາກທ່ານທັງຫຼາຍຈະເພິ່ງຖາມເນື້ອຄວາມນີ້ກັບເຮົາ ເຖິງເຮົາເອງກໍເພິ່ງຕອບເນື້ອຄວາມນັ້ນແນວທີ່ອານົນໄດ້ຕອບແລ້ວນັ້ນເອງ ນີ້ແລ ເປັນເນື້ອຄວາມແຫ່ງອຸດເທດນັ້ນ ແລະ ທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ

**ກາມມະຄຸນສູດທີ ໔ ຈົບ**

# ໕. ສັກກະປັນຫະສູດ

## ວ່າດ້ວຍທ້າວສັກກະທູນຖາມບັນຫາ

[໑໑໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ທ້າວສັກກະຈອມເທບສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ທ່ານຈອມເທບ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານ (ຄວາມຢຶດໝັ້ນ) ຍ່ອມບໍ່ປະຣິນິບພານ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານຍ່ອມບໍ່ປະຣິນິບພານ

ທ່ານຈອມເທບ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ປະຣິນິບພານໃນປັດຈຸບັນ

ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ

ທ່ານຈອມເທບ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

**ສັກກະປັນຫະສູດທີ ໕ ຈົບ**

# ໖. ປັນຈະສິຂະສູດ

## ວ່າດ້ວຍປັນຈະສິຂະເທບພະບຸດ

[໑໑໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ຄັນທັບພເທບພະບຸດນາມວ່າ ປັນຈະຊິຂະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິນິບພານໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ປັນຈະຊິຂະ ຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນເຊີຍຊົມ ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານຍ່ອມບໍ່ປະຣິນິບພານ

ປັນຈະຊິຂະ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ

ຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ

ດັ່ງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຍຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນ ກໍບໍ່ມີຄວາມຍຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ

ປັນຈະຊິຂະ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

**ປັນຈະສິຂະສູດທີ ໖ ຈົບ**

# ໗. ສາຣີປຸດຕະສັດທິວິຫາຣິກະສູດ

## ວ່າດ້ວຍສັດທິວິຫາຣິກຂອງພຣະສາຣີບຸດ

[໑໒໐] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ພິກຂຸອົງໜຶ່ງ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ພິກຂຸຜູ້ເປັນສັດທິວິຫາຣິກບອກຄືນສິກຂາ ກັບມາເປັນຄະລືຫັດແລ້ວ

ທ່ານພຣະສາຣີບຸດກ່າວວ່າ ຜູ້ມີອາຍຸ ພິກຂຸບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ປະມານໃນການບໍຣິໂພກອາຫານ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ຍ່ອມເປັນແນວນີ້ເປັນໄປບໍ່ໄດ້ເລີຍ ທີ່ພິກຂຸນັ້ນບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ບໍ່ຮູ້ປະມານໃນການບໍຣິໂພກອາຫານ ບໍ່ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ຈັກສືບຕໍ່ພົມມະຈັນໃຫ້ບໍລິສຸດ ບໍລິບູນໄດ້ຈົນຕະຫຼອດຊີວິດ ເປັນໄປໄດ້ທີ່ພິກຂຸນັ້ນຄຸ້ມຄອງ

ທະວາຣະໃນອິນຊີທັງຫຼາຍ ຮູ້ປະມານໃນການບໍຣິໂພກອາຫານ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ຈັກສືບຕໍ່ພົມມະຈັນໃຫ້ບໍລິສຸດ ບໍລິບູນໄດ້ຈົນຕະຫຼອດຊີວິດ

ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມຈັກຂຸນຊີ (ອິນຊີຄືຈັກຂຸ) ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄືອະພິດຊາ (ຄວາມເພ່ງເລັງຍາກໄດ້ຂອງເຂົາ) ແລະໂທມະນັດ (ຄວາມທຸກໃຈ) ຄອບງຳໄດ້ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ພິກຂຸ ຟັງສຽງ ທາງຫູ ຯລຯ
ດົມກິ່ນທາງດັງ ຯລຯ
ຊີມຣົດທາງລີ້ນ ຯລຯ
ຖືກຕ້ອງໂຜດຖັບພະທາງກາຍ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມມະນິນຊີ (ອິນຊີຄືມະໂນ) ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄືອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ

ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວນີ້ແລ

ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍແລ້ວສັນອາຫານ ບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອຄວາມດຳລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ ເຮົາຈັກກຳຈັດເວທະນາເກົ່າ ແລະ ຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດແລະການຢູ່ຜາສຸກ ຈັກມີແກ່ເຮົາ

ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານເປັນແນວນີ້ແລ

ພິກຂຸຊື່ວ່າ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນໂຕຂັດຂວາງ ດ້ວຍການຍາງຈົງກົມ ດ້ວຍການນັ່ງ ເມີດມື້ ຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນໂຕຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປະຖົມມະຍາມແຫ່ງຣາຕີ ນອນຄືຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ໝາຍໃຈວ່າຈະລຸກຂຶ້ນຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍ ທີ່ເປັນໂຕຂັດຂວາງດ້ວຍການຍາງຈົງກົມ ດ້ວຍການນັ່ງ ຕະຫຼອດປັດສິມມະຍາມແຫ່ງຣາຕີ

ພິກຂຸຊື່ວ່າ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວນີ້ແລ

ຍ້ອນເຫດນັ້ນແລ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາຈັກເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນຜູ້ຮູ້ປະມານໃນການບໍຣິໂພກອາຫານ ເປັນຜູ້ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ

ຜູ້ມີອາຍຸ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

**ສາຣີປຸດຕະສັດທິວິຫາຣິກະສູດທີ ໗ ຈົບ**

# ໗. ຣາຫຸໂລວາທະສູດ

## ວ່າດ້ວຍການປະທານໂອວາດແກ່ພຣະຣາຫຸນ

[໑໘໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກຢູ່ໃນບ່ອນສະງັດ ຊົງເກີດຄວາມຮ່ຳເພິງຂຶ້ນແນວນີ້ວ່າ ທຳເປັນເຄື່ອງບົ່ມວິມຸດຕິຂອງຣາຫຸນແກ່ກ້າແລ້ວ ຖ້າຈັ່ງຊັ້ນ ເຮົາເພິ່ງແນະນຳຣາຫຸນໃນທຳເປັນທີ່ສິ້ນອາສະວະໃຫ້ຍິ່ງຂຶ້ນໄປ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປໃນກຣຸງ ສາວັດຖີເພື່ອບິນທະບາດ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະກະຍາຫານສຳເລັດແລ້ວ ຮັບສັ່ງຮຽກທ່ານພຣະຣາຫຸນມາຕັດວ່າ ຣາຫຸນ ທ່ານຈົ່ງຖືຜ້ານິສີທະນະ ເຮົາຈັກເຂົ້າໄປສູ່ປ່າອັນທະວັນເພື່ອພັກຜ່ອນກາງເວັນ ທ່ານພຣະຣາຫຸນທູນຮັບສະໜອງພຣະດຳຣັດແລ້ວ ໄດ້ຖືຜ້ານິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປເບື້ອງພຣະປຣິດສະດາງ

ສະໄໝນັ້ນ ເທວະດາຫຼາຍພັນຕົນກໍຕິດຕາມພຣະຜູ້ມີພຣະພາກເຈົ້າໄປດ້ວຍຄິດວ່າ ມື້ນີ້ພຣະຜູ້ມີພຣະພາກເຈົ້າ ຈັກຊົງແນະນຳທ່ານພຣະຣາຫຸນໃນທຳເປັນທີ່ສິ້ນອາສະວະໃຫ້ຍິ່ງຂຶ້ນໄປຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ປ່າອັນທະວັນ ປະທັບນັ່ງເທິງພຸດທະອາດເຊິ່ງພຣະຣາຫຸນປູລາດ ຖວາຍທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງ ຝ່າຍທ່ານພຣະຣາຫຸນຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບທ່ານພຣະຣາຫຸນດັ່ງນີ້ ວ່າ

ຣາຫຸນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ຯລຯ

ຈັກຂຸວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຈັກຂຸສຳຜັດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ແມ່ນເວທະນາ ສັນຍາ ສັງຂານ ວິນຍານ ທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ ႑ລ႑

ຊິວຫາທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຣົດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຊິວຫາວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຊິວຫາສຳຜັດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ແມ່ນເວທະນາ ສັນຍາ ສັງຂານ ວິນຍານທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ ฯລฯ

ມະໂນທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ທຳມາຣົມທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ฯລฯ

ມະໂນວິນຍານທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ ฯລฯ

ມະໂນສຳຜັດທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ແມ່ນເວທະນາ ສັນຍາ ສັງຂານ ວິນຍານ ທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ

ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຣາຫຸນ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຣູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ສັນຍາ ສັງຂານ ວິນຍານທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ฯລฯ

ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ່ອມເບື່ອໜ່າຍແມ່ນໃນຣົດ ຍ່ອມເບື່ອໜ່າຍແມ່ນໃນ

ຊິວຫາວິນຍານ ຍ່ອມເບື່ອໜ່າຍແມ່ນໃນຊິວຫາສຳຜັດ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ສັນຍາ ສັງຂານ ວິນຍານທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຯລຯ ຍ່ອມເບື່ອໜ່າຍແມ່ນໃນເວທະນາ ສັນຍາ ສັງຂານ ວິນຍານ ທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດແນວນີ້ແລ້ວ ທ່ານພຣະຣາຫຸນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ເມື່ອພຣະອົງຕັດໄວຍາກອນພາສິດນີ້ຢູ່ ຈິດຂອງທ່ານພຣະຣາຫຸນກໍລຸດພົ້ນຈາກອາສະວະຍ້ອນບໍ່ຖືໝັ້ນ ແລະ ທຳຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ເທວະດາຫຼາຍພັນຕົນວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ

**ຣາຫຸໂລວາທະສູດທີ ໙ ຈົບ**

# ໑໐. ສັນໂຍຊະນິຍະທຳມະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ສັງໂຍດ

[໑໘໘] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ສັງໂຍດແລະສັງໂຍດ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ສັງໂຍດ ເປັນແນວໃດ? ແລະສັງໂຍດ ເປັນແນວໃດ?

ຄື ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ສັງໂຍດ

ສັນທະຣາຄະ ໃນຮູບນັ້ນ ຊື່ວ່າ ສັງໂຍດ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ສັງໂຍດ

ສັນທະຣາຄະ ໃນທຳມາຣົມນັ້ນ ຊື່ວ່າ ສັງໂຍດ

**ສັນໂຍຊະນິຍະທຳມະສູດທີ ໗ ຈົບ**

# ໑໐. ອຸປາທານີຍະທຳມະສູດ

## ວ່າດ້ວຍທຳທີ່ເກື້ອກູນແກ່ອຸປາທານ

[໑໘໖] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເກື້ອກູນແກ່ອຸປາທານແລະອຸປາທານ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເກື້ອກູນແກ່ອຸປາທານ ເປັນແນວໃດ? ແລະ ອຸປາທານ ເປັນແນວໃດ?

ຄື ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ອຸປາທານ

ສັນທະຣາຄະໃນຮູບນັ້ນຊື່ວ່າ ອຸປາທານ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ເຫຼົ່ານີ້ເຮົາຮຽກວ່າ ທຳທີ່ເກື້ອກູນແກ່ອຸປາທານ

ສັນທະຣາຄະໃນທຳມາຣົມນັ້ນຊື່ວ່າ ອຸປາທານ

**ອຸປາທານີຍະທຳມະສູດທີ ໑໐ ຈົບ**

**ໂລກາການມະຄຸນວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໖. ຄະຫະປະຕິວັກ

## ໝວດວ່າດ້ວຍຄະຫະບໍດີ

## ໑. ເວສາລີສູດ

### ວ່າດ້ວຍຄະຫະບໍດີຊາວເມືອງເວສາລີ

[໑໘໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນ ອຸກຄະຫະບໍດີຊາວເມືອງເວສາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ?ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິນິບພານໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຄະຫະບໍດີ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານ (ຄວາມຢຶດໝັ້ນ) ຍ່ອມບໍ່ປະຣິນິບພານ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນຢູ່ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານຍ່ອມບໍ່ປະຣິນິບພານ

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ ຯລຯ

ຮົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

**ເວສາລີສູດທີ ໑ ຈົບ**

# ໘. ວັດຊີສູດ

## ວ່າດ້ວຍຄະຫະບໍດີຊາວແຄວ້ນວັດຊີ

[໑໘໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຫັດຖິຄາມ ແຄວ້ນວັດຊີ ຄັ້ງນັ້ນ ອຸກຄະຫະບໍດີຊາວບ້ານຫັດຖິຄາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

(ສູດນີ້ ເພິ່ງຄະຫຍາຍໃຫ້ພິດສະດານຄືສູດກ່ອນ)

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດຈຸບັນ

**ວັດຊີສູດທີ ໘ ຈົບ**

# ໙. ນາລັນທະສູດ

## ວ່າດ້ວຍຄະຫະບໍດີຊາວເມືອງນາລັນທາ

[໑໘໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທາ ຄັ້ງນັ້ນ ອຸບາລີຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິ ນິບພານໃນປັດຈຸບັນ

(ສູດນີ້ ເພິ່ງຄະຫຍາຍໃຫ້ພິດສະດານຄືສູດກ່ອນ)

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ປະຣິນິບພານໃນປັດ ຈຸບັນ

**ນາລັນທະສູດທີ ໓ ຈົບ**

# ໔. ພາຣະທະວາຊະສູດ

## ວ່າດ້ວຍພຣະປິນໂທລະພາຣະທະວາຊະ

[໑໘໗] ສະໄໝໜຶ່ງ ທ່ານພຣະປິນໂທລະພາຣະທະວາຊະຢູ່ໂຄສິຕາຣາມ ເຂດນະຄອນ ໂກສຳພີ ຄັ້ງນັ້ນ ພຣະເຈົ້າອຸເທນສະເດັດເຂົ້າໄປຫາທ່ານພຣະປິນໂທລະພາຣະທະວາຊະຮອດ ບ່ອນຢູ່ ໄດ້ຊົງສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ປະທັບນັ່ງຢູ່ ບ່ອນທີ່ສົມຄວນ ໄດ້ຕັດຖາມທ່ານພຣະປິນໂທລະພາຣະທະວາຊະດັ່ງນີ້ວ່າ ທ່ານພາຣະທະວາຊະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ຜູ້ໄວລຸ້ນ ມີຜົມດຳປອດ ໜຸ່ມແໜ້ນ ຢູ່ໃນປະ ຖົມໄວ ຍັງບໍ່ໝົດຄວາມມ່ວນຊື່ນໃນການທັງຫຼາຍ ປະພຶດພົມມະຈັນບໍລິສຸດບໍລິບູນຈົນຕະຫຼອດ ຊີວິດ ແລະ ປະຕິບັດຢູ່ໄດ້ດົນ

ທ່ານພຣະປິນໂທລະພາຣະທະວາຊະຖວາຍພຣະພອນວ່າ ຂໍຖວາຍພຣະພອນ ມະຫາບໍ ພິດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງ ນັ້ນຕັດໄວ້ດັ່ງນີ້ວ່າ ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຕັ້ງຈິດໄວ້ໃນສະຕິທັງຫຼາຍເວລາ ມານດາວ່າ ເປັນມານດາ ຕັ້ງຈິດໄວ້ໃນສະຕິທັງຫຼາຍເວລາເອື້ອຍນ້ອງສາວວ່າເປັນເອື້ອຍນ້ອງ ສາວ ຕັ້ງຈິດ ໄວ້ໃນສະຕິທັງຫຼາຍເວລາທິດາວ່າເປັນທິດາ ນີ້ແລ ເປັນເຫດເປັນປັດໄຈໃຫ້ພິກຂຸ ໜຸ່ມເຫຼົ່ານີ້ຜູ້ວັຍລຸ້ນ ມີຜົມດຳປອດ ໜຸ່ມແໜ້ນ ຢູ່ໃນປະຖົມໄວ ຍັງບໍ່ໝົດຄວາມແຈ່ມໃສໃນການ ທັງຫຼາຍ ປະພຶດພົມມະຈັນບໍລິສຸດບໍລິບູນຈົນຕະຫຼອດຊີວິດ ແລະປະຕິບັດຢູ່ໄດ້ດົນ

ທ່ານພາຣະທະວາຊະ ຈິດເປັນທຳມະຊາດໂລເລຫຼາຍ ບາງເທື່ອເກີດຄວາມໂລບໃນສະຕິ ທັງຫຼາຍແມ່ນວ່າເປັນມານດາແດ່ ລາງເທື່ອເກີດຄວາມໂລບໃນສະຕິທັງຫຼາຍ ແມ່ນວ່າເປັນເອື້ອຍ ນ້ອງສາວແດ່ ລາງເທື່ອເກີດຄວາມໂລບໃນສະຕິທັງຫຼາຍ ແມ່ນວ່າເປັນທິດາແດ່ ມີຢູ່ບໍ? ທ່ານພາ ຣະທະວາຊະ ແນວອື່ນທີ່ເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ ຜູ້ວັຍລຸ້ນ ມີຜົມດຳປອດ ຯລຯ ແລະປະຕິບັດຢູ່ໄດ້ດົນ

ຂໍຖວາຍພຣະພອນ ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າ ຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ດັ່ງນີ້ວ່າ ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງພິຈາລະນາກາຍນີ້ຂຶ້ນເບື້ອງເທິງແຕ່ພື້ນຕີນຂຶ້ນໄປ ພິຈາລະນາລົງເບື້ອງລຸ່ມແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມດ້ວຍຂອງບໍ່ສະອາດມີປະການຕ່າງ ໆ ວ່າ ໃນຮ່າງກາຍນີ້ມີ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ ແມ່ນນີ້ແລ ກໍເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ຜູ້ເປັນວັຍລຸ້ນ ມີຜົມດຳປອດ ຯລຯ ແລະປະຕິບັດຢູ່ໄດ້ດົນ

ທ່ານພາຣະທະວາຊະ ພິກຂຸເຫຼົ່າໃດໄດ້ອົບຮົມກາຍ ອົບຮົມສີນ ອົບຮົມຈິດ ອົບຮົມປັນຍາແລ້ວ ການອົບຮົມກາຍເປັນຕົ້ນນັ້ນບໍ່ແມ່ນກິດທີ່ພິກຂຸເຫຼົ່ານັ້ນ ຈະເຮັດໄດ້ຍາກ

ສ່ວນພິກຂຸເຫຼົ່າໃດ ຍັງບໍ່ໄດ້ອົບຮົມກາຍ ບໍ່ໄດ້ອົບຮົມສີນ ບໍ່ໄດ້ອົບຮົມຈິດ ບໍ່ໄດ້ອົບຮົມປັນຍາ ການຈະເລີນອະສຸພະກຳມັດຖານນັ້ນເປັນກິດທີ່ພິກຂຸເຫຼົ່ານັ້ນ ເຮັດໄດ້ຍາກ

ບາງເທື່ອເມື່ອບຸກຄົນຕັ້ງໃຈວ່າ ເຮົາຈັກໃສ່ໃຈໂດຍຄວາມເປັນຂອງບໍ່ງາມ (ແຕ່ອາລົມ) ກັບຜາກົດໂດຍຄວາມເປັນຂອງງາມກໍມີ

ມີຢູ່ບໍ? ທ່ານພາຣະທະວາຊະ ແນວອື່ນທີ່ເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ ຜູ້ເປັນວັຍລຸ້ນ ມີຜົມດຳປອດ ຯລຯ ແລະປະຕິບັດຢູ່ໄດ້ດົນ

ຂໍຖວາຍພຣະພອນ ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດໄວ້ດັ່ງນີ້ ວ່າ

ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ຢູ່ເທີ້ນ ທ່ານທັງຫຼາຍ ເຫັນຮູບທາງຕາແລ້ວຢ່າໂຮມຖື ຢ່າແຍກຖື ຈົ່ງປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈົ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວຢ່າໂຮມຖື ຢ່າແຍກຖື ຈົ່ງປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວຈະເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນ ຄື ອະພິດຊາແລະໂທມະນັດຄອບງຳໄດ້ ຈົ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ

ແມ່ນນີ້ແລ ກໍເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ຜູ້ວັຍລຸ້ນ ມີຜົມດຳປອດ ໜຸ່ມແໜ້ນ

ຢູ່ໃນປະຖົມໄວ ຍັງບໍ່ໝົດຄວາມແຈ່ມໃສໃນການທັງຫຼາຍ ປະພຶດພົມມະຈັນບໍລິສຸດບໍລິບູນຈົນຕະຫຼອດຊີວິດ ແລະ ປະຕິບັດຢູ່ໄດ້ດົນ

ທ່ານພາຣະທະວາຊະ ໜ້າອັດສະຈັນຈິງ ບໍ່ເຄີຍພາກົດ ພຣະຜູ້ມີພຣະພາກເຈົ້າຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ຕັດເລື້ອງນີ້ໄວ້ດີຫຼາຍ

ນີ້ແລ ເປັນເຫດເປັນປັດໄຈໃຫ້ພິກຂຸໜຸ່ມເຫຼົ່ານີ້ຜູ້ວັຍລຸ້ນ ມີຜົມດຳປອດ ໜຸ່ມແໜ້ນ ຢູ່ໃນປະຖົມໄວ ຍັງບໍ່ໝົດຄວາມແຈ່ມໃສໃນການທັງຫຼາຍ ປະພຶດພົມມະຈັນບໍລິສຸດບໍລິບູນຈົນຕະຫຼອດຊີວິດ ແລະ ປະຕິບັດຢູ່ໄດ້ດົນ

ສະໄໝໃດແມ່ນຂ້າພະເຈົ້າເອງ ບໍ່ໄດ້ຖືຮັກສາກາຍ ວາຈາ ໃຈ ບໍ່ຕັ້ງສະຕິໄວ້ໝັ້ນ ບໍ່ສັງລວມອິນຊີ ເຂົ້າໄປພາຍໃນວັງ ສະໄໝນັ້ນ ຄວາມໂລບກໍຄອບງຳຂ້າພະເຈົ້າຫຼາຍ

ແຕ່ສະໄໝໃດຂ້າພະເຈົ້າໄດ້ຖືຮັກສາກາຍ ວາຈາ ໃຈ ຕັ້ງສະຕິໄວ້ໝັ້ນ ສັງລວມອິນຊີເຂົ້າໄປພາຍໃນວັງ ສະໄໝນັ້ນ ຄວາມໂລບກໍບໍ່ຄອບງຳຂ້າພະເຈົ້າ

ທ່ານພາຣະທະວາຊະ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານພາຣະທະວາຊະ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານພາຣະທະວາຊະປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້

ທ່ານພາຣະທະວາຊະ ຂ້າພະເຈົ້ານີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານພາຣະທະວາຊະຈົ່ງຈືຂ້າພະເຈົ້າວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ພາຣະທະວາຊະສູດທີ ໔ ຈົບ**

# ໕. ໂສນະສູດ

## ວ່າດ້ວຍໂສນະຄະຫະບໍດີບຸດ

[໑໘໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ບຸດຄະຫະບໍດີຊື່ໂສນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິນິບພານໃນປັດຈຸບັນ

(ສູດນີ້ເພິ່ງຄະຫຍາຍໃຫ້ພິດສະດານຄືສູດກ່ອນ)

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂສນະ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກ ນີ້ປະຣິນິບພານໃນປັດຈຸບັນ

**ໂສນະສູດທີ ໕ ຈົບ**

# ໖. ໂຄສິຕະສູດ

## ວ່າດ້ວຍໂຄສິດຄະຫະບໍດີ

[໑໘໗] ສະໄໝໜຶ່ງ ທ່ານພຣະອານົນ ຢູ່ໂຄສິຕາຣາມ ເຂດນະຄອນໂກສໍາພີ ຄັ້ງນັ້ນ ໂຄສິດຄະຫະບໍດີເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນຜູ້ຈະເລີນ ທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ທາດຕ່າງ ໆ ທາດຕ່າງ ໆ ດ້ວຍເຫດພຽງທໍ່ໃດນໍ? ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ທາດຕ່າງ ໆ

ທ່ານພຣະອານົນຕອບວ່າ ຄະຫະບໍດີ ຈັກຂຸທາດ ຮູບທີ່ໜ້າພໍໃຈ ແລະ ຈັກຂຸວິນຍານມີຢູ່ ຍ້ອນອາໄສຜັດສະ ເຊິ່ງເປັນທີ່ຕັ້ງແຫ່ງສຸກຂະເວທະນາ (ຄວາມຮູ້ສຶກສຸກ) ສຸກຂະເວທະນາຈຶ່ງເກີດ

ຈັກຂຸທາດ ຮູບທີ່ບໍ່ໜ້າພໍໃຈ ແລະ ຈັກຂຸວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງທຸກຂະເວທະນາ (ຄວາມຮູ້ສຶກທຸກ) ທຸກຂະເວທະນາຈຶ່ງເກີດ

ຈັກຂຸທາດ ຮູບເປັນທີ່ຕັ້ງແຫ່ງອຸເປກຂາ ແລະ ຈັກຂຸວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກບໍ່ແມ່ນສຸກບໍ່ແມ່ນທຸກ) ອະທຸກຂະມະສຸກຂະເວທະນາຈຶ່ງເກີດ ຯລຯ

ຊິວຫາທາດ ຣົດທີ່ໜ້າພໍໃຈ ແລະຊິວຫາວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ

ຊິວຫາທາດ ຣົດທີ່ບໍ່ໜ້າພໍໃຈ ແລະຊິວຫາວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ

ຊິວຫາທາດ ຣົດທີ່ໜ້າພໍໃຈ ແລະຊິວຫາວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາຈຶ່ງເກີດ ฯລฯ

ມະໂນທາດ ທຳມາຣົມທີ່ໜ້າພໍໃຈ ແລະ ມະໂນວິນຍານມີຢູ່ ຍ້ອນອາໄສຜັດສະ ເຊິ່ງເປັນທີ່ຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ

ມະໂນທາດ ທຳມາຣົມທີ່ບໍ່ໜ້າພໍໃຈ ແລະມະໂນວິນຍານມີຢູ່ ຍ້ອນອາໄສຜັດສະ ເຊິ່ງເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ

ມະໂນທາດ ທຳມາຣົມເປັນທີ່ຕັ້ງແຫ່ງອຸເປກຂາ ແລະມະໂນວິນຍານມີຢູ່ ຍ້ອນອາໄສຜັດສະເຊິ່ງເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາຈຶ່ງເກີດ

ຄະຫະບໍດີ ດ້ວຍເຫດພຽງເທົ່ານີ້ແລ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າ ທາດຕ່າງ ໆ

**ໂຄສິຕະສູດທີ ໖ ຈົບ**

# ໗. ຫາລິດທະການິສູດ

## ວ່າດ້ວຍຫາລິດທະການິຄະຫະບໍດີ

[໑໖໐] ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ທີ່ເຮືອນຕະກູນໃກ້ພູສັງປະວັດຕະແຄວັ້ນອະວັນຕີ ຄັ້ງນັ້ນແລ ຫາລິດທະການິຄະຫະບໍດີເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ฯລฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະມະຫາກັດຈານະດັ່ງນີ້ ວ່າ

ຂ້າແດ່ ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດັ່ງນີ້ວ່າ ຍ້ອນອາໄສທາດຕ່າງ ໆ ຜັດສະຕ່າງ ໆ ຈຶ່ງເກີດ ຍ້ອນອາໄສຜັດສະຕ່າງ ໆ ເວທະນາຕ່າງ ໆ ຈຶ່ງເກີດ ຍ້ອນອາໄສທາດຕ່າງ ໆ ຜັດສະຕ່າງ ໆ ຈຶ່ງເກີດ ຍ້ອນອາໄສຜັດສະຕ່າງ ໆ ເວທະນາຕ່າງ ໆ ຈຶ່ງເກີດ ເປັນແນວໃດ?

ທ່ານພຣະມະຫາກັດຈານະຕອບວ່າ ຄະຫະບໍດີ ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວຮູ້ແຈ້ງວ່າ ຮູບແນວນີ້ ໜ້າພໍໃຈ

ຍ້ອນອາໄສຈັກຂຸວິນຍານ ແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ ອັນໜຶ່ງ ພິກຂຸເຫັນຮູບທາງຕາແນວນັ້ນແລ້ວຮູ້ແຈ້ງວ່າ ຮູບແນວນີ້ບໍ່ໜ້າພໍໃຈ

ຍ້ອນອາໄສຈັກຂຸວິນຍານແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ ອັນໜຶ່ງ ພິກຂຸເຫັນຮູບທາງຕາແນວນັ້ນແລ້ວຮູ້ແຈ້ງວ່າ ຮູບແນວນີ້ເປັນທີ່ຕັ້ງແຫ່ງອຸເປກຂາ

ຍ້ອນອາໄສຈັກຂຸວິນຍານ ແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາຈຶ່ງເກີດ

ອີກປະການໜຶ່ງ ພິກຂຸຟັງສຽງທາງຫູ ฯລฯ
ດົມກິ່ນທາງດັງ ฯລฯ
ຊີມຣົດທາງລີ້ນ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍ ฯລฯ
ຮູ້ແຈ້ງທຳມາຣົມທາງໃຈແລ້ວຮູ້ແຈ້ງວ່າ ທຳມາຣົມແນວນີ້ໜ້າພໍໃຈ

ຍ້ອນອາໄສມະໂນວິນຍານແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ ອັນໜຶ່ງ ພິກຂຸຮູ້ແຈ້ງທຳມາຣົມທາງໃຈແນວນັ້ນແລ້ວຮູ້ແຈ້ງວ່າ ທຳມາຣົມແນວນີ້ບໍ່ໜ້າພໍໃຈ

ຍ້ອນອາໄສມະໂນວິນຍານແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ ອັນໜຶ່ງ ພິກຂຸຮູ້ແຈ້ງທຳມາຣົມທາງໃຈແນວນັ້ນແລ້ວຮູ້ແຈ້ງວ່າ ທຳມາຣົມແນວນີ້ເປັນທີ່ຕັ້ງແຫ່ງອຸເປກຂາ

ຍ້ອນອາໄສມະໂນວິນຍານ ແລະຜັດສະເຊິ່ງເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂົມສຸກຂະເວທະນາຈຶ່ງເກີດ

ຄະຫະບໍດີ ຍ້ອນອາໄສທາດຕ່າງ ໆ ຜັດສະຕ່າງ ໆ ຈຶ່ງເກີດ ຍ້ອນອາໄສຜັດສະຕ່າງ ໆ ເວທະນາຕ່າງ ໆ ຈຶ່ງເກີດເປັນແນວນີ້ແລ

**ຫາລິດທະການີສູດທີ ໗ ຈົບ**

# ໘. ນະກຸລະປິຕຸສູດ

## ວ່າດ້ວຍນະກຸລະປິຕຸຄະຫະບໍດີ

[໑໓໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເພສະກະລາວັນ ອັນເປັນທີ່ພຣະລາດຊະທານອະໄພແກ່ໝູ່ເນື້ອ ເຂດນະຄອນສຸງສຸມາຣະຄິຣະ ແຄວ້ນພັກຄະ ຄັ້ງນັ້ນ ນະກຸລະປິ

ຕຸຄະຫະບໍດີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ປະຣິນິບພານໃນປັດຈຸບັນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິນິບພານໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຄະຫະບໍດີ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານຍ່ອມບໍ່ປະຣິນິບພານ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມ ນັ້ນຢູ່ເມື່ອທ່ານເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນ ຄວາມຢຶດໝັ້ນຕັນຫານັ້ນກໍມີຢູ່ ພິກຂຸຜູ້ຍັງມີອຸປາທານຍ່ອມບໍ່ປະຣິນິບພານ

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ບໍ່ປະຣິນິບພານໃນປັດຈຸບັນ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ ຯລຯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດ

ທຳມາຣົມນັ້ນຢູ່ ເມື່ອທ່ານບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນ ວິນຍານທີ່ອາໄສຕັນຫານັ້ນກໍບໍ່ມີ ຄວາມຢຶດໝັ້ນຕັນຫານັ້ນກໍບໍ່ມີ ພິກຂຸຜູ້ບໍ່ມີອຸປາທານຍ່ອມປະຣິນິບພານ

ຄະຫະບໍດີ ນີ້ແລ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ປະຣິນິບພານໃນປັດຈຸບັນ

**ນະກຸລະປິຕຸສູດທີ ໗ ຈົບ**

# ໗. ໂລຫິດຈະສູດ

## ວ່າດ້ວຍໂລຫິດຈະພາມ

[໑໓໔] ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ກຸດຕິປ່າ ເຂດເມືອງມັກກະຣະກະຕະ ແຄວ້ນອະວັນຕີ ຄັ້ງນັ້ນ ມານົບຜູ້ຫາຟືນເຊິ່ງເປັນສິດຂອງໂລຫິດຈະພາມຈຳນວນຫຼາຍ ເຂົ້າໄປສູ່ກຸດຕິປ່າຂອງທ່ານພຣະມະຫາກັດຈານະ ທ່ຽວຍ່າງໄປມາຮອບ ໆ ກຸດຕິ ຫຼິ້ນໂຕນປ້ຳກັນ ສົ່ງສຽງອື້ອຶງຟົດຟື້ນ ວ່າ

ສະມະນະຫົວໂລ້ນເຫຼົ່ານີ້ ເປັນຄົນຮັບໃຊ້ ເປັນຄົນວັນນະຕ່ຳ (ກັນຫະໂຄດ) ເກີດຈາກບາດຂອງທ້າວມະຫາພົມອັນຊາວພາຣະຕະເຫຼົ່ານີ້ສັກກາຣະ ເຄົາລົບ ນັບຖື ບູຊາ ນອບນ້ອມ

ລຳດັບນັ້ນ ທ່ານພຣະມະຫາກັດຈານະອອກຈາກທີ່ຢູ່ແລ້ວ ໄດ້ກ່າວກັບມານົບເຫຼົ່ານັ້ນດັ່ງນີ້ວ່າ ມານົບທັງຫຼາຍ ທ່ານທັງຫຼາຍຢ່າໄດ້ສົ່ງສຽງດັງ ເຮົາຈັກສະແດງທຳແກ່ທ່ານທັງຫຼາຍ

ເມື່ອທ່ານພຣະມະຫາກັດຈານະກ່າວແນວນີ້ແລ້ວ ມານົບເຫຼົ່ານັ້ນກໍມິດຢູ່ ລຳດັບນັ້ນ ທ່ານພຣະມະຫາກັດຈານະໄດ້ກ່າວກັບມານົບເຫຼົ່ານັ້ນ ດ້ວຍຄາຖາທັງຫຼາຍ ວ່າ

ພາມເຫຼົ່າໃດຣະນຶກເຖິງທຳດັ້ງເດີມໄດ້  
ພາມເຫຼົ່ານັ້ນ ເປັນຜູ້ມີສີນສູງສຸດ ເກົ່າແກ່ກວ່າ  
ພາມເຫຼົ່ານັ້ນ ຄຸ້ມຄອງ ຮັກສາທະວານທັງຫຼາຍດີແລ້ວ  
ຍ້ອນຄອບງຳຄວາມໂກດໄດ້  
ພາມເຫຼົ່າໃດຣະນຶກເຖິງທຳດັ້ງເດີມໄດ້  
ພາມເຫຼົ່ານັ້ນ ເປັນຜູ້ຍິນດີໃນທຳແລະຊານ  
ອັນໜຶ່ງ ພາມທັງຫຼາຍລະເລີຍທຳເຫຼົ່ານີ້  
ສຳຄັນວ່າ ເຮົາສາທະຍາຍມົນ ເມົາຍ້ອນໂຄດ  
ຖືກຄວາມໂກດຄອບງຳ ມີອາດຍາໃນຕົນຫຼາຍ  
ປະພຶດຜິດໃນສັດທັງຫຼາຍທັງທີ່ສະດຸ້ງຢ້ານແລະບໍ່ສະດຸ້ງຢ້ານ  
ຈຶ່ງປະພຶດບໍ່ສະໝ່ຳສະເໝີ  
ການສະມາທານຂໍ້ວັດປະຕິບັດທັງປວງ ຄື ການບໍ່ກິນ  
ການນອນເທິງພື້ນດິນ ການອາບນ້ຳເວລາເຊົ້າ  
ແລະພຣະເວທະ ໓ ຂອງພາມຜູ້ບໍ່ຄຸ້ມຄອງທະວານຍ່ອມຂາດຜົນ  
ຄືຄົນໄດ້ຊັບເຄື່ອງພໍໃຈໃນຄວາມຝັນສັນນັ້ນ

ໜັງເສືອທີ່ຫຍາບ ການມຸ່ນຜົມ ການບໍ່ຊຳຣະແຂ້ວ
ມົນ ສິນແລະພິດເປັນຕະບະ (ຂອງພາມ)
ການຫຼອກລວງ ໄມ້ການເທົ້າທີ່ຄົດ ແລະການໃຊ້ນ້ຳລູບໜ້າ
ຂໍ້ວັດປະຕິບັດທີ່ພັນນາມາເຫຼົ່ານີ້
ພວກພາມເຮັດຍ້ອນຕ້ອງການອາມິດ
ສ່ວນຈິດທີ່ຕັ້ງໝັ້ນດີແລ້ວຍ່ອມຜ່ອງໃສ ບໍ່ຂຸ່ນມົວ
ອ່ອນໂຍນໃນສັດທັງປວງ ນັ້ນເປັນທາງເພື່ອເຖິງຄວາມເປັນພົມ

ລຳດັບນັ້ນ ມານົບເຫຼົ່ານັ້ນຄຽດ ບໍ່ພໍໃຈ ໄດ້ເຂົ້າໄປຫາໂລຫິດຈະພາມ ຮອດບ່ອນຢູ່ແລ້ວ ກ່າວກັບໂລຫິດຈະພາມດັ່ງນີ້ວ່າ ຂໍທ່ານຜູ້ຈະເລີນໂຜດຮູ້ ພຣະມະຫາກັດຈານະຂ້ອນຂອດຄັດຄ້ານມົນຂອງພາມທັງຫຼາຍໂດຍສ່ວນດຽວ

ເມື່ອມານົບເຫຼົ່ານັ້ນ ກ່າວແນວນີ້ແລ້ວໂລຫິດຈະພາມກໍຄຽດ ບໍ່ພໍໃຈ

ບັດນັ້ນ ໂລຫິດຈະພາມໄດ້ມີຄວາມຄິດດັ່ງນີ້ວ່າ

ເປັນການບໍ່ສົມຄວນເລີຍທີ່ເຮົາຈະເພິ່ງດ່າ ຖາກຖາງ ກ່າວໂທດພຣະມະຫາກັດຈານະຍ້ອນຟັງຄຳຂອງພວກມານົບແຕ່ຝ່າຍດຽວທໍ່ນັ້ນ ທາງທີ່ດີ ເຮົາຄວນເຂົ້າໄປຖາມ

ຕໍ່ມາ ໂລຫິດຈະພາມກັບມານົບເຫຼົ່ານັ້ນ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານກັດຈານະ ມານົບຜູ້ຫາຟືນເຊິ່ງເປັນສິດຂອງຂ້າພະເຈົ້າຈຳນວນຫຼາຍໄດ້ມາໃນບ່ອນນີ້ບໍ?

ທ່ານພຣະມະຫາກັດຈານະຕອບວ່າ ພາມ ແມ່ນແລ້ວ ມານົບຜູ້ຫາຟືນເຊິ່ງເປັນສິດຂອງທ່ານຈຳນວນຫຼາຍ ໄດ້ມາໃນບ່ອນນີ້

ທ່ານກັດຈານະໄດ້ສົນທະນາກັບມານົບເຫຼົ່ານັ້ນແດ່ບໍ?

ພາມ ແມ່ນແລ້ວ ອາຕະມາພາບໄດ້ສົນທະນາບາງຢ່າງກັບມານົບເຫຼົ່ານັ້ນ

ທ່ານກັດຈານະໄດ້ສົນທະນາກັບມານົບເຫຼົ່ານັ້ນແນວໃດ?

ພາມ ອາຕະມາພາບໄດ້ສົນທະນາກັບມານົບເຫຼົ່ານັ້ນແນວນີ້ວ່າ

ພາມເຫຼົ່າໃດຣະນຶກເຖິງທຳດັ້ງເດີມຂອງພາມໄດ້
ພາມເຫຼົ່ານັ້ນເປັນຜູ້ມີສິນສູງສຸດ ເກົ່າແກ່ກວ່າ

ອ່ອນໂຍນໃນສັດທັງປວງ ນັ້ນເປັນທາງເພື່ອເຖິງຄວາມເປັນພົມ
ພາມ ອາຕະມາພາບໄດ້ສົນທະນາກັບມານົບເຫຼົ່ານັ້ນແນວນີ້ແລ

ທ່ານກັດຈານະໄດ້ກ່າວວ່າ ບຸກຄົນຊື່ວ່າ ບໍ່ຄຸ້ມຄອງທະວານ ດ້ວຍເຫດພຽງທໍ່ໃດນໍ?

ພາມ ບຸກຄົນລາງຄົນໃນໂລກນີ້ເຫັນຮູບທາງຕາແລ້ວຍ່ອມຍິນດີໃນຮູບທີ່ໜ້າຮັກ ຍ່ອມຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິຕຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂື້ນແລ້ວແກ່ບຸກຄົນນັ້ນ

ຟັງສຽງທາງຫູ ฯລฯ
ດົມກິ່ນທາງດັງ ฯລฯ
ຊີມຣົດທາງລີ້ນ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈ ແລ້ວຍ່ອມຍິນດີໃນທຳມາຣົມທີ່ໜ້າຮັກ ຍ່ອມຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິຕຕະຈິດຢູ່ ແລະ ບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະ ປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ທີ່ເກີດຂື້ນແລ້ວແກ່ບຸກຄົນນັ້ນ

ພາມ ບຸກຄົນຊື່ວ່າ ບໍ່ຄຸ້ມຄອງທະວານເປັນແນວນີ້ແລ

ພາມກ່າວວ່າ ທ່ານກັດຈານະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານກັດຈານະຮຽກບຸກຄົນຜູ້ບໍ່ຄຸ້ມຄອງທະວານແລ້ວແລວ່າ ບໍ່ຄຸ້ມຄອງທະວານ ທ່ານກັດຈານະໄດ້ກ່າວວ່າ ບຸກຄົນຊື່ວ່າ ຄຸ້ມຄອງທະວານ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງຊື່ວ່າ ຄຸ້ມຄອງທະວານ

ພາມ ພິກຂຸລາງອົງໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ຍ່ອມບໍ່ຍິນດີໃນຮູບທີ່ໜ້າຮັກ ບໍ່ຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັປປະມານະຈິດຢູ່ ແລະຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂື້ນແລ້ວແກ່ພິກຂຸນັ້ນ

ຟັງສຽງທາງຫູ ฯລฯ
ດົມກິ່ນທາງດັງ ฯລฯ
ຊີມຣົດທາງລີ້ນ ฯລฯ
ຖືກຕ້ອງໂຜດຖັບພະທາງກາຍ ฯລฯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມບໍ່ຍິນດີໃນທຳມາຣົມທີ່ໜ້າຮັກ ບໍ່ຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັປປະມາໜະຈິດຢູ່ ແລະຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂື້ນແລ້ວແກ່ພິກຂຸນັ້ນ

ພາມ ບຸກຄົນຊື່ວ່າ ຄຸ້ມຄອງທະວານເປັນແບບນີ້ແລ

ທ່ານກັດຈານະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທ່ານກັດຈານະຮຽກບຸກຄົນຜູ້ຄຸ້ມຄອງທະວານແລ້ວແລວ່າ ຄຸ້ມຄອງທະວານ

ທ່ານກັດຈານະ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານກັດຈານະ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານກັດຈານະປະກາດທຳໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ຕາມປະທີບໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພະເຈົ້ານີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານກັດຈານະຈົ່ງຈືຂ້າພະເຈົ້າວ່າ ເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ອັນໜຶ່ງ ຂໍທ່ານກັດຈານະຈົ່ງເຂົ້າໄປສູ່ໂລຫິດຈະຕະກູນຄືກັນກັບທີ່ເຂົ້າໄປສູ່ຕະກູນອຸປາສົກທັງຫຼາຍໃນເມືອງມັກກະຣະກະຕະເຫິ້ນ ເຫຼົ່າມານົບ ຫຼື ມານະວິກາໃນໂລຫິດຈຕະກູນຈັກໄຫວ້ ລຸກຮັບ ຖວາຍອາສະນະ ຫຼື ນ້ຳແກ່ທ່ານ ຂໍ້ນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ພວກເຂົາຕະຫຼອດການລະນານ

**ໂລຫິດຈະສູດທີ ໙ ຈົບ**

# ໑໐. ເວຣະຫັນຈານິສູດ

## ວ່າດ້ວຍເວຣະຫັນຈານິພາມມະນີ

[໑໙໙] ສະໄໝໜຶ່ງ ທ່ານພຣະອຸທາຍີຢູ່ສວນໝາກມ່ວງຂອງໂຕເທີຍຍະພາມ ເຂດເມືອງກາມັນຖະ ຄັ້ງນັ້ນ ມານົບຜູ້ເປັນສິດຂອງພາມມະນີເວນທັນຈານິໂຄດ ເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍ ເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ

ທ່ານພຣະອຸທາຍີໄດ້ຊີ້ແຈ່ງໃຫ້ມານົບນັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ຄັ້ງນັ້ນ ມານົບຜູ້ທີ່ພຣະອຸທາຍີຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ລຸກຂຶ້ນ ຈາກອາສະນະເຂົ້າໄປຫາພາມມະນີເວນທັນຈານິໂຄດຮອດບ່ອນຢູ່ ແລ້ວໄດ້ກ່າວກັບພາມມະນີເວນທັນຈານິໂຄດດັ່ງນີ້ວ່າ

ຂໍແມ່ເຈົ້າຜູ້ຈະເລີນໂຜດຮູ້ ພຣະອຸທາຍີສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ

ພາມມະນີເວນທັນຈານິໂຄດກ່າວວ່າ ມານົບ ຖ້າຈັ່ງຊັ້ນ ທ່ານຈົ່ງນິມົນພຣະອຸທາຍີຕາມຄຳຂອງຂ້ອຍ ເພື່ອສັນພັດຕາຫານໃນມື້ອື່ນນີ້

ມານົບນັ້ນຮັບຄຳແລ້ວເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄດ້ຂາບຮຽນທ່ານພຣະອຸທາຍີໂດຍໄນຍະວ່າ ຂໍທ່ານພຣະອຸທາຍີ ໂຜດຮັບພັດຕາຫານຂອງພາມມະນີເວນທັນຈານິໂຄດຜູ້ເປັນພັນລະຍາຂອງອາຈານຂອງພວກຂ້ານ້ອຍໃນມື້ອື່ນນີ້ເທີ້ນ

ທ່ານພຣະອຸທາຍີຮັບນິມົນໂດຍດຸດສະນີພາບ ເມື່ອຄືນນັ້ນຜ່ານໄປ ຕອນເຊົ້າ ທ່ານພຣະອຸທາຍີຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ນິເວດຂອງພາມມະນີເວນທັນຈານິໂຄດ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ພາມມະນີເວນທັນຈານິໂຄດໄດ້ນຳຂອງຂົບສັນອັນປະນີດປະເຄນທ່ານພຣະອຸທາຍີໃຫ້ອີ່ມໜຳດ້ວຍຕົນເອງ ເມື່ອທ່ານພຣະອຸທາຍີສັນສຳເລັດວາງມືຈາກບາດແລ້ວ ຈຶ່ງໃສ່ເກີບນັ່ງຄຸມຫົວເທິງອາສະນະສູງ ໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານຈົ່ງກ່າວສະມະນະທຳສາ

ທ່ານພຣະອຸທາຍີກ່າວວ່າ ຍັງມີເວລາຢູ່ ນາງ ແລ້ວໄດ້ລຸກຂຶ້ນຈາກອາສະນະໜີໄປ

ແມ່ນເທື່ອທີ ໘ ມານົບນັ້ນ ກໍເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະອຸທາຍີໄດ້ຊີ້ແຈ່ງ ໃຫ້ມານົບນັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ແມ່ນເທື່ອທີ ໘ ມານົບນັ້ນຜູ້ທີ່ພຣະອຸທາຍີຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ລຸກຂຶ້ນຈາກອາສະນະເຂົ້າໄປຫາພາມມະນີເວນທັນຈານິໂຄດຮອດບ່ອນຢູ່ແລ້ວ ໄດ້ກ່າວກັບເວນທັນຈານິໂຄດດັ່ງນີ້ ວ່າ

ຂໍແມ່ເຈົ້າຜູ້ຈະເລີນໂຜດຮູ້ ພຣະອຸທາຍີສະແດງທຳ ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ

ພາມມະນີເວນທັນຈານີໂຄດກ່າວວ່າ ມານົບ ກໍທ່ານກ່າວເຖິງຄຸນຂອງພຣະອຸທາຍີແນວນີ້ ສ່ວນພຣະອຸທາຍີພໍເຮົາກ່າວວ່າ ທ່ານຈົ່ງກ່າວທຳສາ ກໍກ່າວວ່າ ຍັງມີເວລາ ນາງ ແລ້ວໄດ້ລຸກຂຶ້ນຈາກອາສະນະແລ້ວໜີໄປ

ມານົບນັ້ນກ່າວວ່າ ຂ້າແດ່ ແມ່ເຈົ້າ ທີ່ເປັນແນວນັ້ນ ກໍຍ້ອນວ່າແມ່ເຈົ້າໃສ່ເກີບ ນັ່ງຄຸມຫົວເທິງອາສະນະສູງ ທັງໄດ້ກ່າວດັ່ງນີ້ວ່າ ທ່ານຈົ່ງກ່າວສະມະນະທຳສາ ຄວາມຈິງທ່ານຜູ້ຈະເລີນເຫຼົ່ານັ້ນເປັນຜູ້ໜັກໃນທຳ ເຄົາລົບໃນທຳ

ພາມມະນີເວນທັນຈານີໂຄດກ່າວວ່າ ພໍ່ມານົບ ຖ້າຈັ່ງຊັ້ນ ທ່ານຈົ່ງນິມົນພຣະອຸທາຍີຕາມຄຳຂອງຂ້ອຍເພື່ອສັນພັດຕາຫານໃນມືອື່ນນີ້

ມານົບນັ້ນຮັບຄຳແລ້ວ ເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄດ້ຂາບຮຽນທ່ານພຣະອຸທາຍີດັ່ງນີ້ວ່າ ໄນຍະວ່າ ຂໍທ່ານພຣະອຸທາຍີ ໂຜດຮັບພັດຕາຫານຂອງນາງພາມມະນີເວນທັນຈານີໂຄດຜູ້ເປັນພັນລະຍາຂອງອາຈານຂອງພວກຂ້ານ້ອຍໃນມືອື່ນນີ້ເທີ້ນ

ເມື່ອແລ້ວ ທ່ານພຣະອຸທາຍີຮັບນິມົນໂດຍດຸດສະນີພາບ

ເມື່ອຄືນນັ້ນຜ່ານໄປ ຕອນເຊົ້າ ທ່ານພຣະອຸທາຍີຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປສູ່ນິເວດຂອງພາມມະນີເວນທັນຈານີໂຄດ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ພາມມະນີເວນທັນຈານີໂຄດ ໄດ້ນຳຂອງຂົບສັນອັນປະນີດປະເຄນທ່ານພຣະອຸທາຍີໃຫ້ອີ່ມໜຳດ້ວຍຕົນເອງ ເມື່ອທ່ານພຣະອຸທາຍີສັນສຳເລັດ ວາງມືຈາກບາດແລ້ວ ຈຶ່ງປົດເກີບ ນັ່ງເທິງອາສະນະຕ່ຳ ເປີດຜ້າຄຸມຫົວແລ້ວໄດ້ຮຽນຖາມທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານຜູ້ຈະເລີນ ເມື່ອມີອັນໃດ  ພຣະອະຣະຫັນທັງຫຼາຍ ຈຶ່ງບັນຍັດສຸກແລະທຸກ ເມື່ອບໍ່ມີອັນໃດ ພຣະອະຣະຫັນທັງຫຼາຍ ຈຶ່ງບໍ່ບັນຍັດສຸກແລະທຸກ

ທ່ານພຣະອຸທາຍີຕອບວ່າ ນາງ ເມື່ອມີຈັກຂຸ ພຣະອະຣະຫັນທັງຫຼາຍ ຈຶ່ງບັນຍັດສຸກແລະທຸກ ເມື່ອບໍ່ມີຈັກຂຸ ພຣະອະຣະຫັນທັງຫຼາຍ ກໍບໍ່ບັນຍັດສຸກແລະ ທຸກ ຯລຯ

ເມື່ອມີຊິວຫາ ພຣະອະຣະຫັນທັງຫຼາຍຈຶ່ງບັນຍັດສຸກ ແລະທຸກ ເມື່ອບໍ່ມີຊິວຫາ ພຣະອະຣະຫັນທັງຫຼາຍ ກໍບໍ່ບັນຍັດສຸກແລະທຸກ ຯລຯ

ເມື່ອມີມະໂນ ພຣະອະຣະຫັນທັງຫຼາຍຈຶ່ງບັນຍັດສຸກແລະທຸກ ເມື່ອບໍ່ມີມະໂນ ພຣະອະຣະຫັນທັງຫຼາຍກໍບໍ່ບັນຍັດສຸກແລະທຸກ ເມື່ອທ່ານພຣະອຸທາຍີກ່າວແນວນີ້ແລ້ວ

ພາມມະນີເວນທັນຈານິໂຄດໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານຜູ້ຈະເລີນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານຜູ້ຈະເລີນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ພຣະຜູ້ເປັນເຈົ້າອຸທາຍີປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້ານ້ອຍນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍພຣະຜູ້ເປັນເຈົ້າ ຈົ່ງຈື່ຂ້ານ້ອຍວ່າ ເປັນອຸປາສິກາຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເວຣະຫັນຈານີສູດທີ ໑໐ ຈົບ**

**ຄະຫະປະຕິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້

| | |
|---|---|
| ໑. ເວສາລີສູດ | ໒. ວັດຊີສູດ |
| ໓. ນາລັນທະສູດ | ໔. ພາຣະທະວາຊະສູດ |
| ໕. ໂສນະສູດ | ໖. ໂຄສິຕະສູດ |
| ໗. ຫາລິດທະການີສູດ | ໘. ນະກຸລະປິຕຸສູດ |
| ໙. ໂລຫິດຈະສູດ | ໑໐. ເວຣະຫັນຈານີສູດ |

# ໔. ເທວະທະຫະວັກ

## ໝວດວ່າດ້ວຍເທວະທະຫະນິຄົມ

## ໑. ເທວະທະຫະສູດ

### ວ່າດ້ວຍເທວະທະຫະນິຄົມ

[໑໓໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເທວະທະຫະນິຄົມຂອງເຈົ້າສາກະຍະທັງຫຼາຍ ແຄວັນສັກກະໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ເຮົາບໍ່ກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸທຸກອົງຄວນເຮັດແທ້ ແຕ່ເຮົາກໍບໍ່ກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸທຸກອົງບໍ່ຄວນເຮັດເລີຍ

ພິກຂຸເຫຼົ່າໃດ ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸທັງຫຼາຍ ເຮົາກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸເຫຼົ່ານັ້ນ ບໍ່ຄວນເຮັດ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມບໍ່ຜະໝາດພິກຂຸເຫຼົ່ານັ້ນກະທຳແລ້ວ ພິກຂຸເຫຼົ່ານັ້ນ ບໍ່ຄວນຜະໝາດ ສ່ວນພິກຂຸເຫຼົ່າໃດເປັນເສຂະ (ຜູ້ຍັງຕ້ອງສຶກສາ) ຍັງບໍ່ບັນລຸອະຣະຫັດຕະຜົນ ປາຖະໜາທຳເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ເຮົາກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸເຫຼົ່ານັ້ນຄວນເຮັດ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຮູບທີ່ເພິ່ງຮູ້ແຈ້ງທາງຕາ ໜ້າອອນຊອນໃຈແດ່ ບໍ່ໜ້າອອນຊອນໃຈແດ່ມີຢູ່ ຮູບເຫຼົ່ານັ້ນກະທົບແລ້ວ ໆ ຍ່ອມບໍ່ຄອບງຳຈິດຂອງບຸກຄົນນັ້ນຢູ່ ຍ້ອນບໍ່ຄອບງຳຈິດ ບຸກຄົນຈຶ່ງຜາຣົບຄວາມພຽນ ບໍ່ທໍ້ຖອຍ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດນີ້ ຈຶ່ງກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸເຫຼົ່ານັ້ນ ຄວນເຮັດແທ້ ຯລຯ

ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ໜ້າອອນຊອນໃຈແດ່ ບໍ່ໜ້າອອນຊອນໃຈແດ່ມີຢູ່ ຣົດເຫຼົ່ານັ້ນກະທົບແລ້ວ ໆ ຍ່ອມບໍ່ຄອບງຳຈິດຂອງບຸກຄົນນັ້ນຢູ່ ຍ້ອນບໍ່ຄອບງຳຈິດ ບຸກຄົນຈຶ່ງຜາຣົບຄວາມພຽນ ບໍ່ທຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດນີ້ ຈຶ່ງກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸເຫຼົ່ານັ້ນຄວນເຮັດແທ້ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ ໜ້າອອນຊອນໃຈແດ່ ບໍ່ໜ້າອອນຊອນໃຈແດ່ມີຢູ່ ທຳມາຣົມນັ້ນກະທົບແລ້ວ ໆ ຍ່ອມບໍ່ຄອບງຳຈິດຂອງບຸກຄົນນັ້ນຢູ່ ຍ້ອນບໍ່ຄອບງຳຈິດ ບຸກຄົນຈຶ່ງຜາຣົບຄວາມພຽນ ບໍ່ທຍ່ອນຍານ ມີສະຕິຕັ້ງໝັ້ນ ບໍ່ຫຼົງລືມ ມີກາຍສະງົບ ບໍ່ກະສັບກະສ່າຍ ມີຈິດແນ່ວແນ່ເປັນສະມາທິ ເຮົາເຫັນຜົນແຫ່ງຄວາມບໍ່ຜະໝາດນີ້ ຈຶ່ງກ່າວວ່າ ຄວາມບໍ່ຜະໝາດໃນຜັດສາຍະຕະນະ ໖ ປະການ ອັນພິກຂຸເຫຼົ່ານັ້ນຄວນເຮັດແທ້

**ເທວະທະຫະສູດທີ ໑ ຈົບ**

# ໘. ຂະນະສູດ

## ວ່າດ້ວຍຂະນະ

[໑໓໕] ພິກຂຸທັງຫຼາຍ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວ ທີ່ທ່ານທັງຫຼາຍໄດ້ຂະນະເພື່ອປະພຶດພົມມະຈັນ ເຮົາເຫັນນະຣົກ ຊື່ວ່າ ຜັດສາຍະຕະນິກະ ໖ ຊຸມ ໃນນະຣົກທັງ ໖ ຊຸມນັ້ນ ສັດຍ່ອມເຫັນຮູບແນວໃດແນວໜຶ່ງທາງຕາໄດ້ ແຕ່ເຫັນໄດ້ສະເພາະ ຮູບທີ່ບໍ່ໜ້າປາຖະໜາ ບໍ່ເຫັນຮູບທີ່ໜ້າປາຖະໜາ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າຕ້ອງການ ບໍ່ເຫັນຮູບທີ່ໜ້າຕ້ອງການ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າພໍໃຈ ບໍ່ເຫັນຮູບທີ່ໜ້າພໍໃຈ

ຟັງສຽງ ແນວໃດແນວໜຶ່ງທາງຫູໄດ້ ຯລຯ
ດົມກິ່ນ ແນວໃດແນວໜຶ່ງທາງດັງໄດ້ ຯລຯ
ຊີມຣົດ ແນວໃດແນວໜຶ່ງທາງລີ້ນໄດ້ ຯລຯ
ຖືກຕ້ອງໂຜດຖັບພະ ແນວໃດແນວໜຶ່ງທາງກາຍໄດ້ ຯລຯ

ຮູ້ແຈ້ງທຳມາຣົມແນວໃດແນວໜຶ່ງທາງໃຈໄດ້ ແຕ່ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າປາຖະໜາ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າປາຖະໜາ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າຕ້ອງການ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າຕ້ອງການ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າພໍໃຈ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າພໍໃຈ

ພິກຂຸທັງຫຼາຍ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວ ທີ່ທ່ານທັງຫຼາຍໄດ້ຂະນະເພື່ອປະພຶດພົມມະຈັນ ເຮົາໄດ້ເຫັນສະຫວັນ ຊື່ວ່າຜັດສາຍະຕະນິກະ ໖ ຊັ້ນແລ້ວ ໃນສະຫວັນທັງ ໖ ຊັ້ນນັ້ນ ບຸກຄົນຍ່ອມເຫັນຮູບແນວໃດແນວໜຶ່ງທາງຕາໄດ້ ແຕ່ເຫັນໄດ້ສະເພາະຮູບທີ່ໜ້າປາຖະໜາ ບໍ່ເຫັນຮູບທີ່ບໍ່ໜ້າປາຖະໜາ ເຫັນໄດ້ສະເພາະຮູບທີ່ໜ້າຕ້ອງການ ບໍ່ເຫັນຮູບທີ່ບໍ່ໜ້າຕ້ອງການ ເຫັນໄດ້ສະເພາະຮູບທີ່ໜ້າພໍໃຈ ບໍ່ເຫັນຮູບທີ່ບໍ່ໜ້າພໍໃຈ ฯລฯ

ຊີມຣົດ ແນວໃດແນວໜຶ່ງທາງລີ້ນໄດ້ ฯລฯ

ຮູ້ແຈ້ງທໍາມາຣົມ ແນວໃດແນວໜຶ່ງທາງໃຈໄດ້ ແຕ່ຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ໜ້າປາຖະໜາ ບໍ່ຮູ້ແຈ້ງທໍາມາຣົມທີ່ບໍ່ໜ້າປາຖະໜາ ຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ໜ້າຕ້ອງການ ບໍ່ຮູ້ແຈ້ງທໍາມາຣົມທີ່ບໍ່ໜ້າຕ້ອງການ ຮູ້ແຈ້ງໄດ້ສະເພາະທໍາມາຣົມທີ່ໜ້າພໍໃຈ ບໍ່ຮູ້ແຈ້ງທໍາມາຣົມທີ່ບໍ່ໜ້າພໍໃຈ

ພິກຂຸທັງຫຼາຍ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວ ທີ່ທ່ານທັງຫຼາຍໄດ້ຂະນະເພື່ອປະພຶດພົມມະຈັນ

**ຂະນະສູດທີ ໘ ຈົບ**

# ໓. ປະຖົມຮູປາຣາມະສູດ

## ວ່າດ້ວຍຜູ້ຍິນດີໃນຮູບ ສູດທີ ໑

[໑໓໖] ພິກຂຸທັງຫຼາຍ ເທວະດາ ແລະມະນຸດທັງຫຼາຍ ເປັນຜູ້ຍິນດີໃນຮູບ ອອນຊອນໃນຮູບ ເພີດເພີນໃນໃນຮູບ ຍ້ອນຮູບຜັນແປ ຄາຍອອກແລະດັບໄປ ເທວະດາແລະມະນຸດທັງຫຼາຍຈຶ່ງຢູ່ເປັນທຸກ

ເທວະດາແລະມະນຸດທັງຫຼາຍເປັນຜູ້ຍິນດີໃນສັດທະ ອອນຊອນໃນສັດທະ ເພີດເພີນໃນໃນສັດທະ ຍ້ອນສັດທະຜັນແປ ຄາຍອອກ ແລະດັບໄປ ເທວະດາ ແລະມະນຸດທັງຫຼາຍຈຶ່ງຢູ່ເປັນທຸກ

ຍິນດີໃນຄັນທະ ฯລฯ ຍິນດີໃນຣົດ ฯລฯ ຍິນດີໃນໂຜດຖັບພະ ฯລฯ ຍິນດີໃນທໍາມາຣົມ ອອນຊອນໃນທໍາມາຣົມ ເພີດເພີນໃນໃນທໍາມາຣົມ ຍ້ອນທໍາມາຣົມຜັນແປ ຄາຍອອກ ແລະດັບໄປ ພວກເທວະດາແລະມະນຸດຈຶ່ງຢູ່ເປັນທຸກ

ພິກຂຸທັງຫຼາຍ ສ່ວນຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຮູບທັງຫຼາຍ ຕາມຄວາມເປັນຈິງ ບໍ່ຍິນດີໃນ

ຮູບ ບໍ່ອອນຊອນໃນຮູບ ບໍ່ເພີດເພີນໃນໃນຮູບ ຍ້ອນຮູບຜັນແປ ຄາຍອອກ ແລະດັບໄປ ຕະຖາຄົດຈຶ່ງຢູ່ເປັນສຸກ

ຕະຖາຄົດ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກທໍາມາຣົມຕາມຄວາມເປັນຈິງ ບໍ່ຍິນດີໃນທໍາມາຣົມ ບໍ່ອອນຊອນໃນທໍາມາຣົມ ບໍ່ເພີດເພີນໃນໃນທໍາມາຣົມ ຍ້ອນທໍາມາຣົມຜັນແປ ຄາຍອອກ ແລະດັບໄປ ຕະຖາຄົດຈຶ່ງຢູ່ເປັນສຸກ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຮູບ ສັດທະ ຄັນທະ ຣະສະ ໂຜດຖັບພະ ແລະທໍາມາຣົມ
ລ້ວນໜ້າປາຖະໜາ ໜ້າຕ້ອງການ ແລະໜ້າພໍໃຈ
ທີ່ກ່າວກັນວ່າ ມີຢູ່ປະມານທໍ່ໃດ
ຮູບເປັນຕົ້ນເຫຼົ່ານັ້ນເອງ ເປັນສິ່ງທີ່ຊາວໂລກ
ພ້ອມທັງເທວະໂລກສົມມຸດວ່າ ເປັນສຸກ
ຖ້າຮູບເປັນຕົ້ນເຫຼົ່ານັ້ນດັບໃນບ່ອນໃດ
ບ່ອນນັ້ນ ເທວະດາແລະມະນຸດເຫຼົ່ານັ້ນກໍສົມມຸດກັນວ່າ ເປັນທຸກ
ສ່ວນອະຣິຍະບຸກຄົນທັງຫຼາຍເຫັນການດັບຈັກກາຍວ່າເປັນສຸກ
ການເຫັນຂອງອະຣິຍະບຸກຄົນທັງຫຼາຍຜູ້ເຫັນຢູ່ນີ້
ຍ່ອມຂັດແຍ່ງກັບຊາວໂລກທັງປວງ
ບຸກຄົນເຫຼົ່າອື່ນກ່າວສິ່ງໃດວ່າ ເປັນສຸກ
ອະຣິຍະບຸກຄົນທັງຫຼາຍກ່າວສິ່ງນັ້ນວ່າ ເປັນທຸກ
ບຸກຄົນເຫຼົ່າອື່ນກ່າວສິ່ງໃດວ່າເປັນທຸກ
ອະຣິຍະບຸກຄົນທັງຫຼາຍຮູ້ແຈ້ງສິ່ງນັ້ນວ່າເປັນສຸກ
ທ່ານຈົ່ງເຫັນທໍາທີ່ຮູ້ໄດ້ຍາກ
ຄົນພານຜູ້ຫຼົງ ບໍ່ຮູ້ແຈ້ງໃນນິບພານນີ້
ຄວາມມືດຜາກົດແກ່ບຸກຄົນຜູ້ຖືກນິວອນຄືກິເລດຫຸ້ມຫໍ່ໄວ້
(ຄື) ຄວາມມືດຜາກົດແກ່ບຸກຄົນຜູ້ບໍ່ເຫັນສັນນັ້ນ
ແຕ່ນິບພານຍ່ອມຜາກົດແຈ່ມແຈ້ງແກ່ສັດຕະບຸຣຸດ
ຄືແສງສະຫວ່າງຜາກົດແກ່ບຸກຄົນຜູ້ເຫັນຢູ່ສັນນັ້ນ
ຊົນທັງຫຼາຍຜູ້ສະແຫວງຫາທາງ ບໍ່ສະຫຼາດໃນທໍາ

ຍ່ອມບໍ່ຮູ້ແຈ້ງ (ນິບພານ) ທີ່ຢູ່ໃກ້
ບຸກຄົນຜູ້ຖືກຄວາມກຳໜັດໃນພົບຄອບງຳ
ແລ່ນໄປຕາມກະແສ (ຕັນຫາ) ໃນພົບ
ຖືກບ້ວງມານຄ້ອງໄວ້ ຈະບໍ່ຮູ້ທຳນີ້ໄດ້ງ່າຍ
ເວັ້ນອະຣິຍະບຸກຄົນທັງຫຼາຍແລ້ວ ໃຜນໍ ຄວນຈະຕັດສະຮູ້ບົດ
ທີ່ອະຣິຍະບຸກຄົນທັງຫຼາຍຕັດຮູ້ຖືກແລ້ວບໍ່ມີອາສະວະປະຣິນິບພານ

**ປະຖົມຣູປາຣາມະສູດທີ ໓ ຈົບ**

# ໔. ທຸຕິຍະຣູປາຣາມະສູດ

## ວ່າດ້ວຍຜູ້ຍິນດີໃນຮູບ ສູດທີ ໔

[໑໓໗] ພິກຂຸທັງຫຼາຍ ເທວະດາແລະມະນຸດທັງຫຼາຍເປັນຜູ້ຍິນດີໃນຮູບ ອອນຊອນໃນຮູບ ເພີດເພີນໃນໃນຮູບ ຍ້ອນຮູບຜັນແປ ຄາຍອອກ ແລະດັບໄປ ເທວະດາ ແລະມະນຸດທັງຫຼາຍຈຶ່ງຢູ່ເປັນທຸກ

ເທວະດາແລະມະນຸດທັງຫຼາຍເປັນຜູ້ຍິນດີໃນສັດທະ ຯລຯ ຍິນດີໃນຄັນທະ ຯລຯ ຍິນດີໃນ ຣົດ ຯລຯ ຍິນດີໃນໂຜດຖັບພະ ຯລຯ. ຍິນດີໃນທຳມາຣົມ ອອນຊອນໃນທຳມາຣົມ ເພີດເພີນໃນທຳມາຣົມ ຍ້ອນທຳມາຣົມຜັນແປ ຄາຍອອກ ແລະດັບໄປ ເທວະດາ ແລະມະນຸດທັງຫຼາຍຈຶ່ງຢູ່ເປັນທຸກ

ສ່ວນຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຮູບຕາມຄວາມເປັນຈິງ ບໍ່ຍິນດີໃນຮູບ ບໍ່ອອນຊອນໃນຮູບ ບໍ່ເພີດເພີນໃນໃນຮູບ ຍ້ອນຮູບຜັນແປ ຄາຍອອກ ແລະດັບໄປ ຕະຖາຄົດຈຶ່ງຢູ່ເປັນສຸກ

ຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກທຳມາຣົມ ຕາມຄວາມເປັນຈິງ ບໍ່ຍິນດີໃນທຳມາຣົມ ບໍ່ອອນຊອນໃນທຳມາຣົມ ບໍ່ເພີດເພີນໃນໃນທຳມາຣົມ ຍ້ອນທຳມາຣົມຜັນແປ ຄາຍອອກ ແລະດັບໄປຕະຖາຄົດຈຶ່ງຢູ່ເປັນສຸກ

**ທຸຕິຍະຣູປາຣາມະສູດທີ ໔ ຈົບ**

# ໕. ປະຖົມນະຕຸມຫາກະສູດ

## ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ ສູດທີ ໑

[໑໖໘] ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ກໍອັນໃດນໍ? ຊື່ວ່າບໍ່ແມ່ນຂອງທ່ານທັງຫຼາຍ

ຄື ຈັກຂຸບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸນັ້ນ ຈັກຂຸທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຯລຯ

ຊິວຫາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຊິວຫານັ້ນ ຊິວຫາທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຯລຯ

ມະໂນບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະມະໂນນັ້ນ ມະໂນທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ປຽບຄື ຄົນເພິ່ງນຳຫຍ້າ ໄມ້ ງ່າໄມ້ ແລະໃບໄມ້ທີ່ມີຢູ່ໃນເຊຕະວັນນີ້ໄປເຜົາ ຫຼື ຈັດການໄປຕາມເລື້ອງ ທ່ານທັງຫຼາຍ ຈະເພິ່ງມີຄວາມຄິດແນວນີ້ແດ່ບໍວ່າ ຄົນນຳເຮົາທັງຫຼາຍໄປເຜົາ ຫຼື ຈັດການໄປຕາມເລື້ອງ

ພິກຂຸທັງຫຼາຍຂາບທູນວ່າ ບໍ່ມີເລີຍ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນຫຍ້າເປັນຕົ້ນນັ້ນ ບໍ່ແມ່ນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາຂອງພວກຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ແມ່ນສັນໃດ ອຸປະໄມກໍຄືກັນສັນນັ້ນ ຈັກຂຸບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຈັກຂຸນັ້ນ ຈັກຂຸທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຯລຯ

ຊິວຫາບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຊິວຫານັ້ນ ຊິວຫາທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ ຯລຯ

ມະໂນ ບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະມະໂນນັ້ນ ມະໂນທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

**ປະຖົມນະຕຸມຫາກະສູດທີ ໕ ຈົບ**

# ໙. ທຸຕິຍະນະຕຸມຫາກະສູດ

## ວ່າດ້ວຍສິ່ງທີ່ບໍ່ແມ່ນຂອງທ່ານທັງຫຼາຍ ສູດທີ ໔

[໑໓໙] ພິກຂຸທັງຫຼາຍ ສິ່ງໃດບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະສິ່ງນັ້ນ ສິ່ງທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນ ຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ກໍອັນໃດນໍ? ຊື່ວ່າ ບໍ່ແມ່ນຂອງທ່ານທັງຫຼາຍ

ຄື ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍລະໄດ້ແລ້ວນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ທຳມາຣົມບໍ່ແມ່ນຂອງທ່ານທັງຫຼາຍ ໆ ຈົ່ງລະທຳມາຣົມນັ້ນ ທຳມາຣົມທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

ພິກຂຸທັງຫຼາຍ ປຽບຄື ຄົນເພິ່ງນຳຫຍ້າ ໄມ້ ງ່າໄມ້ ແລະໃບໄມ້ທີ່ມີຢູ່ໃນເຊຕະວັນນີ້ ฯລฯ ພິກຂຸທັງຫຼາຍ ອຸປະມານີ້ແມ່ນສັນໃດ ອຸປະໄມກໍຄືກັນສັນນັ້ນ ຮູບບໍ່ແມ່ນຂອງທ່ານທັງຫຼາຍ ທ່ານທັງຫຼາຍ ຈົ່ງລະຮູບນັ້ນ ຮູບທີ່ທ່ານທັງຫຼາຍ ລະໄດ້ແລ້ວນັ້ນຈັກເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກ

**ທຸຕິຍະນະຕຸມຫາກະສູດທີ ໙ ຈົບ**

# ໑. ອັດຊັດຕະອະນິດຈະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍໃນບໍ່ທ່ຽງ

[໑໔໐] ພິກຂຸທັງຫຼາຍ ຈັກຂຸບໍ່ທ່ຽງ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຈັກຂຸກໍບໍ່ທ່ຽງ ຈັກຂຸທີ່ເກີດຈາກເຫດທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ນໍ ฯລฯ

ຊິວຫາບໍ່ທ່ຽງ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຊິວຫາກໍບໍ່ທ່ຽງ ຊິວຫາທີ່ເກີດຈາກເຫດທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ນໍ ฯລฯ

ມະໂນບໍ່ທ່ຽງ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງມະໂນກໍບໍ່ທ່ຽງ ມະໂນທີ່ເກີດຈາກເຫດທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຯລຯ ຍ່ອມເບື່ອໜ່າຍແມ່ນໃນມະໂນ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບວນີ້ອີກຕໍ່ໄປ

**ອັດຊັດຕະອະນິດຈະເຫຕຸສູດທີ ໗ ຈົບ**

# ໘. ອັດຊັດຕະທຸກຂະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍໃນເປັນທຸກ

[໑໘໑] ພິກຂຸທັງຫຼາຍ ຈັກຂຸເປັນທຸກ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຈັກຂຸກໍເປັນທຸກ ຈັກຂຸທີ່ເກີດຈາກເຫດທີ່ເປັນທຸກ ແລ້ວຈັກຫາສຸກມາແຕ່ໃສໄດ້ນໍ ຯລຯ

ຊິວຫາເປັນທຸກ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຊິວຫາກໍເປັນທຸກ ຊິວຫາທີ່ເກີດຈາກເຫດທີ່ເປັນທຸກ ແລ້ວຈັກຫາສຸກມາແຕ່ໃສໄດ້ນໍ ຯລຯ

ມະໂນເປັນທຸກ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງມະໂນກໍເປັນທຸກ ມະໂນທີ່ເກີດຈາກເຫດທີ່ເປັນທຸກ ແລ້ວຈັກຫາສຸກມາແຕ່ໃສໄດ້ນໍ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແບວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແບວນີ້ອີກຕໍ່ໄປ

**ອັດຊັດຕະທຸກຂະເຫຕຸສູດທີ ໘ ຈົບ**

# ໙. ອັດຊັດຕານັດຕະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍໃນເປັນອະນັດຕາ

[໑໘໘] ພິກຂຸທັງຫຼາຍ ຈັກຂຸເປັນອະນັດຕາ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຈັກຂຸກໍເປັນອະນັດຕາ ຈັກຂຸທີ່ເກີດຈາກເຫດທີ່ເປັນອະນັດຕາ ແລ້ວຢູ່ໃສຈັກເປັນອັດຕາໄດ້ນໍ

ຊິວຫາ ເປັນອະນັດຕາ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຊິວຫາກໍເປັນອະນັດຕາ ຊິວຫາ ທີ່ເກີດຈາກເຫດທີ່ເປັນອະນັດຕາ ແລ້ວຢູ່ໄສຈັກເປັນອັດຕາໄດ້ນໍ

ມະໂນ ເປັນອະນັດຕາ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງມະໂນກໍເປັນອະນັດຕາ ມະໂນທີ່ເກີດຈາກເຫດທີ່ເປັນອະນັດຕາ ແລ້ວຢູ່ໄສຈັກເປັນອັດຕາໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕານັດຕະເຫຕຸສູດທີ ໙ ຈົບ**

# ໑໐. ພາຫິຣານິດຈະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍນອກບໍ່ທ່ຽງ

[໑໘໓] ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຮູບກໍບໍ່ທ່ຽງ ຮູບທີ່ເກີດຈາກເຫດທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ?

ສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ທຳມາຣົມບໍ່ທ່ຽງ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງທຳມາຣົມກໍບໍ່ທ່ຽງ ທຳມາຣົມທີ່ເກີດຈາກເຫດທີ່ບໍ່ທ່ຽງ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ນໍ?

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣານິດຈະເຫຕຸສູດທີ ໑໐ ຈົບ**

# ໑໑. ພາຫິຣະທຸກຂະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍນອກເປັນທຸກ

[໑໘໔] ພິກຂຸທັງຫຼາຍ ຮູບເປັນທຸກ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງຮູບກໍເປັນທຸກ ຮູບທີ່ເກີດຈາກເຫດທີ່ເປັນທຸກ ແລ້ວຈັກຫາສຸກມາແຕ່ໄສໄດ້ນໍ

ສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ທຳມາຣົມເປັນທຸກ ແມ່ນເຫດປັດໄຈເພື່ອຄວາມເກີດຂຶ້ນແຫ່ງທຳມາຣົມກໍເປັນທຸກ ທຳມາຣົມທີ່ເກີດຈາກເຫດທີ່ເປັນທຸກ ແລ້ວຈັກຫາສຸກມາແຕ່ໄສໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣະທຸກຂະເຫຕຸສູດທີ ໑໑ ຈົບ**

# ໑໒. ພາຫິຣານັດຕະເຫຕຸສູດ

## ວ່າດ້ວຍເຫດເກີດແຫ່ງອາຍະຕະນະພາຍນອກເປັນອະນັດຕາ

[໑໙໕] ພິກຂຸທັງຫຼາຍ ຮູບເປັນອະນັດຕາ ແມ່ນເຫດປັດໃຈເພື່ອຄວາມເກີດຂຶ້ນແຫ່ງຮູບກໍເປັນອະນັດຕາ ຮູບທີ່ເກີດຈາກເຫດທີ່ເປັນອະນັດຕາ ແລ້ວຢູ່ໃສຈັກເປັນອັດຕາໄດ້ນໍ

ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມເປັນອະນັດຕາ ແມ່ນເຫດປັດໃຈເພື່ອຄວາມເກີດຂຶ້ນແຫ່ງທຳມາຣົມກໍເປັນອະນັດຕາ ທຳມາຣົມທີ່ເກີດຈາກເຫດທີ່ເປັນອະນັດຕາ ແລ້ວຢູ່ໃສຈັກເປັນອັດຕາໄດ້ນໍ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນສັດທະ ຯລຯ ແມ່ນໃນຄັນທະ ຯລຯ ແມ່ນໃນຣະສະ ຯລຯ ແມ່ນໃນໂຜດຖັບພະ ຯລຯ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣານັດຕະເຫຕຸສູດທີ ໑໒ ຈົບ**

**ເທວະທະຫະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ນະວະປຸຣານະວັກ

### ໝວດວ່າດ້ວຍກຳໃໝ່ແລະກຳເກົ່າ

## ໑. ກຳມະນິໂຣທະສູດ

### ວ່າດ້ວຍກຳແລະຄວາມດັບກຳ

[໑໔໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງກຳໃໝ່ ແລະກຳເກົ່າ ຄວາມດັບກຳ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບກຳ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ກຳເກົ່າ ເປັນແນວໃດ?

ຄື ຈັກຂຸ (ຕາ) ບັນດິດເພິ່ງເຫັນວ່າເປັນກຳເກົ່າ ຖືກປັດໄຈປຸງແຕ່ງ ສຳເລັດດ້ວຍເຈຕະນາ ເປັນທີ່ຕັ້ງແຫ່ງເວທະນາ ຯລຯ

ຊິວຫາ (ລີ້ນ) ບັນດິດເພິ່ງເຫັນວ່າເປັນກຳເກົ່າ ຖືກປັດໄຈປຸງແຕ່ງ ສຳເລັດດ້ວຍເຈຕະນາ ເປັນທີ່ຕັ້ງແຫ່ງເວທະນາ ຯລຯ

ມະໂນ (ໃຈ) ບັນດິດເພິ່ງເຫັນວ່າເປັນກຳເກົ່າ ຖືກປັດໄຈປຸງແຕ່ງ ສຳເລັດດ້ວຍເຈຕະນາ ເປັນທີ່ຕັ້ງແຫ່ງເວທະນາ

ນີ້ເຮົາຮຽກວ່າ ກຳເກົ່າ

ກຳໃໝ່ ເປັນແນວໃດ?
ຄື ກຳທີ່ບຸກຄົນເຮັດດ້ວຍກາຍ ວາຈາ ໃຈຢູ່
ນີ້ເຮົາຮຽກວ່າ ກຳໃໝ່

ຄວາມດັບກຳ ເປັນແນວໃດ?
ຄື ນິໂຣດທີ່ຖືກຕ້ອງວິມຸດຕິ ຍ້ອນດັບກາຍຍະກຳ ວະຈີກຳ ແລະ ມະໂນກຳໄດ້
ນີ້ເຮົາຮຽກວ່າ ຄວາມດັບກຳ

ປະຕິປະທາທີ່ໃຫ້ເຖິງຄວາມດັບກຳ ອັນໃດແດ່

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ຄິດຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ນີ້ເຮົາຮຽກວ່າ ປະຕິປະທາທີ່ໃຫ້ເຖິງຄວາມດັບກຳ

ກຳເກົ່າເຮົາໄດ້ສະແດງແລ້ວ ກຳໃໝ່ເຮົາໄດ້ສະແດງແລ້ວ ຄວາມດັບກຳເຮົາໄດ້ສະແດງແລ້ວ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບກຳເຮົາໄດ້ສະແດງແລ້ວ ດ້ວຍປະການດັ່ງນີ້

ພິກຂຸທັງຫຼາຍ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະເພິ່ງອາໄສຄວາມອະນຸເຄາະ ກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ຄື ຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

**ກຳມະນິໂຣທະສູດທີ ໑ ຈົບ**

# ໒. ປະຖົມນິບພານສັບປາຍະປະຕິປະທາສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ນິບພານ ສູດທີ ໑

[໑໔໗] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາທີ່ເປັນສັບປາຍະແກ່ນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ປະຕິປະທາທີ່ເປັນສັບປາຍະແກ່ນິບພານນັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມເຫັນວ່າ ຈັກຂຸບໍ່ທ່ຽງ ເຫັນວ່າ ຮູບບໍ່ທ່ຽງ ເຫັນວ່າ ຈັກຂຸວິນຍານບໍ່ທ່ຽງ ເຫັນວ່າ ຈັກຂຸສຳຜັດບໍ່ທ່ຽງ ເຫັນວ່າ ແມ່ນຄວາມສະເຫວີຍອາລົມ ທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງ ຯລຯ

ເຫັນວ່າ ຊິວຫາບໍ່ທ່ຽງ ເຫັນວ່າ ຣົດບໍ່ທ່ຽງ ເຫັນວ່າ ຊິວຫາວິນຍານບໍ່ທ່ຽງ ເຫັນວ່າ ຊິວຫາສຳຜັດບໍ່ທ່ຽງ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈກໍບໍ່ທ່ຽງ ຯລຯ

ເຫັນວ່າ ມະໂນບໍ່ທ່ຽງ ເຫັນວ່າ ທຳມາຣົມບໍ່ທ່ຽງ ເຫັນວ່າ ມະໂນວິນຍານບໍ່ທ່ຽງ ເຫັນວ່າ ມະໂນສຳຜັດບໍ່ທ່ຽງ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈກໍບໍ່ທ່ຽງ

ປະຕິປະທາທີ່ເປັນສັບປາຍະ ແກ່ນິບພານເປັນແນວນີ້ແລ

**ປະຖົມນິບພານສັບປາຍະປະຕິປະທາສູດທີ ໒ ຈົບ**

# ໓. ທຸຕິຍະນິບພານສັບປາຍະປະຕິປະທາສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ນິບພານ ສູດທີ ໒

[໑໒໗] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາທີ່ເປັນສັບປາຍະແກ່ນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ປະຕິປະທາທີ່ເປັນສັບປາຍະແກ່ນິບພານນັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມເຫັນວ່າ ຈັກຂຸເປັນທຸກ ເຫັນວ່າ ຮູບເປັນທຸກ ເຫັນວ່າ ຈັກຂຸວິນຍານເປັນທຸກ ເຫັນວ່າ ຈັກຂຸສຳຜັດເປັນທຸກ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກ ຫຼື ທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນທຸກ ຯລຯ

ເຫັນວ່າ ຊິວຫາເປັນທຸກ ຯລຯ ເຫັນວ່າ ມະໂນເປັນທຸກ ເຫັນວ່າ ທຳມາຣົມ ເປັນທຸກ ເຫັນວ່າ ມະໂນວິນຍານເປັນທຸກ ເຫັນວ່າ ມະໂນສຳຜັດເປັນທຸກ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນ ຍ້ອນມະໂນສຳຜັດເປັນປັດໄຈກໍເປັນທຸກ

ພິກຂຸທັງຫຼາຍ ປະຕິປະທາທີ່ເປັນສັບປາຍະແກ່ນິບພານເປັນແນວນີ້ແລ

**ທຸຕິຍະນິບພານສັບປາຍະປະຕິປະທາສູດທີ ໓ ຈົບ**

# ໒. ຕະຕິຍະນິບພານສັບປາຍະປະຕິປະທາສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ນິບພານ ສູດທີ ໓

[໑໒໘] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາທີ່ເປັນສັບປາຍະ ແກ່ນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ປະຕິປະທາທີ່ເປັນສັບປາຍະແກ່ນິບພານນັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມເຫັນວ່າ ຈັກຂຸເປັນອະນັດຕາ ເຫັນວ່າ ຮູບເປັນອະນັດຕາ ເຫັນວ່າ ຈັກຂຸວິນຍານເປັນອະນັດຕາ ເຫັນວ່າ ຈັກຂຸສຳຜັດເປັນອະນັດຕາ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນອະນັດຕາ ຯລຯ

ເຫັນວ່າ ຊິວຫາເປັນອະນັດຕາ ຯລຯ ເຫັນວ່າ ມະໂນເປັນອະນັດຕາ ເຫັນວ່າ ທຳມາຣົມເປັນອະນັດຕາ ເຫັນວ່າ ມະໂນວິນຍານເປັນອະນັດຕາ ເຫັນວ່າ ມະໂນສຳຜັດເປັນອະນັດຕາ ເຫັນວ່າ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນ ປັດໄຈກໍເປັນອະນັດຕາ

ພິກຂຸທັງຫຼາຍ ປະຕິປະທາທີ່ເປັນສັບປາຍະ ແກ່ນິບພານເປັນແນວນີ້ແລ

**ຕະຕິຍະນິບພານສັບປາຍະປະຕິປະທາສູດທີ ໘ ຈົບ**

# ໕. ຈະຕຸດຖະນິບພານສັບປາຍະປະຕິປະທາສູດ

## ວ່າດ້ວຍປະຕິປະທາທີ່ເປັນສັບປາຍະແກ່ນິບພານ ສູດທີ ໘

[໑໕໐] ພິກຂຸທັງຫຼາຍ ເຮົາຈັກສະແດງປະຕິປະທາ ທີ່ເປັນສັບປາຍະແກ່ນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ປະຕິປະທາທີ່ເປັນສັບປາຍະແກ່ນິບພານນັ້ນ ເປັນແນວໃດ?
ທ່ານທັງຫຼາຍ ເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຈັກຂຸທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?
ເປັນທຸກ ຂ້ານ້ອຍ
ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?
ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ຮູບທ່ຽງຫຼືບໍ່ທ່ຽງ?
ບໍ່ທ່ຽງ ຂ້ານ້ອຍ

ຈັກຂຸວິນຍານ ฯລฯ ຈັກຂຸສຳຜັດ ฯລฯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ທ່ຽງຫຼືບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ?

ຂໍ້ນັ້ນບໍ່ຄວນເລີຍ ຂ້ານ້ອຍ

ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ฯລฯ ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍ ອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພິກຂຸທັງຫຼາຍ ປະຕິປະທາທີ່ເປັນສັບປາຍະ ແກ່ນິບພານເປັນແນວນີ້ແລ

**ຈະຕຸດຖະນິບພານສັບປາຍະປະຕິປະທາສູດທີ ໕ ຈົບ**

# ໖. ອັນເຕວາສິກສູດ

## ວ່າດ້ວຍອັນເຕວາສິກ

[໑໕໑] ພິກຂຸທັງຫຼາຍ ພິກຂຸປະພຶດພົມມະຈັນນີ້ບໍ່ມີອັນເຕວາສິກ ບໍ່ມີອາຈານ ພິກຂຸຜູ້ມີອັນເຕວາສິກ ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ສ່ວນພິກຂຸຜູ້ບໍ່ມີອັນເຕວາສິກ ບໍ່ມີອາຈານ ຍ່ອມຢູ່ເປັນສຸກ ສະບາຍ

ພິກຂຸຜູ້ມີອັນເຕວາສິກ ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ເປັນແນວໃດ?

ຄື ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸໃນທຳວິໄນນີ້ ຍ້ອນເຫັນຮູບທາງຕາ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທຳທີ່ເປັນບາບອະກຸສົນຢູ່ພາຍໃນຂອງພິກຂຸນັ້ນ

ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອັນເຕວາສິກ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນຍ່ອມ

ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອາຈານ ຯລຯ

ອີກປະການໜຶ່ງ ທໍາທີ່ເປັນບາບອະກຸສົນ ມີຄວາມດໍາຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຊີມຣົດທາງລີ້ນ ທໍາທີ່ເປັນບາບອະກຸສົນຍ່ອມຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນຢູ່ພາຍໃນຂອງພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອັນເຕວາສິກ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອາຈານ ຯລຯ

ອີກປະການໜຶ່ງ ທໍາທີ່ເປັນບາບອະກຸສົນ ມີຄວາມດໍາຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນແກ່ພິກຂຸ ຍ້ອນຮູ້ແຈ້ງທໍາມາຣົມທາງໃຈ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນຍ່ອມຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນຢູ່ພາຍໃນຂອງພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອັນເຕວາສິກ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນຍ່ອມຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ມີອາຈານ

ພິກຂຸຜູ້ມີອັນເຕວາສິກ ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ເປັນແນວນີ້ແລ

ສ່ວນພິກຂຸຜູ້ບໍ່ມີອັນເຕວາສິກ ບໍ່ມີອາຈານ ຍ່ອມຢູ່ເປັນສຸກ ສະບາຍ ເປັນແນວໃດ?

ຄື ທໍາທີ່ເປັນບາບອະກຸສົນ ມີຄວາມດໍາຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມບໍ່ເກີດຂຶ້ນແກ່ພິກຂຸໃນທໍາວິໄນນີ້ ຍ້ອນເຫັນຮູບທາງຕາ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນຍ່ອມບໍ່ຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນບໍ່ຢູ່ພາຍໃນຂອງພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອັນເຕວາສິກ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອາຈານ ຯລຯ

ອີກປະການໜຶ່ງ ທໍາທີ່ເປັນບາບອະກຸສົນ ມີຄວາມດໍາຣິຊ່ານໄປ ເກື້ອກູນແກ່ສັງໂຍດ ຍ່ອມບໍ່ເກີດຂຶ້ນແກ່ພິກຂຸ ຍ້ອນຊີມຣົດທາງລີ້ນ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນຍ່ອມບໍ່ຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນບໍ່ຢູ່ພາຍໃນຂອງພິກຂຸນັ້ນ ເຫດນັ້ນເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອັນເຕວາສິກ ທໍາທີ່ເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທໍາທີ່ເປັນບາບອະກຸສົນບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອາຈານ ຯລຯ

ອີກປະການໜຶ່ງ ທໍາທີ່ເປັນບາບອະກຸສົນ ມີຄວາມດໍາຣິຊ່ານໄປ ເກື້ອກູນແກ່ສັງໂຍດ

ຍ່ອມບໍ່ເກີດຂຶ້ນແກ່ພິກຂຸ ຍ້ອນຮູ້ແຈ້ງທຳມາຣົມທາງໃຈ ທຳທີ່ເປັນບາບອະກຸສົນເຫຼົ່ານັ້ນ ຍ່ອມບໍ່ຢູ່ພາຍໃນຂອງພິກຂຸນັ້ນ ຍ້ອນທຳທີ່ເປັນບາບອະກຸສົນບໍ່ຢູ່ພາຍໃນຂອງພິກຂຸນັ້ນ ເຫດນັ້ນ ເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອັນເຕວາສິກ ທຳທີ່ເປັນບາບອະກຸສົນຍ່ອມບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ຍ້ອນທຳທີ່ເປັນບາບອະກຸສົນບໍ່ຟຸ້ງຂຶ້ນຖ້ວມພິກຂຸນັ້ນ ເຫດນັ້ນເຮົາຈຶ່ງຮຽກພິກຂຸນັ້ນວ່າ ຜູ້ບໍ່ມີອາຈານ

ພິກຂຸຜູ້ບໍ່ມີອັນເຕວາສິກ ບໍ່ມີອາຈານ ຍ່ອມຢູ່ເປັນສຸກ ສະບາຍ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະພຶດພົມມະຈັນນີ້ ບໍ່ມີອັນເຕວາສິກ ບໍ່ມີອາຈານ ພິກຂຸຜູ້ມີອັນເຕວາສິກ ມີອາຈານ ຍ່ອມຢູ່ເປັນທຸກ ບໍ່ສະບາຍ ພິກຂຸຜູ້ບໍ່ມີອັນເຕວາສິກ ບໍ່ມີອາຈານ ຍ່ອມຢູ່ເປັນສຸກ ສະບາຍ

**ອັນເຕວາສິກສູດທີ ໖ ຈົບ**

# ໗. ກິມັດຖິຍະພົມມະຈະຣິຍະສູດ

## ວ່າດ້ວຍຄຳຖາມກ່ຽວກັບປະໂຫຍດຂອງການປະພຶດພົມມະຈັນ

[໑໕໘] ພິກຂຸທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກທັງຫຼາຍ ເພິ່ງຖາມທ່ານທັງຫຼາຍວ່າ ທ່ານຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ ປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອຕ້ອງການອັນໃດ?

ທ່ານທັງຫຼາຍ ຖືກຖາມແນວນີ້ ເພິ່ງຕອບແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອກຳນົດຮູ້ທຸກ

ອັນໜຶ່ງ ຖ້າອັນຍະເດຍຣະຖີປະຣິພາຊົກທັງຫຼາຍ ເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ກໍທຸກທີ່ທ່ານທັງຫຼາຍ ປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອກຳນົດຮູ້ນັ້ນເປັນແນວໃດ?

ທ່ານທັງຫຼາຍ ຖືກຖາມແນວນີ້ ເພິ່ງຕອບແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ຈັກຂຸເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຈັກຂຸທີ່ເປັນທຸກນັ້ນ

ຮູບເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຮູບທີ່ເປັນທຸກນັ້ນ

ຈັກຂຸວິນຍານເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຈັກຂຸວິນຍານທີ່ເປັນທຸກນັ້ນ

ຈັກຂຸສຳຜັດເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຈັກຂຸສຳຜັດທີ່ເປັນທຸກນັ້ນ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈທີ່ເປັນທຸກນັ້ນ ຯລຯ

ຊິວຫາເປັນທຸກ ເຮົາທັງຫຼາຍ ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຊິວຫາທີ່ເປັນທຸກນັ້ນ ຯລຯ ມະໂນເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ມະໂນທີ່ເປັນທຸກນັ້ນ

ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍເປັນທຸກ ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈທີ່ເປັນທຸກນັ້ນ

ຜູ້ມີອາຍຸທັງຫຼາຍ ຂໍ້ນີ້ແລ ຄື ທຸກ ທີ່ເຮົາທັງຫຼາຍປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້

**ກິມັດຖິຍະພົມມະຈະຣິຍະສູດທີ ໗ ຈົບ**

# ๘. ອັດຖິນຸໂຂປະຣິຍາຍະສູດ

## ວ່າດ້ວຍຄຳຖາມກ່ຽວກັບເຫດ

[໑໕໓] ພິກຂຸທັງຫຼາຍ ພິກຂຸອາໄສເຫດໃດ ພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວຢູ່ຈົບ

ພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນມີຢູ່ບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນທີ່ເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍ ເມື່ອຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າຈັ່ງຊັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸອາໄສເຫດໃດພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນມີຢູ່

ອັນໜຶ່ງ ພິກຂຸອາໄສເຫດໃດພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ຯລຯ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນ ເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະ ໃນພາຍໃນຂອງເຮົາມີຢູ່ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ພິກຂຸເຫັນຮູບທາງຕາແລ້ວ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາມີຢູ່ ຫຼືຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ທຳເຫຼົ່ານີ້ເພິ່ງຮູ້ດ້ວຍຄວາມເຊື່ອ ເພິ່ງຮູ້ດ້ວຍຄວາມພໍໃຈ ເພິ່ງຮູ້ດ້ວຍການຟັງຕາມກັນມາ ເພິ່ງຮູ້ດ້ວຍການຄິດຕອງຕາມແນວເຫດຜົນ ຫຼື ເພິ່ງຮູ້ດ້ວຍການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວໄດ້ແດ່ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ
ທຳເຫຼົ່ານີ້ ເພິ່ງຮູ້ໄດ້ຍ້ອນເຫັນດ້ວຍປັນຍາບໍ່ແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ພິກຂຸອາໄສເຫດໃດພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນເປັນແນວນີ້ແລ ຯລຯ

ອີກປະການໜຶ່ງ ພິກຂຸຊິມຣົດທາງລີ້ນແລ້ວ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນ ເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາມີຢູ່ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ພິກຂຸຊິມຣົດທາງລີ້ນແລ້ວຈຶ່ງຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາມີຢູ່ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ພິກຂຸທັງຫຼາຍ ທຳເຫຼົ່ານີ້ເພິ່ງຮູ້ດ້ວຍຄວາມເຊື່ອ ເພິ່ງຮູ້ດ້ວຍຄວາມພໍໃຈ ເພິ່ງຮູ້ດ້ວຍການຟັງຕາມກັນມາ ເພິ່ງຮູ້ດ້ວຍການຄິດຕອງຕາມແນວເຫດຜົນ ຫຼື ເພິ່ງຮູ້ດ້ວຍການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວໄດ້ແດ່ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ
ທຳເຫຼົ່ານີ້ ເພິ່ງຮູ້ໄດ້ຍ້ອນເຫັນດ້ວຍປັນຍາບໍ່ແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ພິກຂຸອາໄສເຫດໃດພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນເປັນແນວນີ້ແລ ຯລຯ

ອີກປະການໜຶ່ງ ພິກຂຸຮູ້ແຈ້ງທຳມາຣົມທາງໃຈແລ້ວ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາມີຢູ່ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ພິກຂຸຮູ້ແຈ້ງທຳມາຣົມທາງໃຈຈຶ່ງຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນເຊິ່ງມີຢູ່ວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາມີຢູ່ ຮູ້ແຈ້ງຣາຄະ ໂທສະ ແລະໂມຫະໃນພາຍໃນ ເຊິ່ງບໍ່ມີວ່າ ຣາຄະ ໂທສະ ແລະໂມຫະໃນພາຍໃນຂອງເຮົາບໍ່ມີ

ທຳເຫຼົ່ານີ້ ເພິ່ງຮູ້ດ້ວຍຄວາມເຊື່ອ ເພິ່ງຮູ້ດ້ວຍຄວາມພໍໃຈ ເພິ່ງຮູ້ດ້ວຍການຟັງຕາມກັນມາ ເພິ່ງຮູ້ດ້ວຍການຄິດຕອງຕາມແນວເຫດຜົນ ຫຼື ເພິ່ງຮູ້ດ້ວຍການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວໄດ້ແດ່ບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ
ທຳເຫຼົ່ານີ້ ເພິ່ງຮູ້ໄດ້ຍ້ອນເຫັນດ້ວຍປັນຍາບໍ່ແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ພິກຂຸອາໄສເຫດໃດພະຍາກອນອະຣະຫັດຕະຜົນ ເວັ້ນຈາກຄວາມເຊື່ອ ເວັ້ນຈາກຄວາມພໍໃຈ ເວັ້ນຈາກການຟັງຕາມກັນມາ ເວັ້ນຈາກການຄິດຕອງຕາມແນວເຫດຜົນ ເວັ້ນຈາກການເຂົ້າໄດ້ກັບທິດສະດີທີ່ພິນິດໄວ້ແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ເຫດນັ້ນເປັນແນວນີ້ແລ

**ອັດຖິນຸໂຂປະຣິຍາຍະສູດທີ ໗ ຈົບ**

## ໘. ອິນທະຣິຍະສຳປັນນະສູດ

### ວ່າດ້ວຍຜູ້ພຽບພ້ອມດ້ວຍອິນຊີ

[໑໕໔] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ພຣະອົງຕັດວ່າ ພິກຂຸພຽບພ້ອມດ້ວຍອິນຊີ ພິກຂຸພຽບພ້ອມດ້ວຍອິນຊີ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸຈຶ່ງເປັນຜູ້ພຽບພ້ອມດ້ວຍອິນຊີ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຫາກພິກຂຸພິຈາລະນາເຫັນຄວາມເກີດຂຶ້ນ ແລະຄວາມເສື່ອມໄປໃນຈັກຂຸນຊີຢູ່ ຍ່ອມເບື່ອໜ່າຍໃນຈັກຂຸນຊີ ຯລຯ ຫາກພິກຂຸພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນຊິວຫິນຊີຢູ່ ຍ່ອມເບື່ອໜ່າຍໃນຊິວຫິນຊີ ຯລຯ ຫາກພິກຂຸພິຈາລະນາເຫັນຄວາມເກີດຂຶ້ນ ແລະ ຄວາມເສື່ອມໄປໃນມະນິນຊີຢູ່ ຍ່ອມເບື່ອໜ່າຍໃນມະນິນຊີ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຯລຯ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງ

ວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງເປັນຜູ້ພຽບພ້ອມດ້ວຍອິນຊີ

**ອິນທະຣິຍະສຳປັນນະສູດທີ ໙ ຈົບ**

# ໑໐. ທຳມະກະຖິກະປຸດສາສູດ

## ວ່າດ້ວຍການຖາມເລື້ອງພຣະທຳມະກະຖຶກ

[໑໕໕] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ພິກຂຸເປັນທຳມະກະຖຶກ ພິກຂຸເປັນທຳມະກະຖຶກ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸຈຶ່ງເປັນທຳມະກະຖຶກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຈັກຂຸ ຄວນຮຽກໄດ້ວ່າ ພິກຂຸ ເປັນທຳມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຈັກຂຸ ຄວນຮຽກໄດ້ວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນຈັກຂຸ ຄວນຮຽກໄດ້ວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ ຯລຯ

ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບຊິວຫາ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ ຯລຯ

ຫາກພິກຂຸສະແດງທຳເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບມະໂນ ຄວນຮຽກໄດ້ວ່າ ພິກຂຸເປັນທຳມະກະຖຶກ ຫາກພິກຂຸເປັນຜູ້ປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບມະໂນ ຄວນຮຽກໄດ້ວ່າ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ

ຫາກພິກຂຸເປັນຜູ້ລຸດພົ້ນຍ້ອນຄວາມເບື່ອໜ່າຍ ຍ້ອນຄາຍກຳໜັດ ຍ້ອນດັບ ບໍ່ຖືໝັ້ນມະໂນ ຄວນຮຽກໄດ້ວ່າ ພິກຂຸຜູ້ບັນລຸນິບພານໃນປັດຈຸບັນ

**ທັມກະຖິກະປຸດສາສູດທີ ໑໐ ຈົບ**

**ນະວະປຸຣານະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ກຳມະນິໂຣທະສູດ
໒. ປະຖົມນິບພານສັບປາຍະປະຕິປະທາສູດ
໓. ທຸຕິຍະນິບພານສັບປາຍະປະຕິປະທາສູດ
໔. ຕະຕິຍະນິບພານສັບປາຍະປະຕິປະທາສູດ
໕. ຈະຕຸດຖະນິບພານສັບປາຍະປະຕິປະທາສູດ
໖. ອັນເຕວາສິກະສູດ
໗. ກິມັດຖິຍະພົມມະຈະຣິຍະສູດ
໘. ອິນທະຣິຍະສຳປັນນະສູດ
໙. ອັດຖິນຸໂຂປະຣິຍາຍະສູດ
໑໐. ທຳມະກະຖິກະປຸດສາສູດ

**ຕະຕິຍະປັນນາດໃນສະລາຍະຕະນະວັກ ຈົບບໍລິບູນ**

# ລວມວັກທີ່ມີໃນຕະຕິຍະປັນນາດນີ້ ຄື

໑. ໂຍຄັກເຂມິວັກ
໒. ໂລກກາມມະຄຸນວັກ
໓. ຄະຫະປະຕິວັກ
໔. ເທວະທະຫະວັກ
໕. ນະວະປຸຣານະວັກ
໔. ຈະຕຸດຖະປັນນາດ

# ໑. ນັນທິກະຂະຍະວັກ

## ໝວດວ່າດ້ວຍຄວາມໝົດສິ້ນໄປແຫ່ງຄວາມເພີດເພີນ

# ໑. ອັດຊັດຕະນັນທິກະຂະຍະສູດ

## ວ່າດ້ວຍຄວາມໝົດສິ້ນໄປແຫ່ງຄວາມເພີດເພີນໃນໃນອາຍະຕະນະພາຍໃນ

[໑໕໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫັນຈັກຂຸທີ່ບໍ່ທ່ຽງນັ້ນເອງວ່າ ບໍ່ທ່ຽງ ຄວາມເຫັນຂອງພິກຂຸນັ້ນເປັນສຳມາທິດຖິ (ຄວາມເຫັນຖືກ) ເມື່ອເຫັນຖືກກໍຍ່ອມເບື່ອໜ່າຍ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ ฯລฯ

ພິກຂຸເຫັນຊິວຫາທີ່ບໍ່ທ່ຽງນັ້ນເອງວ່າ ບໍ່ທ່ຽງ ຄວາມເຫັນຂອງພິກຂຸນັ້ນ ເປັນສຳມາທິດຖິ ເມື່ອເຫັນຖືກກໍຍ່ອມເບື່ອໜ່າຍ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ฯລฯ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

ພິກຂຸທັງຫຼາຍ ພິກຂຸເຫັນມະໂນທີ່ບໍ່ທ່ຽງນັ້ນເອງວ່າ ບໍ່ທ່ຽງ ຄວາມເຫັນຂອງພິກຂຸນັ້ນ ເປັນສຳມາທິດຖິ ເມື່ອເຫັນຖືກກໍຍ່ອມເບື່ອໜ່າຍ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນ ແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

**ອັດຊັດຕະນັນທິກະຂະຍະສູດທີ ໑ ຈົບ**

# ໒. ພາຫິຣະນັນທິກະຂະຍະສູດ

## ວ່າດ້ວຍຄວາມໝົດສິ້ນໄປແຫ່ງຄວາມເພີດເພີນໃນໃນອາຍະຕະນະພາຍນອກ

[໑໕໗] ພິກຂຸທັງຫຼາຍ ພິກຂຸເຫັນຮູບທີ່ບໍ່ທ່ຽງນັ້ນເອງວ່າ ບໍ່ທ່ຽງ ຄວາມເຫັນຂອງພິກຂຸນັ້ນ ເປັນສຳມາທິດຖິ ເມື່ອເຫັນຖືກກໍຍ່ອມເບື່ອໜ່າຍ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນ ແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

ພິກຂຸເຫັນສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ. ໂຜດຖັບພະ ຯລຯ ພິກຂຸເຫັນທຳມາຣົມ ທີ່ບໍ່ທ່ຽງນັ້ນເອງວ່າ ບໍ່ທ່ຽງ ຄວາມເຫັນຂອງພິກຂຸນັ້ນເປັນສຳມາທິດຖິ ເມື່ອເຫັນຖືກກໍ່ຍ່ອມເບື່ອໜ່າຍ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

**ພາຫິຣະນັນທິກະຂະຍະສູດທີ ໘ ຈົບ**

## ໙. ອັດຊັດຕະອະນິດຈະນັນທິກະຂະຍະສູດ

ວ່າດ້ວຍຄວາມໝົດສິ້ນໄປແຫ່ງຄວາມເພີດເພີນໃນອາຍະຕະນະພາຍໃນທີ່ບໍ່ທ່ຽງ

[໑໕໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມະນະສິການຈັກຂຸໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຈັກຂຸຕາມຄວາມເປັນຈິງ ເມື່ອມະນະສິການຈັກຂຸໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຈັກຂຸຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ ຯລຯ

ທ່ານທັງຫຼາຍ ຈົ່ງມະນະສິການຊິວຫາໂດຍແຍບຄາຍ ແລະ ຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຊິວຫາຕາມຄວາມເປັນຈິງ ເມື່ອມະນະສິການຊິວຫາໂດຍແຍບຄາຍ ແລະ ພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຊິວຫາຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍແມ່ນໃນຊິວຫາ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ ຯລຯ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມະນະສິການມະໂນໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງມະໂນຕາມຄວາມເປັນຈິງ ເມື່ອມະນະສິການມະໂນໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງມະໂນຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍແມ່ນໃນມະໂນ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

**ອັດຊັດຕະອະນິດຈະນັນທິກະຂະຍະສູດທີ ໙ ຈົບ**

# ໔. ພາຫິຣະອະນິດຈະນັນທິກະຂະຍະສູດ

## ວ່າດ້ວຍຄວາມໝົດສິ້ນໄປແຫ່ງຄວາມເພີດເພີນໃນອາຍະຕະນະພາຍນອກທີ່ບໍ່ທ່ຽງ

[໑໕໙] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມະນະສິການຮູບໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຮູບຕາມຄວາມເປັນຈິງ ເມື່ອມະນະສິການຮູບໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງຮູບຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

ທ່ານທັງຫຼາຍ ຈົ່ງມະນະສິການສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທ່ານທັງຫຼາຍ ຈົ່ງມະນະສິການທຳມາຣົມໂດຍແຍບຄາຍ ແລະຈົ່ງພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງທຳມາຣົມ ຕາມຄວາມເປັນຈິງ ເມື່ອມະນະສິການທຳມາຣົມໂດຍແຍບຄາຍ ແລະພິຈາລະນາເຫັນຄວາມບໍ່ທ່ຽງແຫ່ງທຳມາຣົມຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍແມ່ນໃນທຳມາຣົມ ຍ້ອນໝົດສິ້ນຄວາມເພີດເພີນໃນຈຶ່ງໝົດສິ້ນຣາຄະ ຍ້ອນໝົດສິ້ນຣາຄະຈຶ່ງໝົດສິ້ນຄວາມເພີດເພີນ ຍ້ອນໝົດສິ້ນທັງຄວາມເພີດເພີນໃນແລະຣາຄະ ເຮົາຈຶ່ງຮຽກວ່າ ຈິດລຸດພົ້ນດີແລ້ວ

**ພາຫິຣະອະນິດຈະນັນທິກະຂະຍະສູດທີ ໔ ຈົບ**

# ໕. ຊີວະກຳພະວະນະສະມາທິສູດ

## ວ່າດ້ວຍການຈະເລີນສະມາທິໃນຊີວະກຳພະວັນ

[໑໖໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຊີວະກຳພະວັນ ເຂດນະຄອນຣາດຊະຄຶໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ຯລຯ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຈະເລີນສະມາທິ ເມື່ອພິກຂຸມີຈິດຕັ້ງໝັ້ນແລ້ວ (ສິ່ງທັງປວງ) ຍ່ອມຜາກົດຕາມຄວາມເປັນຈິງ

ກໍອັນໃດນໍ? ຊື່ວ່າ ຜາກົດຕາມຄວາມເປັນຈິງ

ຄື ຈັກຂຸຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຮູບຜາກົດຕາມຄວາມເປັນຈິງ ວ່າ ບໍ່ທ່ຽງ ຈັກຂຸວິນຍານຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຈັກຂຸສຳຜັດຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ກໍຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຯລຯ

ຊິວຫາຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຯລຯ

ມະໂນຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ທຳມາຣົມຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນ ທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນສະມາທິ ເມື່ອພິກຂຸມີຈິດຕັ້ງໝັ້ນດີແລ້ວ (ສິ່ງທັງປວງ) ຍ່ອມຜາກົດຕາມຄວາມເປັນຈິງ

**ຊີວະກຳພະວະນະສະມາທິສູດທີ ໕ ຈົບ**

# ໖. ຊີວະກຳພະວະນະປະຕິສັນລານະສູດ

## ວ່າດ້ວຍການຫຼີບຫຼີກໃນຊີວະກຳພະວັນ

[໑໖໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຊີວະກຳພະວັນ ເຂດນະຄອນຣາດຊະຄືໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ຯລຯ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງຫຼີບຫຼີກປະກອບຄວາມພຽນເທີ້ນ ເມື່ອພິກຂຸຫຼີບຫຼີກຢູ່ (ສິ່ງທັງປວງ) ຍ່ອມຜາກົດຕາມຄວາມເປັນຈິງ

ກໍອັນໃດນໍ? ຊື່ວ່າ ຜາກົດຕາມຄວາມເປັນຈິງ

ຄື ຈັກຂຸຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຮູບຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຈັກຂຸວິນຍານຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຈັກຂຸສຳຜັດຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ຯລຯ

ມະໂນຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍຜາກົດຕາມຄວາມເປັນຈິງວ່າ ບໍ່ທ່ຽງ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຫຼີບຫຼີກປະກອບຄວາມພຽນເທີ້ນ ເມື່ອພິກຂຸຫຼີບຫຼີກຢູ່ (ສິ່ງທັງປວງ) ຍ່ອມຜາກົດຕາມຄວາມເປັນຈິງ

**ຊີວະກຳພະວະນະປະຕິສັນລານະສູດທີ ໖ ຈົບ**

# ໗. ໂກດທິກະອະນິດຈະສູດ

## ວ່າດ້ວຍຊົງສະແດງຄວາມບໍ່ທ່ຽງແກ່ພຣະມະຫາໂກດຖິກະ

[໑໙໔] ຄັ້ງນັ້ນ ທ່ານພຣະມະຫາໂກດຖິກະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໆລໆ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າ ພຣະອົງໄດ້ຟັງແລ້ວຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂກດຖິກະ ສິ່ງໃດບໍ່ທ່ຽງ ທ່ານເພິ່ງລະສັນທະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າບໍ່ທ່ຽງ

ຄື ຈັກຂຸບໍ່ທ່ຽງ ທ່ານເພິ່ງລະສັນທະໃນຈັກຂຸນັ້ນ ຮູບບໍ່ທ່ຽງ ທ່ານເພິ່ງລະສັນທະໃນຮູບນັ້ນ ຈັກຂຸວິນຍານບໍ່ທ່ຽງ ທ່ານເພິ່ງລະສັນທະໃນຈັກຂຸວິນຍານນັ້ນ ຈັກຂຸສຳຜັດບໍ່ທ່ຽງ ທ່ານເພິ່ງລະສັນທະໃນຈັກຂຸສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດ ເປັນປັດໄຈທີ່ບໍ່ທ່ຽງນັ້ນ ໆລໆ

ຊິວຫາ ບໍ່ທ່ຽງ ທ່ານເພິ່ງລະສັນທະໃນຊິວຫານັ້ນ ຣົດບໍ່ທ່ຽງ ທ່ານເພິ່ງລະສັນທະໃນຣົດນັ້ນ ຊິວຫາວິນຍານບໍ່ທ່ຽງ ທ່ານເພິ່ງລະສັນທະໃນຊິວຫາວິນຍານນັ້ນ ຊິວຫາສຳຜັດບໍ່ທ່ຽງ ທ່ານເພິ່ງລະສັນທະໃນຊິວຫາສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດເປັນປັດໄຈກໍບໍ່ທ່ຽງ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຊິວຫາສຳຜັດ ເປັນປັດໄຈທີ່ບໍ່ທ່ຽງນັ້ນ ໆລໆ

ມະໂນບໍ່ທ່ຽງ ທ່ານເພິ່ງລະສັນທະໃນມະໂນນັ້ນ ທຳມາຣົມບໍ່ທ່ຽງ ທ່ານເພິ່ງລະສັນທະໃນທຳມາຣົມນັ້ນ ມະໂນວິນຍານບໍ່ທ່ຽງ ທ່ານເພິ່ງລະສັນທະໃນມະໂນວິນຍານນັ້ນ ມະໂນສຳຜັດບໍ່ທ່ຽງ ທ່ານເພິ່ງລະສັນທະໃນມະໂນສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກ ທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈກໍບໍ່ທ່ຽງ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈທີ່ບໍ່ທ່ຽງນັ້ນ

ໂກດຖິກະ ສິ່ງໃດບໍ່ທ່ຽງ ທ່ານເພິ່ງລະສັນທະໃນສິ່ງນັ້ນ

**ໂກດທິກະອະນິດຈະສູດທີ ໗ ຈົບ**

# ໘. ໂກດຖິກະທຸກຂະສູດ

## ວ່າດ້ວຍຊົງສະແດງຄວາມທຸກແກ່ພຣະມະຫາໂກດຖິກະ

[໑໖໓] ຄັ້ງນັ້ນ ທ່ານພຣະມະຫາໂກດຖິກະ ຯລຯ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຯລຯ ອຸທິດກາຍ ແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂກດຖິກະ ສິ່ງໃດເປັນທຸກ ທ່ານເພິ່ງລະສັນທະໃນສິ່ງນັ້ນ ກໍອັນໃດນໍຊື່ວ່າ ເປັນທຸກ

ຄື ຈັກຂຸເປັນທຸກ ທ່ານເພິ່ງລະສັນທະໃນຈັກຂຸນັ້ນ ຮູບເປັນທຸກ ທ່ານເພິ່ງລະສັນທະໃນຮູບນັ້ນ ຈັກຂຸວິນຍານເປັນທຸກ ທ່ານເພິ່ງລະສັນທະໃນຈັກຂຸວິນຍານນັ້ນ ຈັກຂຸສຳຜັດເປັນທຸກ ທ່ານເພິ່ງລະສັນທະໃນຈັກຂຸສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນທຸກ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນຈັກຂຸສຳຜັດ ເປັນປັດໄຈທີ່ເປັນທຸກນັ້ນ ຯລຯ

ຊິວຫາເປັນທຸກ ທ່ານເພິ່ງລະສັນທະໃນຊິວຫານັ້ນ ຯລຯ

ມະໂນເປັນທຸກ ທ່ານເພິ່ງລະສັນທະໃນມະໂນນັ້ນ ທຳມາຣົມເປັນທຸກ ທ່ານເພິ່ງລະ ສັນທະໃນທຳມາຣົມນັ້ນ ມະໂນວິນຍານເປັນທຸກ ທ່ານເພິ່ງລະສັນທະໃນມະໂນວິນຍານນັ້ນ ມະໂນສຳຜັດເປັນທຸກ ທ່ານເພິ່ງລະສັນທະໃນມະໂນສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈກໍເປັນທຸກ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈທີ່ເປັນທຸກນັ້ນ

ໂກດຖິກະ ສິ່ງໃດເປັນທຸກ ທ່ານເພິ່ງລະສັນທະໃນສິ່ງນັ້ນ

**ໂກດຖິກະທຸກຂະສູດທີ ໘ ຈົບ**

# ໙. ໂກດຖິກະອະນັດຕະສູດ

## ວ່າດ້ວຍຊົງສະແດງອະນັດຕາແກ່ພຣະມະຫາໂກດຖິກະ

[໑໖໔] ຄັ້ງນັ້ນ ທ່ານພຣະມະຫາໂກດຖິກະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ຯລຯ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂກດຖິກະ ສິ່ງໃດເປັນອະນັດຕາ ທ່ານເພິ່ງລະສັນທະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ເປັນອະນັດຕາ

ຄື ຈັກຂຸເປັນອະນັດຕາ ທ່ານເພິ່ງລະສັນທະໃນຈັກຂຸນັ້ນ ຣູບເປັນອະນັດຕາ ທ່ານເພິ່ງລະສັນທະ ໃນຣູບນັ້ນ ຈັກຂຸວິນຍານເປັນອະນັດຕາ ທ່ານເພິ່ງລະສັນທະໃນຈັກຂຸວິນຍານນັ້ນ ຈັກຂຸສຳຜັດ ເປັນອະນັດຕາ ທ່ານເພິ່ງລະສັນທະໃນຈັກຂຸສຳຜັດນັ້ນ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນອະນັດຕາ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈທີ່ເປັນອະນັດຕານັ້ນ ຯລຯ

ຊິວຫາເປັນອະນັດຕາ ທ່ານເພິ່ງລະສັນທະໃນຊິວຫານັ້ນ ຯລຯ

ມະໂນເປັນອະນັດຕາ ທ່ານເພິ່ງລະສັນທະໃນມະໂນນັ້ນ ທຳມາຣົມເປັນອະນັດຕາ ທ່ານເພິ່ງລະສັນທະໃນທຳມາຣົມນັ້ນ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈກໍເປັນອະນັດຕາ ທ່ານເພິ່ງລະສັນທະໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈທີ່ເປັນອະນັດຕານັ້ນ

ໂກດຖິກະ ສິ່ງໃດເປັນອະນັດຕາ ທ່ານເພິ່ງລະສັນທະໃນສິ່ງນັ້ນ

**ໂກດຖິກະອະນັດຕະສູດທີ ໙ ຈົບ**

# ໑໐. ມິດສາທິດຖິປະຫານະສູດ

## ວ່າດ້ວຍການລະມິດສາທິດຖິ

[໑໖໕] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ ເຫັນແນວໃດ? ຈຶ່ງລະມິດສາທິດຖິ (ຄວາມເຫັນຜິດ) ໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອຮູ້ ເຫັນຈັກຂຸໂດຍຄວາມບໍ່ທ່ຽງ ຈຶ່ງລະມິດສາທິດຖິໄດ້ ເມື່ອຮູ້ ເຫັນຮູບໂດຍຄວາມບໍ່ທ່ຽງ ຈຶ່ງລະມິດສາທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸວິນຍານໂດຍຄວາມບໍ່ທ່ຽງຈຶ່ງລະມິດສາທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸສຳຜັດໂດຍຄວາມບໍ່ທ່ຽງ ຈຶ່ງລະມິດສາທິດຖິໄດ້ ຯລຯ ເມື່ອຮູ້ ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈໂດຍຄວາມບໍ່ທ່ຽງ ຈຶ່ງລະມິດສາທິດຖິໄດ້

ພິກຂຸ ບຸກຄົນເມື່ອຮູ້ ເຫັນແນວນີ້ ຈຶ່ງລະມິດສາທິດຖິໄດ້

**ມິດສາທິດຖິປະຫານະສູດທີ ໑໐ ຈົບ**

# ໑໑. ສັກກາຍະທິດຖິປະຫານະສູດ

## ວ່າດ້ວຍການລະສັກກາຍະທິດຖິ

[໑໖໒] ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ ເຫັນແນວໃດ? ຈຶ່ງລະສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ) ໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອຮູ້ ເຫັນຈັກຂຸໂດຍຄວາມເປັນທຸກ ຈຶ່ງລະສັກກາຍະທິດຖິໄດ້ ເມື່ອຮູ້ ເຫັນຮູບໂດຍຄວາມເປັນທຸກ ຈຶ່ງລະສັກກາຍະທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸວິນຍານໂດຍຄວາມເປັນທຸກ ຈຶ່ງລະສັກກາຍະທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸສຳຜັດໂດຍຄວາມເປັນທຸກ ຈຶ່ງລະສັກກາຍະທິດຖິໄດ້ ຯລຯ ເມື່ອຮູ້ ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈໂດຍຄວາມເປັນທຸກ ຈຶ່ງລະສັກກາຍະທິດຖິໄດ້

ພິກຂຸ ບຸກຄົນເມື່ອຮູ້ ເຫັນແນວນີ້ ຈຶ່ງລະສັກກາຍະທິດຖິໄດ້

**ສັກກາຍະທິດຖິປະຫານະສູດທີ ໑໑ ຈົບ**

# ໑໒. ອັດຕານຸທິດຖິປະຫານະສູດ

## ວ່າດ້ວຍການລະອັດຕານຸທິດຖິ

[໑໖໗] ຄັ້ງນັ້ນ ພິກຂຸອົງໜຶ່ງ ຯລຯ ໄດ້ທູນຖາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນເມື່ອຮູ້ ເຫັນແນວໃດ ຈຶ່ງລະອັດຕານຸທິດຖິໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ບຸກຄົນເມື່ອຮູ້ ເຫັນຈັກຂຸໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ເມື່ອຮູ້ ເຫັນຮູບໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸວິນຍານໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ເມື່ອຮູ້ ເຫັນຈັກຂຸສຳຜັດ ໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ເມື່ອຮູ້ ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ຯລຯ

ເມື່ອຮູ້ ເຫັນຊິວຫາໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ຯລຯ

ເມື່ອຮູ້ ເຫັນມະໂນໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້ ເມື່ອຮູ້ ເຫັນທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ເມື່ອຮູ້ ເຫັນແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈໂດຍຄວາມເປັນອະນັດຕາ ຈຶ່ງລະອັດຕານຸທິດຖິໄດ້

ພິກຂຸ ບຸກຄົນເມື່ອຮູ້ ເຫັນແນວນີ້ ຈຶ່ງລະອັດຕານຸທິດຖິໄດ້

**ອັດຕານຸທິດຖິປະຫານະສູດທີ ໑໘ ຈົບ**

**ບັນທິກະຂະຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອັດຊັດຕະບັນທິກະຂະຍະສູດ | ໒. ພາຫິຣະບັນທິກະຂະຍະສູດ |
| ໓. ອັດຊັດຕະອະນິດຈະບັນທິກະຂະຍະສູດ | ໔. ພາຫິຣະອະນິດຈະບັນທິກະຂະຍະສູດ |
| ໕. ຊີວະກຳພະວະນະສະມາທິສູດ | ໖. ຊີວະກຳພະວະນະປະຕິສັນລານະສູດ |
| ໗. ໂກດທິກະອະນິດຈະສູດ | ໘. ໂກດຖິກະທຸກຂະສູດ |
| ໙. ໂກດຖິກະອະນັດຕະສູດ | ໑໐. ມິດສາທິດຖິປະຫານະສູດ |
| ໑໑. ສັກກາຍະທິດຖິປະຫານະສູດ | ໑໒. ອັດຕານຸທິດຖິປະຫານະສູດ |

# ໘. ສັດຖິເປີຍຍາລະວັກ

### ໝວດວ່າດ້ວຍພຣະສູດຫຍໍ້ ໒໐ ສູດ

## ໑. ອັດຊັດຕະອະນິດຈະສັນທະສູດ

### ວ່າດ້ວຍການລະສັນທະໃນອາຍະຕະນະພາຍໃນບ່ອນບໍ່ທ່ຽງ

[໑໖໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ບໍ່ທ່ຽງ

ຄື ຈັກຂຸບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະໃນຈັກຂຸນັ້ນ ຯລຯ ຊິວຫາບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະໃນຊິວຫານັ້ນ ຯລຯ ມະໂນບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະໃນມະໂນນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະໃນສິ່ງນັ້ນ

**ອັດຊັດຕະອະນິດຈະສັນທະສູດທີ ໑ ຈົບ**

## ໒. ອັດຊັດຕະອະນິດຈະຣາຄະສູດ

### ວ່າດ້ວຍການລະຣາຄະໃນອາຍະຕະນະພາຍໃນທີ່ບໍ່ທ່ຽງ

[໑໖໘] ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ບໍ່ທ່ຽງ

ຄື ຈັກຂຸບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນຈັກຂຸນັ້ນ ຯລຯ ຊິວຫາບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນຊິວຫານັ້ນ ຯລຯ ມະໂນບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະຣາຄະໃນມະໂນນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະຣາຄະໃນສິ່ງນັ້ນ

**ອັດຊັດຕະອະນິດຈະຣາຄະສູດທີ ໒ ຈົບ**

# ៩. ອັດຊັດຕະອະນິດຈະສັນທະຣາຄະສູດ

## ວ່າດ້ວຍການລະສັນທະຣາຄະໃນອາຍະຕະນະພາຍໃນທີ່ບໍ່ທ່ຽງ

[໑໗໐] ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ບໍ່ທ່ຽງ

ຄື ຈັກຂຸບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນຈັກຂຸນັ້ນ ຯລຯ ຊິວຫາບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນຊິວຫານັ້ນ ຯລຯ ມະໂນບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະຣາຄະໃນມະໂນນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ອັດຊັດຕະອະນິດຈະສັນທະຣາຄະສູດທີ ៩ ຈົບ**

# ໘-໙. ທຸກຂະສັນທາທິສູດ

## ວ່າດ້ວຍການລະສັນທະເປັນຕົ້ນໃນອາຍະຕະນະພາຍໃນທີ່ເປັນທຸກ

[໑໗໑-໑໗៩] ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ເປັນທຸກ

ຄື ຈັກຂຸເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຈັກຂຸນັ້ນ ຯລຯ

ຊິວຫາເປັນທຸກ ຯລຯ

ມະໂນເປັນທຸກ ທ່ານທັງຫຼາຍ ເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນມະໂນນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ທຸກຂະສັນທາທິສູດທີ ໘-໙ ຈົບ**

# ໗-໙. ອະນັດຕະສັນທາທິສູດ

## ວ່າດ້ວຍການລະສັນທະເປັນຕົ້ນໃນອາຍະຕະນະພາຍໃນທີ່ເປັນອະນັດຕາ

[໑໗໔-໑໗໖] ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ເປັນອະນັດຕາ

ຄື ຈັກຂຸເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຈັກຂຸນັ້ນ ຯລຯ

ຄານະເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຄານະນັ້ນ

ຊິວຫາເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຊິວຫານັ້ນ ຯລຯ

ມະໂນເປັນອະນັດຕາ ທ່ານທັງຫຼາຍ ເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນມະໂນນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະ ສັນທະຣາຄະໃນສິ່ງນັ້ນ

**ອະນັດຕະສັນທາທິສູດທີ ໗-໙ ຈົບ**

# ໑໐-໑໔. ພາຫິຣານິດຈະສັນທາທິສູດ

## ວ່າດ້ວຍການລະສັນທະເປັນຕົ້ນໃນອາຍະຕະນະພາຍນອກທີ່ບໍ່ທ່ຽງ

[໑໗໗-໑໗໙] ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ບໍ່ທ່ຽງ

ຄື ຮູບ ບໍ່ທ່ຽງ ທ່ານທັງຫຼາຍ ເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຮູບນັ້ນ

ສັດທະ ບໍ່ທ່ຽງ ຯລຯ
ຄັນທະ ບໍ່ທ່ຽງ ຯລຯ
ຣົດ ບໍ່ທ່ຽງ ຯລຯ
ໂຜດຖັບພະ ບໍ່ທ່ຽງ ຯລຯ

ທຳມາຣົມບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນທຳມາຣົມນັ້ນ

ພິກຂຸທັງຫຼາຍ ສິ່ງໃດບໍ່ທ່ຽງ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ພາຫິຣານິດຈະສັນທາທິສູດທີ ໑໐-໑໘ ຈົບ**

# ໑໓-໑໕. ພາຫິຣະທຸກຂະສັນທາທິສູດ

## ວ່າດ້ວຍການລະສັນທະເປັນຕົ້ນໃນອາຍະຕະນະພາຍນອກທີ່ເປັນທຸກ

[໑໗໐-໑໗໘] ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ເປັນທຸກ

ຄື ຮູບເປັນທຸກ ທ່ານທັງຫຼາຍ ເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນຮູບນັ້ນ

ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນທຳມາຣົມນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນທຸກ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

**ພາຫິຣະທຸກຂະສັນທາທິສູດທີ ໑໓-໑໕ ຈົບ**

# ໑໖-໑໘. ພາຫິຣານັດຕະສັນທາທິສູດ

## ວ່າດ້ວຍການລະສັນທະເປັນຕົ້ນໃນອາຍະຕະນະພາຍນອກທີ່ເປັນອະນັດຕາ

[໑໘໓-໑໘໕] ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະ ຣາຄະ ເພິ່ງລະສັນທະຣາຄະໃນສິ່ງນັ້ນ

ກໍອັນໃດນໍ? ຊື່ວ່າ ເປັນອະນັດຕາ

ຄື ຮູບເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະ ໃນຮູບນັ້ນ

ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມເປັນອະ ນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງລະສັນທະຣາຄະໃນທຳມາຣົມນັ້ນ

ພິກຂຸທັງຫຼາຍ ສິ່ງໃດເປັນອະນັດຕາ ທ່ານທັງຫຼາຍເພິ່ງລະສັນທະ ເພິ່ງລະຣາຄະ ເພິ່ງ ລະສັນທະຣາຄະໃນສິ່ງນັ້ນ

**ພາຫິຣານັດຕະສັນທາທິສູດທີ ໑໖-໑໘ ຈົບ**

# ໑໙. ອັດຊັດຕາຕີຕານິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນບ່ອນເປັນອະດີດບໍ່ທ່ຽງ

[໑໘໖] ພິກຂຸທັງຫຼາຍ ຈັກຂຸ ທີ່ເປັນອະດີດບໍ່ທ່ຽງ ຯລຯ

ຊິວຫາ ທີ່ເປັນອະດີດບໍ່ທ່ຽງ ຯລຯ

ມະໂນ ທີ່ເປັນອະດີດບໍ່ທ່ຽງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຯລຯ ຍ່ອມເບື່ອໜ່າຍແມ່ນໃນ ຊິວຫາ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນ ມະໂນ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດ ກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕານິດຈະສູດທີ ໑໙ ຈົບ**

# ໘໐. ອັດຊັດຕານາຄະຕານິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະນາຄົດບໍ່ທ່ຽງ

[໑໖໗] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະນາຄົດບໍ່ທ່ຽງ ຯລຯ ຊິວຫາທີ່ເປັນອະນາຄົດ ບໍ່ທ່ຽງ ຯລຯ ມະໂນທີ່ເປັນອະນາຄົດບໍ່ທ່ຽງ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕານາຄະຕານິດຈະສູດທີ ໘໐ ຈົບ**

# ໘໑. ອັດຊັດຕະປັດຈຸບປັນນານິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນບ່ອນເປັນປັດຈຸບັນບໍ່ທ່ຽງ

[໑໖໘] ພິກຂຸທັງຫຼາຍ ຈັກຂຸທີ່ເປັນປັດຈຸບັນບໍ່ທ່ຽງ ຯລຯ ຊິວຫາທີ່ເປັນປັດຈຸບັນ ບໍ່ທ່ຽງ ຯລຯ ມະໂນທີ່ເປັນປັດຈຸບັນບໍ່ທ່ຽງ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕະປັດຈຸບປັນນານິດຈະສູດທີ ໘໑ ຈົບ**

# ໘໒-໘໔. ອັດຊັດຕາຕີຕາທິທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະດີດເປັນຕົ້ນເປັນທຸກ

[໑໖໙-໑໗໑] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ຯລຯ ຊິວຫາທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ຯລຯ ມະໂນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕາທິທຸກຂະສູດທີ ໘໒-໘໔ ຈົບ**

# ໘໕-໘໗. ອັດຊັດຕາຕີຕາທິອະນັດຕະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະດີດເປັນຕົ້ນເປັນອະນັດຕາ

[໑໗໘-໑໗໔] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ໆລໆ ຊິວຫາ ໆລໆ ເປັນອະນັດຕາ ໆລໆ ມະໂນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ໆລໆ ຮູ້ແຈ້ງວ່າ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕາທິອະນັດຕະສູດທີ ໘໕-໘໗ ຈົບ**

# ໘໘-໙໐. ພາຫິຣາຕີຕາທິອະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນບໍ່ທ່ຽງ

[໑໗໕-໑໗໗] ພິກຂຸທັງຫຼາຍ ຮູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນບໍ່ທ່ຽງ ສັດທະ ໆລໆ ຄັນທະ ໆລໆ ຣະສະ ໆລໆ ໂຜດຖັບພະ ໆລໆ ທຳມາຣົມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນບໍ່ທ່ຽງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ໆລໆ ຮູ້ແຈ້ງວ່າ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕີຕາທິອະນິດຈະສູດທີ ໘໘-໙໐ ຈົບ**

# ໙໑-໙໓. ພາຫິຣາຕີຕາທິທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນເປັນທຸກ

[໑໗໘-໘໐໐] ພິກຂຸທັງຫຼາຍ ຮູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ສັດທະ ໆລໆ ຄັນທະ ໆລໆ ຣະສະ ໆລໆ ໂຜດຖັບພະ ໆລໆ ທຳມາຣົມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ໆລໆ ຮູ້ແຈ້ງວ່າ ໆລໆ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕີຕາທິທຸກຂະສູດທີ ໙໑-໙໓ ຈົບ**

# ໓໔-໓໖. ພາຫິຣາຕີຕາທິອະນັດຕະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນເປັນອະນັດຕາ

[໔໐໑-໔໐໓] ພິກຂຸທັງຫຼາຍ ຣູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕີຕາທິອະນັດຕະສູດທີ ໓໔-໓໖ ຈົບ**

# ໓໗. ອັດຊັດຕາຕີຕະຍະທະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະດີດບໍ່ທ່ຽງ

[໔໐໔] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະດີດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຣົາ ເຣົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຣົາ ຯລຯ

ຊິວຫາທີ່ເປັນອະດີດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຣົາ ເຣົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຣົາ ຯລຯ

ມະໂນທີ່ເປັນອະດີດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຣົາ ເຣົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຣົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕະຍະທະນິດຈະສູດທີ ໓໗ ຈົບ**

# ໓໗. ອັດຊັດຕານາຄະຕະຍະທະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະນາຄົດບໍ່ທ່ຽງ

[໔໐໕] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະນາຄົດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍ ປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນ ອັດຕາຂອງເຮົາ ຯລຯ

ຊິວຫາທີ່ເປັນອະນາຄົດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ມະໂນທີ່ເປັນອະນາຄົດບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນ ຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕານາຄະຕະຍະທະນິດຈະສູດທີ ໓໗ ຈົບ**

# ໓໘. ອັດຊັດຕະປັດຈຸບປັນນະຍະທະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນປັດຈຸບັນບໍ່ທ່ຽງ

[໔໐໖] ພິກຂຸທັງຫຼາຍ ຈັກຂຸທີ່ເປັນປັດຈຸບັນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ຊິວຫາທີ່ເປັນປັດຈຸບັນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕະປັດຈຸບປັນນະຍະທະນິດຈະສູດທີ ໓໙ ຈົບ**

# ໔໐-໔໘. ອັດຊັດຕາຕີຕາທິຍັງທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະດີດເປັນຕົ້ນເປັນທຸກ

[໔໐໗-໔໐໙] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ຊິວຫາ ຯລຯ ເປັນທຸກ ຯລຯ ມະໂນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕາທິຍັງທຸກຂະສູດທີ ໔໐-໔໘ ຈົບ**

# ໔໓-໔໕. ອັດຊັດຕາຕີຕາທິຍະທະນັດຕະສູດ

## ວ່າດ້ວຍອາຍະຕະນະພາຍໃນທີ່ເປັນອະດີດເປັນຕົ້ນເປັນອະນັດຕາ

[໔໑໐-໔໑໘] ພິກຂຸທັງຫຼາຍ ຈັກຂຸທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນ ເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ

ຊິວຫາ ຯລຯ. ເປັນອະນັດຕາ ຯລຯ ມະໂນທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຕີຕາທິຍະທະນັດຕະສູດທີ ໔໓-໔໕ ຈົບ**

# ໔໖-໔໘. ພາຫິຣາຕີຕາທິຍະທະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນບໍ່ທ່ຽງ

[໔໑໓-໔໑໕] ພິກຂຸທັງຫຼາຍ ຮູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕີຕາທິຍະທະນິດຈະສູດທີ ໔໖-໔໘ ຈົບ**

# ໔໙-໕໑. ພາຫິຣາຕີຕາທິຍັງທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນເປັນທຸກ

[໔໑໖-໔໑໘] ພິກຂຸທັງຫຼາຍ ຮູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນເປັນອະນັດຕາ ສິ່ງໃດເປັນ

ອະນັດຕາ ສິ່ງນັ້ນ ບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕິຕາທິຍັງທຸກຂະສູດທີ ໔໙-໕໑ ຈົບ**

# ໕໒-໕໔. ພາຫິຣາຕິຕາທິຍະທະນັດຕະສູດ

## ວ່າດ້ວຍອາຍະຕະນະພາຍນອກທີ່ເປັນອະດີດເປັນຕົ້ນເປັນອະນັດຕາ

[໔໑໙-໔໒໑] ພິກຂຸທັງຫຼາຍ ຮູບທີ່ເປັນອະດີດ ທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ສັດທະ ฯລฯ ຄັນທະ ฯລฯ ຣະສະ ฯລฯ ໂຜດຖັບພະ ฯລฯ ທຳມາຣົມທີ່ເປັນອະດີດທີ່ເປັນອະນາຄົດ ທີ່ເປັນປັດຈຸບັນເປັນອະນັດຕາ ສິ່ງໃດເປັນອະນັດຕາ ສິ່ງນັ້ນບຸກຄົນເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຕິຕາທິຍະທະນັດຕະສູດທີ ໕໒-໕໔ ຈົບ**

# ໕໕. ອັດຊັດຕາຍະຕະນະອະນິດຈະສູດ

## ວ່າດ້ວຍອາຍະຕະນະພາຍໃນບໍ່ທ່ຽງ

[໔໒໒] ພິກຂຸທັງຫຼາຍ ຈັກຂຸບໍ່ທ່ຽງ ฯລฯ ຊິວຫາບໍ່ທ່ຽງ ฯລฯ ມະໂນບໍ່ທ່ຽງ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ฯລฯ ຮູ້ແຈ້ງວ່າ ฯລฯ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຍະຕະນະອະນິດຈະສູດທີ ໕໕ ຈົບ**

## ໕໖. ອັດຊັດຕາຍະຕະນະທຸກຂະສູດ

### ວ່າດ້ວຍອາຍະຕະນະພາຍໃນເປັນທຸກ

[໔໔໓] ພິກຂຸທັງຫຼາຍ ຈັກຂຸເປັນທຸກ ຯລຯ ຊິວຫາເປັນທຸກ ກາຍເປັນທຸກ ມະໂນເປັນທຸກ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຍະຕະນະທຸກຂະສູດທີ ໕໖ ຈົບ**

## ໕໗. ອັດຊັດຕາຍະຕະນະອະນັດຕະສູດ

### ວ່າດ້ວຍອາຍະຕະນະພາຍໃນເປັນອະນັດຕາ

[໔໔໔] ພິກຂຸທັງຫຼາຍ ຈັກຂຸເປັນອະນັດຕາ ຯລຯ ຊິວຫາເປັນອະນັດຕາ ກາຍເປັນອະນັດຕາ ມະໂນເປັນອະນັດຕາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອັດຊັດຕາຍະຕະນະອະນັດຕະສູດທີ ໕໗ ຈົບ**

## ໕໘. ພາຫິຣາຍະຕະນະອະນິດຈະສູດ

### ວ່າດ້ວຍອາຍະຕະນະພາຍນອກບໍ່ທ່ຽງ

[໔໔໕] ພິກຂຸທັງຫຼາຍ ຮູບບໍ່ທ່ຽງ ຯລຯ ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມບໍ່ທ່ຽງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຍະຕະນະອະນິດຈະສູດທີ ໕໘ ຈົບ**

# ๕໙. ພາຫິຣາຍະຕະນະທຸກຂະສູດ

## ວ່າດ້ວຍອາຍະຕະນະພາຍນອກເປັນທຸກ

[໔໔໖] ພິກຂຸທັງຫຼາຍ ຮູບເປັນທຸກ ຯລຯ ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມເປັນທຸກ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຍະຕະນະທຸກຂະສູດທີ ๕໙ ຈົບ**

# ໖໐. ພາຫິຣາຍະຕະນະອະນັດຕະສູດ

## ວ່າດ້ວຍອາຍະຕະນະພາຍນອກເປັນອະນັດຕາ

[໔໔໗] ພິກຂຸທັງຫຼາຍ ຮູບເປັນອະນັດຕາ ຯລຯ ສັດທະ ຯລຯ ຄັນທະ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມເປັນອະນັດຕາ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຯລຯ ຮູ້ແຈ້ງວ່າ ຯລຯ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ພາຫິຣາຍະຕະນະອະນັດຕະສູດທີ ໖໐ ຈົບ**

**ສັດຖິເປີຍຍາລະວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໒໑. ອັດຊັດຕະປັດຈຸບັນນານິດຈະສູດ

໒໒-໒໔. ອັດຊັດຕາຕີຕາທີທຸກຂະສູດ

໒໕-໒໗. ອັດຊັດຕາຕີຕາທີອະນັດຕະສູດ

໒໘-໓໐. ພາຫິຣາຕີຕາທີອະນິດຈະສູດ

໓໑-໓໓. ພາຫິຣາຕີຕາທີທຸກຂະສູດ

໓໔-໓໖. ພາຫິຣາຕີຕາທີອະນັດຕະສູດ

໓໗. ອັດຊັດຕາຕີຕະຍະທະນິດຈະສູດ

໓໘. ອັດຊັດຕານາຄະຕະຍະທະນິດຈະສູດ

໓໙. ອັດຊັດຕະປັດຈຸບັນນະຍະທະນິດຈະສູດ

໔໐-໔໒. ອັດຊັດຕາຕີຕາທີຍັງທຸກຂະສູດ

໔໓-໔໕. ອັດຊັດຕາຕີຕາທີຍະທະນັດຕະສູດ

໔໖-໔໘. ພາຫິຣາຕີຕາທີຍະທະນິດຈະສູດ

໔໙-໕໑. ພາຫິຣາຕີຕາທີຍັງທຸກຂະສູດ

໕໒-໕໔. ພາຫິຣາຕີຕາທີຍະທະນັດຕະສູດ

໕໕. ອັດຊັດຕາຍະຕະນະອະນິດຈະສູດ

໕໖. ອັດຊັດຕາຍະຕະນະທຸກຂະສູດ

໕໗. ອັດຊັດຕາຍະຕະນະອະນັດຕະສູດ

໕໘. ພາຫິຣາຍະຕະນະອະນິດຈະສູດ

໕໙. ພາຫິຣາຍະຕະນະທຸກຂະສູດ

໖໐. ພາຫິຣາຍະຕະນະອະນັດຕະສູດ

**ພຣະສູດ ໖໐ ສູດຈົບ**

# ៣. ສະມຸດທະວັກ

## ໝວດວ່າດ້ວຍສະມຸດ

# ໑. ປະຖົມສະມຸດທະສູດ

## ວ່າດ້ວຍສະມຸດ ສູດທີ ໑

[໔໘໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປຸຖຸຊົນ ຜູ້ບໍ່ໄດ້ສະດັບ ຍ່ອມກ່າວວ່າ ສະມຸດ ສະມຸດ ແຕ່ນັ້ນ ບໍ່ແມ່ນສະມຸດໃນອະຣິຍະວິໄນ ນັ້ນເປັນພຽງແຕ່ແອ່ງນ້ຳໃຫຍ່ ເປັນແຕ່ແມ່ນ້ຳໃຫຍ່

ພິກຂຸທັງຫຼາຍ ຈັກຂຸເປັນສະມຸດຂອງບຸຣຸດ ກຳລັງຂອງຈັກຂຸນັ້ນເກີດຈາກຮູບ ບຸຣຸດໃດອົດກັ້ນກຳລັງອັນເກີດຈາກຮູບນັ້ນໄດ້ ບຸຣຸດນີ້ໄດ້ຂ້າມສະມຸດຄືຈັກຂຸ ເຊິ່ງມີທັງຄື້ນ ວັງວົນ ສັດຮ້າຍ ແລະຜີເສື້ອນ້ຳ ເຮົາຮຽກວ່າ ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງ ດຳລົງຢູ່ເທິງບົກ ฯລฯ

ຊິວຫາເປັນສະມຸດຂອງບຸຣຸດ ກຳລັງຂອງຊິວຫານັ້ນເກີດຈາກຣົດ ບຸຣຸດໃດອົດກັ້ນກຳລັງອັນເກີດຈາກຣົດນັ້ນໄດ້ ບຸຣຸດນີ້ໄດ້ຂ້າມສະມຸດຄືຊິວຫາ ເຊິ່ງມີທັງຄື້ນ ວັງວົນ ສັດຮ້າຍ ແລະຜີເສື້ອນ້ຳ ເຮົາຮຽກວ່າ ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງດຳລົງຢູ່ເທິງບົກ ฯລฯ

ມະໂນເປັນສະມຸດຂອງບຸຣຸດ ກຳລັງຂອງມະໂນນັ້ນເກີດຈາກທຳມາຣົມ ບຸຣຸດໃດອົດກັ້ນກຳລັງອັນເກີດຈາກທຳມາຣົມນັ້ນໄດ້ ບຸຣຸດນີ້ໄດ້ຂ້າມສະມຸດຄືມະໂນເຊິ່ງມີທັງຄື້ນ ວັງວົນ ສັດຮ້າຍ ແລະ ຜີເສື້ອນ້ຳ ເຮົາຮຽກວ່າ ບຸກຄົນຜູ້ລອຍບາບຂ້າມເຖິງຝັ່ງດຳລົງຢູ່ເທິງບົກ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາ ໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ບຸຣຸດໃດ ຂ້າມສະມຸດນີ້ເຊິ່ງມີທັງຄື້ນ ສັດຮ້າຍ
ແລະຜີເສື້ອນ້ຳທີ່ເປັນຕາຢ້ານທີ່ຂ້າມໄດ້ຍາກໄດ້ແລ້ວ
ບຸຣຸດນັ້ນ ເຮົາຮຽກວ່າ ເປັນຜູ້ຈົບເວດ
ຢູ່ຈົບພົມມະຈັນ ເຖິງບ່ອນສຸດແຫ່ງໂລກ ເຖິງຝັ່ງແລ້ວ

**ປະຖົມສະມຸດທະສູດທີ ໑ ຈົບ**

# ໔. ທຸຕິຍະສະມຸດທະສູດ

## ວ່າດ້ວຍສະມຸດ ສູດທີ ໔

[໔໔໗] ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບຍ່ອມກ່າວວ່າ ສະມຸດ ສະມຸດ ແຕ່ນັ້ນບໍ່ແມ່ນສະມຸດໃນອະຣິຍະວິໄນ ນັ້ນເປັນພຽງແຕ່ແອ່ງນ້ຳໃຫຍ່ ເປັນແຕ່ແມ່ນ້ຳໃຫຍ່

ພິກຂຸທັງຫຼາຍ ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ນີ້ຮຽກວ່າ ສະມຸດໃນອະຣິຍະວິໄນ ໂລກນີ້ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດໃນສະມຸດນີ້ສ່ວນຫຼາຍເປັນຜູ້ເສົ້າໝອງ ຫຍຸ້ງເໝືອນເສັ້ນຝ້າຍຂອງຊ່າງຫູກ ເປັນຂອດຄືປຸ້ມຝ້າຍ ເປັນເໝືອນຫຍ້າປ້ອງ ແລະຫຍ້າມຸ້ງກະຕ່າຍ ຍ່ອມບໍ່ພົ້ນຈາກອະບາຍ ທຸກຄະຕິ ວິນິບາດ ແລະສົງສານໄປໄດ້ ຯລຯ

ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ ມີຢູ່ ຯລຯ

ທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ນີ້ຮຽກວ່າ ສະມຸດໃນອະຣິຍະວິໄນ ໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດ ພ້ອມທັງສະມະນະພາມ ເທວະດາ ແລະ ມະນຸດໃນສະມຸດນີ້ສ່ວນຫຼາຍເປັນຜູ້ເສົ້າໝອງ ຫຍຸ້ງເໝືອນເສັ້ນຝ້າຍຂອງຊ່າງຫູກ ເປັນຂອດຄືປຸ້ມຝ້າຍ ເປັນເໝືອນຫຍ້າປ້ອງ ແລະຫຍ້າມຸ້ງກະຕ່າຍ ຍ່ອມບໍ່ພົ້ນຈາກອະບາຍ ທຸກຄະຕິ ວິນິບາດ ແລະສົງສານໄປໄດ້

ບຸກຄົນໃດ ຄາຍຣາຄະ ໂທສະ ແລະອະວິດຊາໄດ້ແລ້ວ
ບຸກຄົນນັ້ນ ຊື່ວ່າ ຂ້າມສະມຸດນີ້ເຊິ່ງມີທັງຄື້ນ ສັດຮ້າຍ
(ແລະ) ຜີເສື້ອນ້ຳທີ່ເປັນຕາຢ້ານຂ້າມໄດ້ຍາກໄດ້ແລ້ວ
ເຮົາກ່າວວ່າ ບຸກຄົນນັ້ນ ລ່ວງພົ້ນເຄື່ອງຂ້ອງ ລະມັດຈຸ
ບໍ່ມີອຸປະທິ ລະທຸກເພື່ອບໍ່ເກີດອີກຕໍ່ໄປ
ເຖິງຄວາມດັບ ບໍ່ເຖິງການນັບ ລວງມັດຈຸຣາດໃຫ້ຫຼົງໄດ້

**ທຸຕິຍະສະມຸດທະສູດທີ ໔ ຈົບ**

# ໓. ພາລິຊິໂກປະມະສູດ

## ວ່າດ້ວຍອຸປະມາດ້ວຍພານເບັດ

[໔໓໐] ພິກຂຸທັງຫຼາຍ ພານເບັດຢ່ອນເບັດທີ່ມີເຫຍື່ອລົງໄປໃນແມ່ນ້ຳເລິກ ປາໂຕໃດເຫັນແກ່ເຫຍື່ອກືນເບັດນັ້ນ ປາໂຕນັ້ນ ຊື່ວ່າ ກືນເບັດຂອງນາຍພານເບັດ ເຖິງຄວາມວິບັດ ເຖິງຄວາມພິນາດ ຖືກພານເບັດເຮັດໄດ້ຕາມໃຈປາຖະໜາ ແມ່ນສັນໃດ

ພິກຂຸທັງຫຼາຍ ເບັດ ໖ ຊະນິດນີ້ ກໍຄືກັນສັນນັ້ນ ມີຢູ່ໃນໂລກເພື່ອຄວາມວິບັດຂອງສັດທັງຫຼາຍ ເພື່ອຂ້າສັດທັງຫຼາຍ

ເບັດ ໖ ຊະນິດ ມີອັນໃດແດ່?

ຄື ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດຮູບນັ້ນຢູ່ ພິກຂຸນີ້ເຮົາຮຽກວ່າ ຜູ້ກືນເບັດຂອງມານ ເຖິງຄວາມວິບັດ ເຖິງຄວາມພິນາດ ຖືກມານຜູ້ມີບາບເຮັດໄດ້ຕາມໃຈປາຖະໜາ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ມີຢູ່ ຖ້າພິກຂຸຍັງເພີດເພີນ ເຊີຍຊົມ ຢຶດຕິດທຳມາຣົມ ນັ້ນຢູ່ ພິກຂຸນີ້ເຮົາຮຽກວ່າ ຜູ້ກືນເບັດຂອງມານ ເຖິງຄວາມວິບັດ ເຖິງຄວາມພິນາດ ຖືກມານ ຜູ້ມີບາບເຮັດໄດ້ຕາມໃຈປາຖະໜາ

ຮູບ ທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດຮູບນັ້ນຢູ່ ພິກຂຸນີ້ເຮົາຮຽກວ່າ ຜູ້ບໍ່ກືນເບັດຂອງມານ ໄດ້ທຳລາຍເບັດ ຍ່ຳຍີເບັດ ບໍ່ເຖິງຄວາມວິບັດ ບໍ່ເຖິງຄວາມພິນາດ ບໍ່ຖືກມານຜູ້ມີບາບເຮັດໄດ້ຕາມໃຈປາຖະໜາ ฯລฯ

ຣົດ ທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ ມີຢູ່ ฯລฯ

ທຳມາຣົມ ທີ່ເພິ່ງຮູ້ແຈ້ງທາງໃຈທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ ມີຢູ່ ຖ້າພິກຂຸບໍ່ເພີດເພີນ ບໍ່ເຊີຍຊົມ ບໍ່ຢຶດຕິດທຳມາຣົມນັ້ນຢູ່

ພິກຂຸນີ້ເຮົາຮຽກວ່າ ຜູ້ບໍ່ກືນເບັດຂອງມານ ໄດ້ທຳລາຍເບັດ ຍ່ຳຍີເບັດ ບໍ່ເຖິງຄວາມວິບັດ ບໍ່ເຖິງຄວາມພິນາດ ບໍ່ຖືກມານຜູ້ມີບາບເຮັດໄດ້ຕາມໃຈປາຖະໜາ

**ພາລິຊີໂກປະມະສູດທີ ໓ ຈົບ**

# ໔. ຂີນະຣຸກໂຂປະມະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້ມີຢາງ

[໔໓໑] ພິກຂຸທັງຫຼາຍ ຣາຄະຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ໂທສະຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ໂມຫະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ຣາຄະນັ້ນພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີ ຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີ ຍັງລະບໍ່ໄດ້ ຖ້າແມ່ນຮູບທີ່ເພິ່ງຮູ້ແຈ້ງທາງຕາພຽງເລັກໜ້ອຍ ມາຜາກົດທາງຕາຂອງພິກຂຸ ຫຼື ພິກຂຸນີນັ້ນກໍຍ່ອມຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນໄດ້ແທ້ ບໍ່ຕ້ອງກ່າວເຖິງຮູບທີ່ຫຼາຍກວ່ານັ້ນເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນຍັງມີຢູ່ ໂທສະນັ້ນຍັງມີຢູ່ ໂມຫະນັ້ນ ຍັງມີຢູ່ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີ ຍັງລະບໍ່ໄດ້ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງ ໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນມີຢູ່ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ໂທສະຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ໂມຫະຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ຖ້າແມ່ນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈພຽງເລັກໜ້ອຍ ມາຜາກົດທາງໃຈຂອງພິກຂຸ ຫຼື ພິກຂຸນີນັ້ນ ກໍຍ່ອມຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນໄດ້ແທ້ ບໍ່ຕ້ອງກ່າວເຖິງທຳມາຣົມທີ່ຫຼາຍກວ່ານັ້ນເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນ ຍັງມີຢູ່ ໂທສະນັ້ນ ຍັງມີຢູ່ ໂມຫະນັ້ນ ຍັງມີຢູ່ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີ ຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີ ຍັງລະບໍ່ໄດ້

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ມີຢາງ ຈະເປັນຕົ້ນໂພ ຕົ້ນໄຮ ຕົ້ນກ່າງ ຫຼື ຕົ້ນໝາກເດື່ອກໍຕາມ ຍັງອ່ອນ ໃໝ່ ຂະໜາດນ້ອຍ ບຸຣຸດໃຊ້ຂວານທີ່ຄົມຟັນຕົ້ນໄມ້ນັ້ນກົງບ່ອນໃດ ຢາງຈະເພິ່ງໄຫຼອອກໄດ້ບໍ່?

ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຢາງນັ້ນມີຢູ່ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຣາຄະຂອງພິກຂຸ ຫຼື ພິກຂຸນີອົງໃດອົງ ໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ໂທສະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ໂມຫະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາມີຢູ່ ຣາຄະນັ້ນພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນພິກຂຸຫຼືພິກຂຸນີຍັງລະບໍ່ໄດ້ ຖ້າແມ່ນຮູບທີ່ເພິ່ງຮູ້ແຈ້ງທາງຕາພຽງເລັກໜ້ອຍ ມາຜາກົດທາງຕາຂອງພິກຂຸ ຫຼື ພິກຂຸນີນັ້ນ ກໍຍ່ອມຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນໄດ້ແທ້ ບໍ່ຕ້ອງກ່າວເຖິງຮູບທີ່ຫຼາຍກວ່າເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນຍັງມີຢູ່ ໂທສະນັ້ນຍັງມີຢູ່ ໂມຫະນັ້ນຍັງມີຢູ່ ຣາຄະນັ້ນພິກຂຸຫຼືພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນມີຢູ່ ຯລຯ

ຣາຄະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ໂທສະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ໂມຫະຂອງພິກຂຸຫຼືພິກຂຸນີອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈມີຢູ່ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີຍັງລະບໍ່ໄດ້ ຖ້າແມ່ນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈພຽງເລັກໜ້ອຍ ມາຜາກົດທາງໃຈຂອງພິກຂຸ ຫຼື ພິກຂຸນີນັ້ນ ກໍຍ່ອມຄອບງຳຈິດຂອງພິກຂຸຫຼືພິກຂຸນີນັ້ນໄດ້ແທ້ ບໍ່ຕ້ອງກ່າວເຖິງທຳມາຣົມທີ່ຫຼາຍກວ່າເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນ ຍັງມີຢູ່ ໂທສະນັ້ນ ຍັງມີຢູ່ ໂມຫະນັ້ນ ຍັງມີຢູ່ ຣາຄະນັ້ນ ພິກຂຸຫຼືພິກຂຸນີນັ້ນຍັງລະບໍ່ໄດ້ ໂທສະນັ້ນ ພິກຂຸຫຼືພິກຂຸນີຍັງລະບໍ່ໄດ້ ໂມຫະນັ້ນ ພິກຂຸຫຼືພິກຂຸນີຍັງລະບໍ່ໄດ້

ພິກຂຸທັງຫຼາຍ ຣາຄະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ໂທສະ ຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ໂມຫະຂອງພິກຂຸຫຼືພິກຂຸນີອົງໃດອົງ ໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ຖ້າແມ່ນ ຮູບທີ່ເພິ່ງຮູ້ແຈ້ງທາງຕາ ເຊິ່ງຫຼາຍກວ່າມາຜາກົດທາງຕາຂອງພິກຂຸ ຫຼື ພິກຂຸນີນັ້ນ ກໍຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນບໍ່ໄດ້ ບໍ່ຕ້ອງກ່າວເຖິງຮູບພຽງເລັກໜ້ອຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະ ນັ້ນບໍ່ມີ ໂທສະນັ້ນບໍ່ມີ ໂມຫະນັ້ນບໍ່ມີ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີ ລະໄດ້ແລ້ວ ຯລຯ

ຣາຄະ ຂອງພິກຂຸ ຫຼື ຂອງພິກຂຸນີ ອົງໃດອົງໜຶ່ງໃນຣົດທີ່ຈະຮັບຮູ້ແຈ້ງທາງລີ້ນບໍ່ມີ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ໂທສະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ໂມຫະຂອງພິກຂຸ ຫຼື ພິກຂຸນີອົງໃດອົງ ໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ຣາຄະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ຖ້າແມ່ນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຊິ່ງຫຼາຍກວ່າມາຜາກົດທາງໃຈຂອງ ພິກຂຸ ຫຼື ພິກຂຸນີນັ້ນ ກໍຄອບງຳຈິດຂອງພິກຂຸ ຫຼື ຂອງພິກຂຸນີນັ້ນບໍ່ໄດ້ ບໍ່ຕ້ອງກ່າວເຖິງທຳມາຣົມພຽງເລັກໜ້ອຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນ ບໍ່ມີ ໂທສະນັ້ນບໍ່ມີ ໂມຫະນັ້ນບໍ່ມີ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ

ພິກຂຸທັງຫຼາຍ ປຽບຄື ຕົ້ນໄມ້ມີຢາງ ຈະເປັນຕົ້ນໂພ ຕົ້ນໄຮ ຕົ້ນກ່າງ ຫຼື ຕົ້ນໝາກເດື່ອກໍຕາມ ເຊິ່ງເປັນໄມ້ແຫ້ງ ໂດກ ມາໄດ້ ໓-໔ ປີ ເມື່ອບຸຣຸດໃຊ້ຂວານທີ່ຄົມຟັນຕົ້ນໄມ້ນັ້ນກົງບ່ອນໃດ ຢາງຈະເພິ່ງໄຫຼອອກມາໄດ້ບໍ່?

ບໍ່ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ
ຍ້ອນຢ່າງນັ້ນ ບໍ່ມີ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຣາຄະຂອງພິກຂຸ ຫຼື ພິກຂຸນີອົງໃດອົງ ໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ໂທສະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ໂມຫະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ມີ ຣາຄະນັ້ນພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນພິກຂຸຫຼືພິກຂຸນີລະໄດ້ແລ້ວ ຖ້າແມ່ນຮູບທີ່ເພິ່ງຮູ້ແຈ້ງທາງຕາເຊິ່ງຫຼາຍກວ່າມາຜາກົດທາງຕາຂອງພິກຂຸຫຼືພິກຂຸນີນັ້ນ ກໍຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນບໍ່ໄດ້ ບໍ່ຕ້ອງກ່າວເຖິງຮູບພຽງເລັກໜ້ອຍເລີຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຣາຄະນັ້ນ ບໍ່ມີ ໂທສະນັ້ນ ບໍ່ມີ ໂມຫະນັ້ນ ບໍ່ມີ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີ ອົງໃດອົງໜຶ່ງໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນບໍ່ມີ ຯລຯ

ຣາຄະ ຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ໂທສະຂອງພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ໂມຫະຂອງພິກຂຸຫຼືພິກຂຸນີອົງໃດອົງໜຶ່ງໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈບໍ່ມີ ຣາຄະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ໂທສະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸຫຼືພິກຂຸນີລະໄດ້ແລ້ວ ຖ້າແມ່ນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເຊິ່ງຫຼາຍກວ່າມາຜາກົດທາງໃຈຂອງພິກຂຸ ຫຼື ພິກຂຸນີນັ້ນ ກໍຍ່ອມຄອບງຳຈິດຂອງພິກຂຸ ຫຼື ພິກຂຸນີນັ້ນບໍ່ໄດ້ ບໍ່ຕ້ອງກ່າວເຖິງທຳມາຣົມພຽງເລັກໜ້ອຍເລີຍ

ຂໍ້ນັ້ນຍ້ອນເຫດໃດ?

ຍ້ອນຣາຄະນັ້ນບໍ່ມີ ໂທສະນັ້ນບໍ່ມີ ໂມຫະນັ້ນບໍ່ມີ ຣາຄະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂທສະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ ໂມຫະນັ້ນ ພິກຂຸ ຫຼື ພິກຂຸນີລະໄດ້ແລ້ວ

**ຂີນະຣຸກໂຂປະມະສູດທີ ໔ ຈົບ**

# ໕. ໂກດຖິກະສູດ

## ວ່າດ້ວຍພຣະມະຫາໂກດຖິກະ

[໔໓໔] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາໂກດຖິກະ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ເມື່ອໃນເວລາຄ່ຳມືດມາຮອດ ທ່ານພຣະມະຫາໂກດຖິກະອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະສາຣີບຸດ ດັ່ງນີ້ວ່າ

ທ່ານສາຣີບຸດ ຕາກ່ຽວຂ້ອງກັບຮູບ ຮູບກ່ຽວຂ້ອງກັບຕາ ຯລຯ ລີ້ນກ່ຽວຂ້ອງກັບຣົດ ຣົດກ່ຽວຂ້ອງກັບລີ້ນ ຯລຯ ໃຈກ່ຽວຂ້ອງກັບທຳມາຣົມ ທຳມາຣົມກ່ຽວຂ້ອງກັບໃຈບໍ?

ທ່ານພຣະສາຣີບຸດຕອບວ່າ ທ່ານໂກດຖິກະ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາ ແລະ ຮູບທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ຕາແລະຮູບນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ຯລຯ ລີ້ນບໍ່ກ່ຽວຂ້ອງກັບຣົດ ຣົດກໍບໍ່ກ່ຽວຂ້ອງກັບລີ້ນ ແຕ່ຍ້ອນອາໄສລີ້ນ ແລະ ຣົດທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ລີ້ນແລະຣົດນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ຯລຯ

ໃຈບໍ່ກ່ຽວຂ້ອງກັບທຳມາຣົມ ທຳມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທຳມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈແລະທຳມາຣົມນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ທ່ານຜູ້ມີອາຍຸ ປຽບຄື ງົວດຳກັບງົວຂາວ ເຂົາມັດຕິດກັນດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ຜູ້ໃດເພິ່ງກ່າວແນວນີ້ວ່າ ງົວດຳກ່ຽວເນື່ອງກັບງົວຂາວ ງົວຂາວກ່ຽວເນື່ອງກັບງົວດຳ ຜູ້ນັ້ນ ເມື່ອກ່າວເພິ່ງກ່າວຖືກຕ້ອງບໍ

ບໍ່ຖືກຕ້ອງ ຂ້ານ້ອຍ ງົວດຳບໍ່ກ່ຽວເນື່ອງກັບງົວຂາວ ແມ່ນງົວຂາວກໍບໍ່ກ່ຽວເນື່ອງກັບງົວດຳ ແຕ່ງົວທັງສອງນັ້ນ ຖືກເຂົາມັດດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ເຊືອກຄ່າວ ຫຼື ເຊືອກນັ້ນ ຈຶ່ງກ່ຽວເນື່ອງໃນງົວທັງສອງນັ້ນ

ຜູ້ມີອາຍຸ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາແລະຮູບທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ຕາແລະຮູບນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ຯລຯ

ລີ້ນ ບໍ່ກ່ຽວຂ້ອງກັບຣົດ ຯລຯ

ໃຈ ບໍ່ກ່ຽວຂ້ອງກັບທໍາມາຣົມ ທໍາມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທໍາມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈແລະທໍາມາຣົມນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ຜູ້ມີອາຍຸ ຕາຈັກກ່ຽວຂ້ອງກັບຮູບ ຫຼື ຮູບຈັກກ່ຽວຂ້ອງກັບຕາ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງບໍ່ເພິ່ງຜາກົດ ແຕ່ຍ້ອນຕາບໍ່ກ່ຽວຂ້ອງກັບຮູບ ຮູບບໍ່ກ່ຽວຂ້ອງກັບຕາ ແລະຍ້ອນອາໄສຕາ ແລະຮູບທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ຕາແລະຮູບນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ສັນນັ້ນ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງຈຶ່ງຜາກົດ ຯລຯ

ລີ້ນ ຈັກກ່ຽວຂ້ອງກັບຣົດ ຫຼື ຣົດຈັກກ່ຽວຂ້ອງກັບລີ້ນ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງບໍ່ເພິ່ງຜາກົດ ແຕ່ຍ້ອນລີ້ນບໍ່ກ່ຽວຂ້ອງກັບຣົດ ຣົດບໍ່ກ່ຽວຂ້ອງກັບລີ້ນ ແລະຍ້ອນອາໄສລີ້ນ ແລະຣົດທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ລີ້ນແລະຣົດນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ສັນນັ້ນ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງຈຶ່ງຜາກົດ

ໃຈຈັກກ່ຽວຂ້ອງກັບທໍາມາຣົມ ຫຼື ວ່າ ທໍາມາຣົມຈັກກ່ຽວຂ້ອງກັບໃຈ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງບໍ່ເພິ່ງຜາກົດ ແຕ່ຍ້ອນໃຈບໍ່ກ່ຽວຂ້ອງກັບທໍາມາຣົມ ທໍາມາຣົມບໍ່ກ່ຽວຂ້ອງກັບໃຈ ແລະ ຍ້ອນອາໄສໃຈ ແລະທໍາມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈ ແລະທໍາມາຣົມນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ສັນນັ້ນ ການປະພຶດພົມມະຈັນເພື່ອຄວາມສິ້ນທຸກໂດຍຖືກຕ້ອງຈຶ່ງຜາກົດ

ຜູ້ມີອາຍຸ ຂໍ້ນີ້ ເພິ່ງຮູ້ໂດຍປະການແມ່ນນີ້ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາແລະຮູບທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ຕາແລະຮູບນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ຯລຯ

ລີ້ນ ບໍ່ກ່ຽວຂ້ອງກັບຣົດ ຯລຯ

ໃຈບໍ່ກ່ຽວຂ້ອງກັບທໍາມາຣົມ ທໍາມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທໍາມາຣົມທັງສອງນັ້ນ ສັນທະຣາຄະ ຈຶ່ງເກີດຂຶ້ນ ໃຈແລະທໍາມາຣົມນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ຜູ້ມີອາຍຸ ພຣະເນດຂອງພຣະຜູ້ມີພຣະພາກເຈົ້າມີຢູ່ ພຣະຜູ້ມີພຣະພາກເຈົ້າຊົງເຫັນຮູບດ້ວຍພຣະເນດ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ ພຣະໂສຕະຂອງພຣະຜູ້

ມີພຣະພາກເຈົ້າມີຢູ່ ພຣະຜູ້ມີພຣະພາກເຈົ້າຊົງຟັງສຽງດ້ວຍພຣະໂສຕະ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ ພຣະນາສິກຂອງພຣະຜູ້ມີພຣະພາກເຈົ້າມີຢູ່ ພຣະຜູ້ມີພຣະພາກເຈົ້າຊົງສູດກິ່ນດ້ວຍພຣະນາສິກ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ ພຣະຊິວຫາຂອງພຣະຜູ້ມີພຣະພາກເຈົ້າມີຢູ່ ພຣະອົງຊົງຊີມຣົດດ້ວຍພຣະຊິວຫາ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ ພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າມີຢູ່ ພຣະຜູ້ມີພຣະພາກເຈົ້າຊົງຖືກຕ້ອງໂຜດຖັບພະດ້ວຍພຣະວໍຣະກາຍ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ ພຣະມນັສຂອງພຣະຜູ້ມີພຣະພາກເຈົ້າມີຢູ່ ພຣະຜູ້ມີພຣະພາກເຈົ້າ ຊົງຮູ້ແຈ້ງທຳມາຣົມດ້ວຍພຣະມະນັດ ແຕ່ບໍ່ຊົງມີສັນທະຣາຄະເລີຍ ຊົງມີຈິດລຸດພົ້ນດີແລ້ວ

ຜູ້ມີອາຍຸ ຂໍ້ນີ້ ກໍເພິ່ງຮູ້ໂດຍປະການນີ້ ຕາບໍ່ກ່ຽວຂ້ອງກັບຮູບ ຮູບບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາແລະຮູບທັງສອງນັ້ນ ສັນທະຣາຄະ ຈຶ່ງເກີດຂຶ້ນ ຕາແລະຮູບນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ຫູ ບໍ່ກ່ຽວຂ້ອງກັບສຽງ ຯລຯ ດັງບໍ່ກ່ຽວຂ້ອງກັບກິ່ນ ຯລຯ ລີ້ນບໍ່ກ່ຽວຂ້ອງກັບຣົດ ຣົດບໍ່ກ່ຽວຂ້ອງກັບລີ້ນ ແຕ່ຍ້ອນອາໄສລີ້ນແລະຣົດທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ລີ້ນແລະຣົດນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ກາຍບໍ່ກ່ຽວຂ້ອງກັບໂຜດຖັບພະ ຯລຯ ໃຈບໍ່ກ່ຽວຂ້ອງກັບທຳມາຣົມ ທຳມາຣົມບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທຳມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈແລະທຳມາຣົມນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

**ໂກດຖິກະສູດທີ ໕ ຈົບ**

# ໖. ກາມະພູສູດ

## ວ່າດ້ວຍພຣະກາມະພູ

[໔໖໖] ສະໄໝໜຶ່ງ ທ່ານພຣະອານົນແລະທ່ານພຣະກາມະພູ ຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ເມື່ອໃນເວລາຄ່ຳ ທ່ານພຣະກາມະພູອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ ວ່າ

ທ່ານອານົນ ຕາກ່ຽວຂ້ອງກັບຮູບ ຮູບກ່ຽວຂ້ອງກັບຕາ ຯລຯ ລີ້ນກ່ຽວຂ້ອງກັບຣົດ ຣົດກ່ຽວຂ້ອງກັບລີ້ນ ຯລຯ ໃຈກ່ຽວຂ້ອງກັບທຳມາຣົມ ທຳມາຣົມກ່ຽວຂ້ອງກັບໃຈບໍ?

ທ່ານພຣະອານົນຕອບ ວ່າ

ທ່ານກາມະພູ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາ ແລະ ຮູບທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ຕາແລະຮູບນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ ຯລຯ

ລີ້ນ ບໍ່ກ່ຽວຂ້ອງກັບຣົດ ຣົດກໍບໍ່ກ່ຽວຂ້ອງກັບລີ້ນ ຯລຯ

ໃຈ ບໍ່ກ່ຽວຂ້ອງກັບທຳມາຣົມ ທຳມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທຳມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈ ແລະທຳມາຣົມນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ທ່ານຜູ້ມີອາຍຸ ປຽບຄື ງົວດຳກັບງົວຂາວ ເຂົາມັດຕິດກັນດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ຜູ້ໃດເພິ່ງກ່າວແນວນີ້ວ່າ ງົວດຳກ່ຽວເນື່ອງກັບງົວຂາວ ງົວຂາວກ່ຽວເນື່ອງກັບງົວດຳ ຜູ້ນັ້ນ ເມື່ອກ່າວເພິ່ງກ່າວໄດ້ຖືກຕ້ອງບໍ?

ບໍ່ຖືກຕ້ອງ ຂ້ານ້ອຍ ງົວດຳບໍ່ກ່ຽວເນື່ອງກັບງົວຂາວ ແມ່ນງົວຂາວກໍບໍ່ກ່ຽວເນື່ອງກັບງົວດຳ ແຕ່ງົວທັງສອງນັ້ນ ຖືກເຂົາມັດດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ເຊືອກຄ່າວ ຫຼື ເຊືອກນັ້ນ ຈຶ່ງກ່ຽວເນື່ອງໃນງົວທັງສອງນັ້ນ

ຜູ້ມີອາຍຸ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ຯລຯ

ລີ້ນ ບໍ່ກ່ຽວຂ້ອງກັບຣົດ ຯລຯ

ໃຈ ບໍ່ກ່ຽວຂ້ອງກັບທຳມາຣົມ ທຳມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທຳມາຣົມທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ໃຈແລະທຳມາຣົມນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

**ກາມະພູສູດທີ ໖ ຈົບ**

# ໗. ອຸທາຍີສູດ

## ວ່າດ້ວຍພຣະອຸທາຍີ

[໔໖໔] ສະໄໝໜຶ່ງ ທ່ານພຣະອານົນ ແລະ ທ່ານພຣະອຸທາຍີຢູ່ໂຄສິຕາຣາມ ເຂດນະຄອນໂກສຳພີ ເມື່ອໃນເວລາຄ່ຳທ່ານພຣະອຸທາຍີອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວ

ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ ວ່າ

ທ່ານອານົນ ກາຍນີ້ພຣະຜູ້ມີພຣະພາກເຈົ້າຕັດບອກ ເປີດເຜີຍ ປະກາດແລ້ວໂດຍປະການຕ່າງ ໆ ວ່າ ກາຍນີ້ເປັນອະນັດຕາແມ່ນຍ້ອນເຫດນີ້ ສັນໃດ ແມ່ນວິນຍານນີ້

ທ່ານສາມາດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍ ວ່າ ວິນຍານນີ້ເປັນອະນັດຕາ ແມ່ນຍ້ອນເຫດນີ້ ສັນນັ້ນໄດ້ບໍ?

ທ່ານພຣະອານົນ ຕອບວ່າ ທ່ານອຸທາຍີ ກາຍນີ້ພຣະຜູ້ມີພຣະພາກເຈົ້າຕັດບອກ ເປີດເຜີຍ ປະກາດແລ້ວໂດຍປະການຕ່າງ ໆ ວ່າ ກາຍນີ້ເປັນອະນັດຕາແມ່ນຍ້ອນເຫດນີ້ ສັນໃດ ແມ່ນວິນຍານນີ້ ຂ້ານ້ອຍ ສາມາດບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍວ່າ ວິນຍານນີ້ເປັນອະນັດຕາ ແມ່ນຍ້ອນເຫດນີ້ ສັນນັ້ນ

ຍ້ອນອາໄສ ຈັກຂຸແລະຮູບ ຈັກຂຸວິນຍານຈຶ່ງເກີດແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ເມື່ອເຫດ ແລະ ປັດໄຈ ເພື່ອໃຫ້ຈັກຂຸວິນຍານເກີດ ເພິ່ງດັບໂດຍອາການທັງໝົດທຸກຢ່າງບໍ່ເຫຼືອໂດຍປະການທັງປວງ ຈັກຂຸວິນຍານຈະເພິ່ງຜາກົດໄດ້ບໍ?
ບໍ່ຜາກົດ ຂ້ານ້ອຍ

ຈັກຂຸວິນຍານ ພຣະຜູ້ມີພຣະພາກເຈົ້າຕັດບອກ ເປີດເຜີຍ ປະກາດແລ້ວໂດຍປະການແມ່ນນີ້ວ່າ ວິນຍານນີ້ ເປັນອະນັດຕາ ແມ່ນຍ້ອນເຫດນີ້ ฯລฯ

ຍ້ອນອາໄສລີ້ນແລະຣົດ ຊິວຫາວິນຍານຈຶ່ງເກີດແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ເມື່ອເຫດ ແລະ ປັດໄຈ ເພື່ອໃຫ້ຊິວຫາວິນຍານເກີດ ເພິ່ງດັບໂດຍອາການທັງໝົດທຸກຢ່າງບໍ່ເຫຼືອ ໂດຍປະການທັງປວງ ຊິວຫາວິນຍານເພິ່ງຜາກົດໄດ້ບໍ?
ບໍ່ຜາກົດ ຂ້ານ້ອຍ

ຊິວຫາວິນຍານ ພຣະຜູ້ມີພຣະພາກເຈົ້າຕັດບອກ ເປີດເຜີຍ ປະກາດແລ້ວໂດຍປະການແມ່ນນີ້ວ່າ ວິນຍານນີ້ ເປັນອະນັດຕາແມ່ນຍ້ອນເຫດນີ້ ฯລฯ

ຍ້ອນອາໄສໃຈ ແລະ ທຳມາຣົມ ມະໂນວິນຍານຈຶ່ງເກີດແມ່ນບໍ?
ເປັນແນວນັ້ນ ຂ້ານ້ອຍ

ເມື່ອເຫດ ແລະ ປັດໄຈ ເພື່ອໃຫ້ມະໂນວິນຍານເກີດ ເພິ່ງດັບໂດຍອາການທັງໝົດທຸກຢ່າງບໍ່ເຫຼືອ ໂດຍປະການທັງປວງ ມະໂນວິນຍານເພິ່ງຜາກົດໄດ້ບໍ?

ບໍ່ຜາກົດ ຂ້ານ້ອຍ

ມະໂນວິນຍານ ພຣະຜູ້ມີພຣະພາກເຈົ້າຕັດບອກ ເປີດເຜີຍ ປະກາດແລ້ວໂດຍປະການແມ່ນນີ້ວ່າ ວິນຍານນີ້ເປັນອະນັດຕາແມ່ນຍ້ອນເຫດນີ້

ຜູ້ມີອາຍຸ ບຸຣຸດຜູ້ຕ້ອງການແກ່ນໄມ້ ສະແຫວງຫາແກ່ນໄມ້ ທ່ຽວສະແຫວງຫາແກ່ນໄມ້ ຖືຂວານທີ່ຄົມເຂົ້າໄປສູ່ປ່າ ພົບຕົ້ນກ້ວຍໃຫຍ່ ກົງ ຕົ້ນໃໝ່ ສູງຫຼາຍ ໃນປ່ານັ້ນ ເພິ່ງຕັດ ເຫງົ້າແລ້ວ ຕັດປາຍ ປອກກາບອອກ ບໍ່ພໍ້ແມ່ນວ່າມອກຢູ່ຕົ້ນກ້ວຍນັ້ນ ແລ້ວຢູ່ໄສຈັກພົບແກ່ນໄດ້ບໍ ແມ່ນສັນໃດ ພິກຂຸກໍສັນນັ້ນ ບໍ່ພິຈາລະນາເຫັນອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາໃນຜັດສາຍະຕະນະ ໖ ປະການ ທ່ານເມື່ອບໍ່ພິຈາລະນາເຫັນແນວນີ້ ຍ່ອມບໍ່ຍຶດຖືສິ່ງໃດ ໆ ໃນໂລກ ເມື່ອບໍ່ຍຶດຖື ກໍບໍ່ດີ້ນຮົນ ເມື່ອບໍ່ດີ້ນຮົນ ກໍດັບໄປສະເພາະຕົນເອງ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອຸທາຍີສູດທີ ໗ ຈົບ**

# ໘. ອາທິດຕະປະຣິຍາຍະສູດ

## ວ່າດ້ວຍອາທິດຕະບັນລະຍາຍ

[໔໓໕] ພິກຂຸທັງຫຼາຍ ເຮົາຈັກສະແດງອາທິດຕະບັນລະຍາຍ ແລະ ທຳບັນລະຍາຍແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອາທິດຕະບັນລະຍາຍ ແລະ ທຳບັນລະຍາຍ ເປັນແນວໃດ?

ຄື ບຸກຄົນແທງຈັກຂຸນຊີດ້ວຍຫລາວເຫຼັກທີ່ຮ້ອນ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກຍັງປະເສີດກວ່າ ສ່ວນການຖືນິມິດໂດຍອະນຸພະຍັນຊະນະ ໃນຮູບທີ່ເພິ່ງຮູ້ແຈ້ງທາງຕາບໍ່ປະເສີດເລີຍ ວິນຍານທີ່ເນື່ອງດ້ວຍຄວາມຍິນດີໃນນິມິດ ຫຼື ເນື່ອງດ້ວຍຄວາມຍິນດີໃນອະນຸພະຍັນຊະນະເມື່ອຕັ້ງຢູ່ ເພິ່ງຕັ້ງຢູ່ໄດ້ ຖ້າບຸກຄົນກະທຳກາລະກິຣິຍາໃນສະໄໝນັ້ນ ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຖິງຄະຕິແນວ ໑ ໃນ ໒ ແນວ ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

ເຮົາເຫັນໂທດນີ້ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ບຸກຄົນທະລວງໂສຕິນຊີດ້ວຍຂໍເຫຼັກທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍັງປະເສີດກວ່າ ສ່ວນການຖືນິມິດໂດຍອະນຸພະຍັນຊະນະໃນສຽງທີ່ເພິ່ງຮູ້ແຈ້ງທາງຫູບໍ່ປະເສີດເລີຍ ວິນຍານທີ່ເນື່ອງດ້ວຍຄວາມຍິນດີໃນນິມິດ ຫຼື ເນື່ອງດ້ວຍຄວາມຍິນດີໃນອະນຸພະຍັນຊະນະ ເມື່ອຕັ້ງຢູ່ ເພິ່ງຕັ້ງຢູ່ໄດ້ ຖ້າບຸກຄົນທຳກາລະກິຣິຍາໃນສະໄໝນັ້ນ ເປັນໄປໄດ້ທີ່ບຸກຄົນນັ້ນ ຈະເພິ່ງເຖິງຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

ເຮົາເຫັນໂທດນີ້ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ບຸກຄົນຄວ້ານຄານິນຊີດ້ວຍມີດຕັດເລັບທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍັງປະເສີດກວ່າ ສ່ວນການຖືນິມິດໂດຍອະນຸພະຍັນຊະນະໃນກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ບໍ່ປະເສີດເລີຍ ວິນຍານທີ່ເນື່ອງດ້ວຍຄວາມຍິນດີໃນນິມິດ ຫຼື ເນື່ອງດ້ວຍຄວາມຍິນດີໃນອະນຸພະຍັນຊະນະ ເມື່ອຕັ້ງຢູ່ ເພິ່ງຕັ້ງຢູ່ໄດ້ ຖ້າບຸກຄົນກະທຳກາລະກິຣິຍາໃນສະໄໝນັ້ນ ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຖິງຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

ເຮົາເຫັນໂທດນີ້ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ບຸກຄົນປາດຊິວຫີນຊີດ້ວຍມີດແຖທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍັງປະເສີດກວ່າ ສ່ວນການຖືນິມິດໂດຍອະນຸພະຍັນຊະນະໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນບໍ່ປະເສີດ ເລີຍ ວິນຍານທີ່ເນື່ອງດ້ວຍຄວາມຍິນດີໃນນິມິດຫຼືເນື່ອງດ້ວຍຄວາມຍິນດີໃນອະນຸພະຍັນຊະນະ ເມື່ອຕັ້ງຢູ່ ເພິ່ງຕັ້ງຢູ່ໄດ້ ຖ້າບຸກຄົນກະທຳກາລະກິຣິຍາໃນສະໄໝນັ້ນ ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຖິງຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກຫຼືກຳເນີດສັດເດຍຣັດສານ

ເຮົາເຫັນໂທດນີ້ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ບຸກຄົນແທງກາຍິນຊີດ້ວຍຫອກທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍັງປະເສີດກວ່າ ສ່ວນການຖືນິມິດໂດຍອະນຸພະຍັນຊະນະໃນໂຜດຖັບພະທີ່ ເພິ່ງຮູ້ແຈ້ງທາງກາຍບໍ່ປະເສີດເລີຍ ວິນຍານທີ່ເນື່ອງດ້ວຍຄວາມຍິນດີໃນນິມິດ ຫຼື ເນື່ອງດ້ວຍຄວາມຍິນດີໃນ

ອະນຸພະຍັນຊະນະ ເມື່ອຕັ້ງຢູ່ ເພິ່ງຕັ້ງຢູ່ໄດ້ ຖ້າບຸກຄົນກະທຳກາລະກິຣິຍາໃນສະໄໝນັ້ນ ເປັນໄປໄດ້ທີ່ບຸກຄົນນັ້ນຈະເພິ່ງເຖິງຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກຫຼືກຳເນີດສັດເດຍຣັດສານ

ເຮົາເຫັນໂທດນີ້ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ຄວາມຫຼັບຍັງປະເສີດກວ່າ ແຕ່ເຮົາກ່າວວ່າຄວາມຫຼັບເປັນໝັນສຳລັບຜູ້ມີຊີວິດ ກ່າວວ່າຂາດຜົນສຳລັບຜູ້ມີຊີວິດ ກ່າວວ່າເປັນຄວາມຈ໊າສຳລັບຜູ້ມີຊີວິດ ສ່ວນບຸກຄົນຕົກຢູ່ໃນອຳນາດຂອງວິຕົກເຊັ່ນໃດແລ້ວ ເພິ່ງທຳລາຍສົງໃຫ້ແຕກກັນ ກໍບໍ່ຄວນນຶກເຖິງວິຕົກນັ້ນເລີຍ

ເຮົາເຫັນໂທດນີ້ວ່າ ເປັນໜັນສຳລັບຜູ້ມີຊີວິດ ຈຶ່ງກ່າວແນວນີ້

ພິກຂຸທັງຫຼາຍ ໃນຂໍ້ນັ້ນ ອະຣິຍະສາວົກຜູ້ໄດ້ສະດັບຍ່ອມເຫັນດັ່ງນີ້ ວ່າ ຈັກຂຸນຊີທີ່ບຸກຄົນແທງດ້ວຍຫລາວເຫຼັກທີ່ຮ້ອນ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍົກໄວ້ກ່ອນ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ຈັກຂຸບໍ່ທ່ຽງ ຮູບບໍ່ທ່ຽງ ຈັກຂຸວິນຍານບໍ່ທ່ຽງ ຈັກຂຸສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈກໍບໍ່ທ່ຽງດ້ວຍປະການດັ່ງນີ້

ໂສຕິນຊີທີ່ບຸກຄົນທະລວງດ້ວຍຂໍເຫຼັກທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍົກໄວ້ກ່ອນ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ໂສຕະບໍ່ທ່ຽງ ສັດທະບໍ່ທ່ຽງ ໂສຕະວິນຍານບໍ່ທ່ຽງ ໂສຕະສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນໂສຕະສຳຜັດເປັນປັດໄຈກໍບໍ່ທ່ຽງດ້ວຍປະການດັ່ງນີ້

ຄານິນຊີ ທີ່ບຸກຄົນຄວ້ານດ້ວຍມີດຕັດເລັບທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍົກໄວ້ກ່ອນ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ຄານະບໍ່ທ່ຽງ ຄັນທະບໍ່ທ່ຽງ ຄານະວິນຍານບໍ່ທ່ຽງ ຄານະສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກ ບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຄານະສຳຜັດເປັນປັດໄຈ ກໍບໍ່ທ່ຽງດ້ວຍປະການດັ່ງນີ້

ຊິວຫີນຊີ ທີ່ບຸກຄົນປາດດ້ວຍມີດແຖທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍົກໄວ້ກ່ອນ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ຊິວຫາບໍ່ທ່ຽງ ຣົດບໍ່ທ່ຽງ ຊິວຫາວິນຍານບໍ່ທ່ຽງ

ຊິວຫາ ສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ກໍບໍ່ທ່ຽງດ້ວຍປະການດັ່ງນີ້

ກາຍິນຊີ ທີ່ບຸກຄົນແທງດ້ວຍຫລາວເຫຼັກທີ່ຄົມ ໄຟຕິດ ລຸກເປັນແປວ ມີແປວພຸ່ງອອກ ຍົກໄວ້ກ່ອນ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ກາຍບໍ່ທ່ຽງ ໂຜດຖັບພະບໍ່ທ່ຽງ ກາຍວິນຍານບໍ່ທ່ຽງ ກາຍສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນກາຍສຳຜັດເປັນປັດໄຈກໍບໍ່ທ່ຽງດ້ວຍປະການດັ່ງນີ້

ຄວາມຫຼັບຍົກໄວ້ກ່ອນ ຯລຯ ຖ້າຈັ່ງຊັ້ນ ເຮົາຈະໃສ່ໃຈຂໍ້ນີ້ວ່າ ມະໂນບໍ່ທ່ຽງ ທຳມາຣົມບໍ່ທ່ຽງ ມະໂນວິນຍານບໍ່ທ່ຽງ ມະໂນສຳຜັດບໍ່ທ່ຽງ ແມ່ນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ກໍບໍ່ທ່ຽງດ້ວຍປະການດັ່ງນີ້

ອະຣິຍະສາວົກ ຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸວິນຍານ ຍ່ອມເບື່ອໜ່າຍແມ່ນໃນຈັກຂຸສຳຜັດ ຯລຯ

ຍ່ອມເບື່ອໜ່າຍແມ່ນໃນຄວາມສະເຫວີຍອາລົມທີ່ເປັນສຸກຫຼືທຸກ ຫຼື ບໍ່ແມ່ນສຸກບໍ່ແມ່ນທຸກທີ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກ ຕໍ່ໄປ

ພິກຂຸທັງຫຼາຍ ນີ້ແລ ຄື ອາທິດຕະບັນລະຍາຍ ແລະ ທຳບັນລະຍາຍ

**ອາທິດຕະປະຣິຍາຍະສູດທີ ໗ ຈົບ**

# ໘. ປະຖົມຫັດຖະປາໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍມືແລະຕີນ ສູດທີ ໑

[໔໖໖] ພິກຂຸທັງຫຼາຍ ເມື່ອມືທັງ ໔ ມີຢູ່ ການຈັບ ແລະ ການວາງກໍຜາກົດ ເມື່ອ ຕີນທັງ ໔ ມີຢູ່ ການກ້າວໄປ ແລະການຖອຍກັບກໍຜາກົດ ເມື່ອຂໍ້ທັງຫຼາຍມີຢູ່ ການຄູ້ເຂົ້າ ແລະການຢຽດອອກກໍຜາກົດ ເມື່ອທ້ອງມີຢູ່ ຄວາມຫິວ ແລະຄວາມຢາກກໍຜາກົດ

ຂໍ້ນີ້ກໍຄືກັນ ສັນນັ້ນ ແມ່ນເມື່ອຈັກຂຸມີຢູ່ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ເມື່ອຊິວຫາມີຢູ່ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ ຍ້ອນຊິວຫາສຳຜັດເປັນປັດໄຈ ຯລຯ ເມື່ອມະໂນມີຢູ່ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ

ເມື່ອມືທັງ ໔ ບໍ່ມີ ການຈັບແລະການວາງກໍບໍ່ຜາກົດ ເມື່ອຕີນທັງ ໔ ບໍ່ມີ ການ ກ້າວໄປແລະການຖອຍກັບກໍບໍ່ຜາກົດ ເມື່ອຂໍ້ທັງຫຼາຍບໍ່ມີ ການຄູ້ເຂົ້າແລະການຢຽດ ອອກກໍບໍ່ຜາກົດ ເມື່ອທ້ອງບໍ່ມີ ຄວາມຫິວແລະຄວາມຢາກກໍບໍ່ຜາກົດ

ພິກຂຸທັງຫຼາຍ ຂໍ້ນີ້ ກໍຄືກັນສັນນັ້ນ ເມື່ອຈັກຂຸບໍ່ມີ ສຸກແລະທຸກໃນພາຍໃນຍ່ອມບໍ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ເມື່ອຊິວຫາບໍ່ມີ ສຸກແລະທຸກໃນພາຍໃນຍ່ອມບໍ່ເກີດຂຶ້ນຍ້ອນຊິວຫາສຳຜັດເປັນປັດໄຈ ຯລຯ ເມື່ອມະໂນບໍ່ມີ ສຸກແລະທຸກພາຍໃນຍ່ອມບໍ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ

**ປະຖົມຫັດຖະປາໂທປະມະສູດທີ ໘ ຈົບ**

# ໑໐. ທຸຕິຍະຫັດຖະປາໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍມືແລະຕີນ ສູດທີ ໔

[໔໘໗] ພິກຂຸທັງຫຼາຍ ເມື່ອມືທັງ ໒ ມີຢູ່ ການຈັບ ແລະການວາງກໍມີ ເມື່ອຕີນທັງ ໒ ມີຢູ່ ການກ້າວໄປ ແລະການຖອຍກັບກໍມີ ເມື່ອຂໍ້ທັງຫຼາຍມີຢູ່ ການຄູ້ເຂົ້າ ແລະການຢຽດອອກກໍມີ ເມື່ອທ້ອງມີຢູ່ ຄວາມຫິວ ແລະຄວາມຢາກກໍມີ

ຂໍ້ນີ້ກໍຄືກັນສັນນັ້ນ ເມື່ອຈັກຂຸມີຢູ່ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ເມື່ອຊິວຫາມີຢູ່ ຯລຯ ເມື່ອມະໂນມີຢູ່ ສຸກແລະທຸກໃນພາຍໃນຈຶ່ງເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈ ຯລຯ

ເມື່ອມືທັງ ໒ ບໍ່ມີ ການຈັບແລະການວາງກໍບໍ່ມີ ເມື່ອຕີນທັງ ໒ ບໍ່ມີ ການກ້າວໄປແລະການຖອຍກັບກໍບໍ່ມີ ເມື່ອຂໍ້ທັງຫຼາຍບໍ່ມີ ການຄູ້ເຂົ້າແລະການຢຽດອອກກໍບໍ່ມີ ເມື່ອທ້ອງບໍ່ມີ ຄວາມຫິວ ແລະຄວາມຢາກກໍບໍ່ມີ

ພິກຂຸທັງຫຼາຍ ຂໍ້ນີ້ ກໍຄືກັນ ສັນນັ້ນ ເມື່ອຈັກຂຸບໍ່ມີ ສຸກແລະທຸກໃນພາຍໃນຍ່ອມບໍ່ເກີດຂຶ້ນ ຍ້ອນຈັກຂຸສຳຜັດເປັນປັດໄຈ ຯລຯ ຍ້ອນຊິວຫາສຳຜັດເປັນປັດໄຈ ຯລຯ ເມື່ອມະໂນບໍ່ມີ ສຸກແລະທຸກໃນພາຍໃນຍ່ອມບໍ່ເກີດຂຶ້ນ ຍ້ອນມະໂນສຳຜັດເປັນປັດໄຈ

**ທຸຕິຍະຫັດຖະປາໂທປະມະສູດທີ ໑໐ ຈົບ**

**ສະມຸດທະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ອາສີວິສະວັກ

## ໝວດວ່າດ້ວຍອະສໍຣະພິດ

# ໑. ອາສີວິໂສປະມະສູດ

## ວ່າດ້ວຍອຸປະມາດ້ວຍອະສໍຣະພິດ

[໔໖໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ເຂດນະຄອນສາວັດຖີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ປຽບຄືອະສໍຣະພິດ ໔ ຈໍາພວກ ເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ຖ້າບຸຣຸດຢາກມີຊີວິດຢູ່ ບໍ່ຢາກຕາຍ ຮັກສຸກ ກຽດຊັງທຸກ ຍ່າງມາ ຄົນທັງຫຼາຍ ເພິ່ງບອກເຂົາແນວນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ອະສໍຣະພິດ ໔ ຈໍາພວກນີ້ ເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ທ່ານເພິ່ງປຸກໃຫ້ລຸກຕາມເວລາ ໃຫ້ອາບນໍ້າຕາມເວລາ ໃຫ້ກິນອາຫານຕາມເວລາ ໃຫ້ເຂົ້າທີ່ຢູ່ຕາມເວລາ ເວລາໃດອະສໍຣະພິດເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ໔ ຈໍາພວກນີ້ ໂຕໃດໂຕໜຶ່ງກໍຕາມໂກດເວລານັ້ນ ທ່ານກໍຈະເຖິງຄວາມຕາຍ ຫຼື ເຖິງທຸກປາງຕາຍ ທ່ານຜູ້ຈະເລີນທັງຫຼາຍ ກິດໃດທີ່ທ່ານຄວນເຮັດ ທ່ານຈົ່ງເຮັດກິດນັ້ນເທີ້ນ

ຂະນະນັ້ນ ບຸຣຸດນັ້ນ ຢ້ານອະສໍຣະພິດເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ໔ ຈໍາພວກນັ້ນ ຈຶ່ງໜີໄປ ທາງໃດທາງໜຶ່ງ ຄົນທັງຫຼາຍເພິ່ງບອກເຂົາແນວນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ນັກຂ້າເຊິ່ງເປັນສັດຕູ ໕ ຈໍາພວກ ຕິດຕາມມາຂ້າງຫຼັງທ່ານ ໂດຍໝາຍໃຈວ່າ ພົບທ່ານໃນບ່ອນໃດກໍຈະຂ້າທ່ານໃນບ່ອນນັ້ນ ທ່ານຜູ້ຈະເລີນທັງຫຼາຍ ກິດໃດທີ່ທ່ານຄວນເຮັດ ທ່ານຈົ່ງເຮັດສິ່ງນັ້ນເທີ້ນ

ຂະນະນັ້ນ ບຸຣຸດນັ້ນ ຢ້ານອະສໍຣະພິດເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ໔ ຈໍາພວກນັ້ນ ແລະຢ້ານ ນັກຂ້າເຊິ່ງເປັນສັດຕູ ໕ ຈໍາພວກ ຈຶ່ງໜີໄປທາງໃດທາງໜຶ່ງ ຄົນທັງຫຼາຍເພິ່ງບອກເຂົາແນວນີ້ວ່າ ທ່ານຜູ້ຈະເລີນ ນັກຂ້າຜູ້ເປັນສາຍລັບຈໍາພວກທີ ໖ ນີ້ ເງື້ອດາບຕິດຕາມມາຂ້າງຫຼັງທ່ານໂດຍໝາຍໃຈວ່າ ພົບທ່ານໃນບ່ອນໃດ ກໍຈະຕັດຫົວທ່ານໃນບ່ອນນັ້ນ ທ່ານຜູ້ຈະເລີນທັງຫຼາຍ ກິດໃດທີ່ທ່ານຄວນເຮັດ ທ່ານຈົ່ງເຮັດກິດນັ້ນເທີ້ນ

ຂະນະນັ້ນ ບຸຣຸດນັ້ນ ຢ້ານອະສໍຣະພິດເຊິ່ງມີອໍານາດຫຼາຍ ມີພິດແຮງກ້າ ໔ ຈໍາພວກ

ຢ້ານນັກຂ້າເຊິ່ງເປັນສັດຕູ ໕ ຈຳພວກ ແລະຢ້ານນັກຂ້າຜູ້ເປັນສາຍລັບຈຳພວກທີ ໖ ເຊິ່ງເງື້ອດາບ ຕິດຕາມໄປ ຈຶ່ງໜີໄປທາງໃດທາງໜຶ່ງ ເຂົາພົບໝູ່ບ້ານຮ້າງ ຈຶ່ງເຂົ້າໄປສູ່ເຮືອນວ່າງເປົ່າຫຼັງໜຶ່ງ ລູບຄຳພາຊະນະວ່າງເປົ່າຊະນິດໜຶ່ງ ຄົນທັງຫຼາຍເພິ່ງບອກເຂົາວ່າ ທ່ານຜູ້ຈະເລີນ ພວກໂຈນຜູ້ຂ້າຊາວບ້ານ ເພິ່ງເຂົ້າມາສູ່ໝູ່ບ້ານຮ້າງນີ້ດ່ຽວນີ້ເອງ ກິດໃດທີ່ທ່ານຄວນເຮັດ ທ່ານຈົ່ງເຮັດກິດນັ້ນເທີ້ນ

ຂະນະນັ້ນ ບຸຣຸດນັ້ນຢ້ານອະສໍຣະພິດເຊິ່ງມີອຳນາດຫຼາຍ ມີພິດແຮງກ້າ ໔ ຈຳພວກ ຢ້ານນັກຂ້າເຊິ່ງເປັນສັດຕູ ໕ ຈຳພວກ ຢ້ານນັກຂ້າຜູ້ເປັນສາຍລັບຈຳພວກທີ ໖ ເຊິ່ງເງື້ອດາບຕິດຕາມໄປ ແລະຢ້ານໂຈນຜູ້ຂ້າຊາວບ້ານ ຈຶ່ງໜີໄປທາງໃດທາງໜຶ່ງ ເຂົາພົບແມ່ນ້ຳໃຫຍ່ແຫ່ງໜຶ່ງ ເຊິ່ງຝັ່ງນີ້ໜ້າຣະແວງ ມີໄພຈຳເພາະໜ້າ ແຕ່ຝັ່ງນັ້ນປອດໄພ ບໍ່ມີໄພຈຳເພາະໜ້າ ເຂົາບໍ່ມີເຮືອຫຼືຂົວທີ່ຈະຂ້າມໄປຝັ່ງນັ້ນ

ຂະນະນັ້ນ ບຸຣຸດນັ້ນຄິດແນວນີ້ວ່າ ແມ່ນ້ຳໃຫຍ່ ຝັ່ງນີ້ໜ້າຣະແວງ ມີໄພຈຳເພາະໜ້າ ຝັ່ງນັ້ນປອດໄພ ບໍ່ມີໄພຈຳເພາະໜ້າ ເຮົານັ້ນບໍ່ມີເຮືອ ຫຼື ຂົວທີ່ຈະຂ້າມໄປຝັ່ງນັ້ນ ທາງທີ່ດີ ເຮົາຄວນຮີບໂຮມຫຍ້າ ໄມ້ ງ່າ ແລະ ໃບມາມັດເປັນແພ ອາໄສແພນັ້ນ ໃຊ້ມື ແລະຕີນພະຍາຍາມໄປເຖິງຝັ່ງນັ້ນໂດຍໂດຍປອດໄພ

ເມື່ອບຸຣຸດນັ້ນຮີບໂຮມຫຍ້າ ໄມ້ ງ່າ ແລະ ໃບມາມັດເປັນແພແລ້ວ ອາໄສແພນັ້ນ ໃຊ້ມືແລະຕີນພະຍາຍາມໄປຈົນເຖິງຝັ່ງນັ້ນໂດຍປອດໄພ ເປັນຜູ້ລອຍບາບດຳລົງຢູ່ເທິງບົກ

ພິກຂຸທັງຫຼາຍ ອຸປະມານີ້ເຮົາຍົກມາເພື່ອໃຫ້ເຂົ້າໃຈເນື້ອຄວາມແຈ່ມແຈ້ງ ໃນອຸປະມານັ້ນມີອະທິບາຍດັ່ງນີ້ ວ່າ

ຄຳວ່າ ອະສໍຣະພິດເຊິ່ງມີອຳນາດຫຼາຍ ມີພິດແຮງກ້າ ໔ ຈຳພວກ ນັ້ນເປັນຊື່ຂອງມະຫາພູຕະຣູບ ໔ ຄື

໑. ປະຖະວີທາດ (ທາດດິນ) ໒. ອາໂປທາດ (ທາດນ້ຳ)
໓. ເຕໂຊທາດ (ທາດໄຟ) ໔. ວາໂຍທາດ (ທາດລົມ)

ຄຳວ່າ ນັກຂ້າເຊິ່ງເປັນສັດຕູ ໕ ຈຳພວກນັ້ນ ເປັນຊື່ຂອງ ອຸປາທານຂັນ ໕ ໄດ້ແກ່

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)

໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ຄຳວ່າ ນັກຂ້າຜູ້ເປັນສາຍລັບຈຳພວກທີ ໖ ເຊິ່ງເງື້ອດາບຕິດຕາມໄປນັ້ນເປັນຊື່ ຂອງນັນທິຣາຄະ (ຄວາມກຳໜັດດ້ວຍອຳນາດຄວາມຍິນດີ)

ຄຳວ່າ ໝູ່ບ້ານຮ້າງ ນັ້ນເປັນຊື່ຂອງອາຍະຕະນະພາຍໃນ ໖ ປະການ

ພິກຂຸທັງຫຼາຍ ຖ້າແມ່ນບັນດິດຜູ້ສະຫຼາດ ມີປັນຍາພິຈາລະນາອາຍະຕະນະພາຍໃນ ໖ ປະການນັ້ນທາງຕາ ກໍຈະຜາກົດເປັນຂອງວ່າງທັງໝົດ ຜາກົດເປັນຂອງເປົ່າທັງໝົດ ຜາກົດເປັນຂອງສູນທັງໝົດ

ຖ້າແມ່ນບັນດິດຜູ້ສະຫຼາດ ມີປັນຍາພິຈາລະນາອາຍະຕະນະພາຍໃນ ໖ ປະການນັ້ນທາງຫູ ກໍຈະຜາກົດເປັນຂອງວ່າງທັງໝົດ ຜາກົດເປັນຂອງເປົ່າທັງໝົດ ຜາກົດເປັນຂອງສູນທັງໝົດ

ຖ້າແມ່ນບັນດິດຜູ້ສະຫຼາດ ມີປັນຍາພິຈາລະນາອາຍະຕະນະພາຍໃນ ໖ ປະການນັ້ນທາງດັງ ກໍຈະຜາກົດເປັນຂອງວ່າງທັງໝົດ ຜາກົດເປັນຂອງເປົ່າທັງໝົດ ຜາກົດເປັນຂອງສູນທັງໝົດ

ຖ້າແມ່ນບັນດິດຜູ້ສະຫຼາດ ຯລຯ ປະການນັ້ນທາງລີ້ນ ຯລຯ

ຖ້າແມ່ນບັນດິດຜູ້ສະຫຼາດ ຯລຯ ປະການນັ້ນທາງກາຍ ຯລຯ

ຖ້າແມ່ນບັນດິດຜູ້ສະຫຼາດ ມີປັນຍາພິຈາລະນາອາຍະຕະນະພາຍໃນ ໖ ປະການນັ້ນທາງໃຈ ກໍຈະຜາກົດເປັນຂອງວ່າງທັງໝົດ ຜາກົດເປັນຂອງເປົ່າທັງໝົດ ຜາກົດເປັນຂອງສູນທັງໝົດ

ຄຳວ່າ ພວກໂຈນຜູ້ຂ້າຊາວບ້ານນັ້ນ ເປັນຊື່ຂອງອາຍະຕະນະພາຍນອກ ໖ ປະການ

ພິກຂຸທັງຫຼາຍ ຕາຍ່ອມເດືອດຮ້ອນຍ້ອນຮູບທີ່ໜ້າພໍໃຈ ແລະບໍ່ໜ້າພໍໃຈ ຫູ ຯລຯ ດັງ ຯລຯ ລີ້ນຍ່ອມເດືອດຮ້ອນຍ້ອນຣົດທີ່ໜ້າພໍໃຈ ແລະບໍ່ໜ້າພໍໃຈ ກາຍ ຯລຯ ໃຈຍ່ອມເດືອດຮ້ອນຍ້ອນທຳມາຣົມທີ່ໜ້າພໍໃຈ ແລະບໍ່ໜ້າພໍໃຈ

ຄຳວ່າ ແມ່ນ້ຳໃຫຍ່ ນັ້ນເປັນຊື່ ຂອງໂອຄະ (ແມ່ນ້ຳ) ທັງ ໔ ຄື

໑. ກາໂມຄະ (ໂອຄະຄືກາມ) ໒. ພະໂວຄະ (ໂອຄະຄືພົບ)
໓. ທິດໂຖຄະ (ໂອຄະຄືທິດຖິ) ໔. ອະວິດໂຊຄະ (ໂອຄະຄືອະວິດຊາ)

ຄຳວ່າ ຝັ່ງນີ້ໜ້າຣະແວງ ມີໄພຈຳເພາະໜ້າ ນັ້ນເປັນຊື່ຂອງຈັກກາຍະ (ກາຍຂອງຕົນ)

ຄຳວ່າ ຝັ່ງນັ້ນປອດໄພ ບໍ່ມີໄພຈຳເພາະໜ້າ ນັ້ນເປັນຊື່ຂອງນິບພານ

ຄຳວ່າ ແພ ນັ້ນ ເປັນຊື່ຂອງອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ (ເຫັນຖືກ)        ຯລຯ    ໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

ຄຳວ່າ ໃຊ້ມືແລະຕີນພະຍາຍາມໄປນັ້ນ ເປັນຊື່ຂອງວິຣິຍາຣຳພະ (ຜາຣົບຄວາມພຽນ)

ພິກຂຸທັງຫຼາຍ ຄຳວ່າ ເປັນຜູ້ລອຍບາບຂ້າມເຖິງຝັ່ງດຳລົງຢູ່ເທິງບົກ ນັ້ນເປັນຊື່ຂອງພຣະອະຣະຫັນ

**ອາສີວິໂສປະມະສູດທີ ໑ ຈົບ**

# ໔. ຣະໂຖປະມະສູດ

## ວ່າດ້ວຍອຸປະມາດ້ວຍລົດ

[໔໓໙] ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໓ ປະການ ມີສຸກໂສມະນັດ ຫຼາຍຢູ່ໃນປັດຈຸບັນ ແລະ ຍ່ອມຜາຣົບເຫດເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ພິກຂຸຄຸ້ມຄອງທະວານໃນອິນຊີທັງຫຼາຍ
໔. ຮູ້ປະມານໃນການບໍຣິໂພກອາຫານ
໓. ປະກອບຄວາມພຽນເຄື່ອງຕື່ນຢູ່ສະເໝີ ໆ

ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອ ສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄື ອະພິດຊາ ແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ

ພິກຂຸຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ໂຮມຖື ບໍ່ແຍກຖື ປະຕິບັດ ເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນ ຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ

ນາຍສາຣະຖີເຝິກມ້າຜູ້ສະຫຼາດ ເປັນອາຈານເຝິກມ້າຂຶ້ນສູ່ລົດມ້າ ເຊິ່ງມີຄັນແຫຼມກຽມພ້ອມໄວ້ແລ້ວ ດຶງເຊືອກດ້ວຍມືຊ້າຍ ຖືຄັນແຫຼມດ້ວຍມືຂວາ ຂັບໄປຂ້າງໜ້າກໍໄດ້ ຖອຍຫຼັງກໍໄດ້ ໃນຖະໜົນໃຫຍ່ສີ່ແຍກ ເຊິ່ງມີພື້ນພຽງສະເໝີຕາມຕ້ອງການແນ່ນສັນໃດ ພິກຂຸກໍຄືກັນສັນນັ້ນ

ຍ່ອມສຶກສາເພື່ອຖືຮັກສາ ຍ່ອມສຶກສາເພື່ອສັງລວມ ຍ່ອມສຶກສາເພື່ອເຝິກຝົນ ຍ່ອມສຶກສາເພື່ອລະງັບອິນຊີ ໕ ປະການນີ້

ພິກຂຸຊື່ວ່າ ຄຸ້ມຄອງທະວານໃນອິນຊີທັງຫຼາຍເປັນແນວນີ້ແລ

ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາໂດຍແຍບຄາຍແລ້ວ ສັນອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອຄວາມດຳລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ ເຮົາຈັກກຳຈັດເວທະນາເກົ່າ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະ ຄວາມຢູ່ຜາສຸກຈັກມີແກ່ເຮົາ

ບຸຣຸດເພິ່ງທາບາດກໍພຽງເພື່ອຕ້ອງການໃຫ້ຫາຍ ຫຼື ບຸຣຸດເພິ່ງຢອດເພົາລົດກໍພຽງເພື່ອຕ້ອງການຂົນສິ່ງຂອງໄປໄດ້ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ພິຈາລະນາໂດຍແຍບຄາຍແລ້ວສັນອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອມົວເມົາ ບໍ່ແມ່ນເພື່ອປະດັບ ບໍ່ແມ່ນເພື່ອຕົກແຕ່ງ ແຕ່ພຽງເພື່ອຄວາມດຳລົງຢູ່ໄດ້ແຫ່ງກາຍນີ້ ເພື່ອໃຫ້ກາຍນີ້ເປັນໄປໄດ້ ເພື່ອກຳຈັດຄວາມບຽດບຽນ ເພື່ອອະນຸເຄາະພົມມະຈັນ ດ້ວຍຄິດເຫັນວ່າ ເຮົາຈັກກຳຈັດເວທະນາເກົ່າ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳເນີນໄປແຫ່ງກາຍ ຄວາມບໍ່ມີໂທດ ແລະຄວາມຢູ່ຜາສຸກຈັກມີແກ່ເຮົາ

ພິກຂຸຊື່ວ່າ ຮູ້ປະມານໃນການບໍຣິໂພກອາຫານເປັນແນວນີ້ແລ

ພິກຂຸຊື່ວ່າ ປະກອບຄວາມພຽນເປັນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງ ເມີດມື້ ຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍ ທີ່ເປັນເຄື່ອງຂັດຂວາງດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປະຖົມມະຍາມແຫ່ງຣາຕີ ນອນ ຄື ຣາດຊະສີໂດຍຂ້າງເບື້ອງຂວາ ຊ້ອນຕີນເຫຼື່ອມຕີນ ມີສະຕິສຳປະຊັນຍະ ໝາຍໃຈວ່າຈະລຸກຂຶ້ນ ຕະຫຼອດມັດຊິມະຍາມແຫ່ງຣາຕີ ລຸກຂຶ້ນຊຳຣະຈິດໃຫ້ບໍລິສຸດຈາກທຳທັງຫຼາຍທີ່ເປັນເຄື່ອງຂັດຂວາງ ດ້ວຍການຈົງກົມ ດ້ວຍການນັ່ງ ຕະຫຼອດປັດສິມມະຍາມແຫ່ງຣາຕີ

ພິກຂຸຊື່ວ່າ ປະກອບຄວາມພຽນເຄື່ອງຕື່ນຢູ່ເນືອງ ໆ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸ ຜູ້ປະກອບດ້ວຍທຳ ໓ ປະການນີ້ ຊື່ວ່າ ມີສຸກໂສມະນັດ ຫຼາຍຢູ່ໃນປັດຈຸບັນ ແລະຊື່ວ່າ ຜາຣົບເຫດເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍ

**ຣະໂຖປະມະສູດທີ ໔ ຈົບ**

# ໓. ກຸມໂມປະມະສູດ

## ວ່າດ້ວຍອຸປະມາດ້ວຍເຕົ່າ

[໔໔໐] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ມີເຕົ່າໂຕໜຶ່ງ ເວລາແລງທ່ຽວຫາກິນທີ່ແຄມຝັ່ງແມ່ນ້ຳ ແມ່ນໝາຈອກໂຕໜຶ່ງເວລານັ້ນ ກໍທ່ຽວຫາກິນຢູ່ທີ່ແຄມຝັ່ງແມ່ນ້ຳ ເຕົ່າເຫັນໝາຈອກທ່ຽວຫາກິນແຕ່ໄກ ກໍຫົດຫົວ ແລະຂາເຂົ້າກະດອງຂອງຕົນ ບໍ່ເຄື່ອນໄຫວ ມິດຢູ່ ຝ່າຍໝາຈອກກໍເຫັນເຕົ່າທ່ຽວຫາກິນແຕ່ໄກຄືກັນ ຈຶ່ງເຂົ້າໄປຫາເຕົ່າແລ້ວຢືນຢູ່ໃກ້ດ້ວຍຄິດວ່າ ເມື່ອໃດເຕົ່ານີ້ໂປ່ໂລ່ຫົວ ແລະຂາສ່ວນໃດສ່ວນໜຶ່ງອອກມາ ເມື່ອນັ້ນ ເຮົາຈັກງັບມັນຟາດແລ້ວກິນສາ ໃນບ່ອນນັ້ນ ເມື່ອໃດເຕົ່າບໍ່ໂປ່ໂລ່ຫົວ ແລະຂາສ່ວນໃດສ່ວນໜຶ່ງອອກມາ ເມື່ອນັ້ນ ໝາຈອກກໍເບື່ອໜ່າຍ ບໍ່ໄດ້ໂອກາດ ຍ່າງຈາກເຕົ່າໄປ

ຂໍ້ນີ້ກໍຄືກັນ ສັນນັ້ນ ແມ່ນມານຜູ້ມີບາບເຂົ້າໃກ້ທ່ານທັງຫຼາຍ ສະໝໍ່າສະເໝີດ້ວຍຄິດວ່າ ລາງເທື່ອເຮົາຈະເພິ່ງໄດ້ໂອກາດທາງຕາ ຯລຯ ທາງລີ້ນ ຯລຯ ຫຼື ທາງໃຈຂອງພິກຂຸເຫຼົ່ານີ້ ຍ້ອນແນວນັ້ນທ່ານທັງຫຼາຍ ຈົ່ງຄຸ້ມຄອງທະວານໃນອິນຊີທັງຫຼາຍຢູ່ເທີ້ນ ເຫັນຮູບທາງຕາແລ້ວຢ່າໂຮມຖື ຢ່າແຍກຖື ຈົ່ງປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈົ່ງຖືຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຢ່າໂຮມຖື ຢ່າແຍກຖື ຈົ່ງປະຕິບັດ ເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເພິ່ງເປັນເຫດໃຫ້ຖືກທຳທີ່ເປັນບາບອະກຸສົນຄືອະພິດຊາ ແລະ ໂທມະນັດຄອບງຳໄດ້ ຈົ່ງຖືຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ

ພິກຂຸທັງຫຼາຍ ເມື່ອໃດ ທ່ານທັງຫຼາຍຈັກຄຸ້ມຄອງທະວານໃນອິນຊີທັງຫຼາຍຢູ່ ເມື່ອນັ້ນ ແມ່ນມານຜູ້ມີບາບກໍຈະເບື່ອໜ່າຍ ບໍ່ໄດ້ໂອກາດ ຫຼີກຈາກທ່ານທັງຫຼາຍໄປ ຄືໝາຈອກຍ່າງຈາກເຕົ່າໄປສັນນັ້ນ

ພິກຂຸຜູ້ມີໃຈຕັ້ງໝັ້ນໃນມະໂນວິຕົກ ບໍ່ມີຕັນຫາ ແລະທິດຖືອາໄສ
ບໍ່ບຽດບຽນຜູ້ອື່ນ ດັບກິເລດແລ້ວ ບໍ່ວ່າຮ້າຍຜູ້ໃດ
ຄືເຕົ່າຫົດຫົວ ແລະ ຂາໄວ້ໃນກະດອງຂອງຕົນສັນນັ້ນ

**ກຸມໂມປະມະສູດທີ ໓ ຈົບ**

# ໔. ປະຖົມທາຣຸກຂັນໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍຂອນໄມ້ ສູດທີ ໑

[໔໔໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຝັ່ງແມ່ນ້ຳຄົງຄາ ເຂດນະຄອນໂກສຳພີ ໄດ້ທອດພຣະເນດເຫັນຂອນໄມ້ໃຫຍ່ ລອຍມາຕາມກະແສແມ່ນ້ຳຄົງຄາ ຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນຂອນໄມ້ໃຫຍ່ນັ້ນທີ່ລອຍມາຕາມກະແສແມ່ນ້ຳຄົງຄາບໍ?

ພິກຂຸທັງຫຼາຍຂາບທູນວ່າ ເຫັນ ຂ້ານ້ອຍ

ຖ້າຂອນໄມ້ຈະບໍ່ລອຍເຂົ້າມາໃກ້ຝັ່ງນີ້ ບໍ່ລອຍເຂົ້າໄປໃກ້ຝັ່ງນັ້ນ ບໍ່ຈົມກາງແມ່ນ້ຳ ບໍ່ຄ້າງຕື້ນ ບໍ່ຖືກມະນຸດນຳໄປ ບໍ່ຖືກອະມະນຸດນຳໄປ ບໍ່ຖືກກຽວນ້ຳວົນດູດໄວ້ ບໍ່ໂດກພາຍໃນ ເມື່ອເປັນແນວນີ້ ຂອນໄມ້ນັ້ນ ກໍຈັກລອຍໄປສູ່ສະມຸດໄດ້ ໄຫຼໄປສູ່ສະມຸດໄດ້ ເລື່ອນໄປສູ່ສະມຸດໄດ້

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນກະແສແມ່ນ້ຳຄົງຄາ ລຸ່ມໄປສູ່ສະມຸດ ລາດໄປສູ່ສະມຸດ ໄຫຼໄປສູ່ສະມຸດ

ຂໍ້ນີ້ ກໍຄືກັນສັນນັ້ນ ຖ້າແມ່ນທ່ານທັງຫຼາຍຈະບໍ່ເຂົ້າມາໃກ້ຝັ່ງນີ້ ບໍ່ເຂົ້າໄປໃກ້ຝັ່ງນັ້ນ ບໍ່ຈົມໃນທ່າມກາງ ບໍ່ຄ້າງຕື້ນ ບໍ່ຖືກມະນຸດຈັບໄວ້ ບໍ່ຖືກອະມະນຸດເຂົ້າສິງ ບໍ່ຖືກກຽວນ້ຳວົນດູດໄວ້ ບໍ່ເປັນຜູ້ເນົ່າພາຍໃນ ເມື່ອເປັນແນວນີ້ ທ່ານທັງຫຼາຍ ກໍຈັກນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນສຳມາທິດຖິ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມວ່າ ຂ້າແດ່ ພຣະອົງ ຜູ້ຈະເລີນ ອັນໃດຊື່ວ່າ ຝັ່ງນີ້ ອັນໃດຊື່ວ່າ ຝັ່ງນັ້ນ ອັນໃດຊື່ວ່າ ການຈົມໃນທ່າມກາງ ອັນໃດຊື່ວ່າ ການຄ້າງຕື້ນ ການຖືກມະນຸດຈັບໄວ້ເປັນແນວໃດ? ການຖືກອະມະນຸດເຂົ້າສິງເປັນແນວໃດ? ການຖືກກຽວນ້ຳວົນດູດໄວ້ເປັນແນວໃດ? ຄວາມເນົ່າພາຍໃນເປັນແນວໃດ? ຂ້ານ້ອຍ

ພິກຂຸ ຄຳວ່າ ຝັ່ງນີ້ ນີ້ເປັນຊື່ຂອງອາຍະຕະນະພາຍໃນ ໖ ປະການ

ຄຳວ່າ ຝັ່ງນັ້ນ ນີ້ເປັນຊື່ ຂອງອາຍະຕະນະພາຍນອກ ໖ ປະການ

ຄຳວ່າ ການຈົມໃນທ່າມກາງ ນີ້ເປັນຊື່ ຂອງນັນທິຣາຄະ (ຄວາມກຳໜັດດ້ວຍອຳນາດຄວາມຍິນດີ)

ຄຳວ່າ ການຄ້າງຕື້ນ ນີ້ເປັນຊື່ຂອງການຖືໂຕ

ການຖືກມະນຸດຈັບໄວ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຢູ່ຄຸກຄີ ເພີດເພີນ ເສົ້າໂສກ ກັບພວກຄະລືຫັດ ເມື່ອເຂົາສຸກກໍສຸກດ້ວຍ ເມື່ອເຂົາທຸກກໍທຸກດ້ວຍ ເມື່ອເຂົາມີກິດທີ່ຄວນເຮັດເກີດຂຶ້ນ ກໍຊ່ອຍເຮັດກິດນັ້ນດ້ວຍຕົນເອງ

ນີ້ຮຽກວ່າ ການຖືກມະນຸດຈັບໄວ້

ການຖືກອະມະນຸດເຂົ້າສິງ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ປະພຶດພົມມະຈັນປາຖະໜາເປັນຢູ່ໃນໝູ່ເທບໝູ່ໃດໝູ່ໜຶ່ງວ່າດ້ວຍສິນ ດ້ວຍຂໍ້ວັດປະຕິບັດ ດ້ວຍຕະບະ ຫຼື ດ້ວຍພົມມະຈັນນີ້ ເຮົາຈັກເປັນເທວະດາຫຼືເທບເຈົ້າຕົນໃດຕົນໜຶ່ງ

ນີ້ຮຽກວ່າ ການຖືກອະມະນຸດເຂົ້າສິງ

ຄຳວ່າ ການຖືກກຽວນ້ຳວົນດູດໄວ້ ເປັນຊື່ຂອງກາມມະຄຸນ ໕ ປະການ

ຄວາມເນົ່າພາຍໃນ ເປັນແນວໃດ?

ຄື ພິກຂຸລາງອົງໃນທຳວິໄນນີ້ເປັນຄົນທຸສິນ ມີທຳຊົ່ວຊາມ ບໍ່ສະອາດ ມີຄວາມປະພຶດທີ່ໜ້າລັງກຽດ ມີການງານປົກປິດ ບໍ່ແມ່ນສະມະນະ ແຕ່ປະຕິຍານວ່າເປັນສະມະນະ ບໍ່ແມ່ນພົມມະຈາຣີ ແຕ່ປະຕິຍານວ່າເປັນພົມມະຈາຣີ ເນົ່າພາຍໃນ ຊຸ່ມດ້ວຍຣາຄະ ເປັນຄືຂີ້ເຫຍື່ອ

ນີ້ຮຽກວ່າ ຄວາມເນົ່າພາຍໃນ

ກໍຂະນະນັ້ນ ນາຍນັນທະຄົນລ້ຽງງົວຢືນຢູ່ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ລຳດັບນັ້ນນາຍນັນທະຄົນລ້ຽງງົວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຈັກບໍ່ເຂົ້າມາໃກ້ຝັ່ງນີ້ ຈັກບໍ່ເຂົ້າໄປໃກ້ຝັ່ງນັ້ນ ຈັກບໍ່ຈົມໃນທ່າມກາງ ຈັກບໍ່ຄ້າງຕື້ນ ຈັກບໍ່ຖືກມະນຸດຈັບໄວ້ ຈັກບໍ່ຖືກອະມະນຸດເຂົ້າສິງ ຈັກບໍ່ຖືກກຽວນ້ຳວົນດູດໄວ້ ຈັກບໍ່ເປັນຜູ້ເນົ່າພາຍໃນ ຂ້າພຣະອົງ ເພິ່ງໄດ້ບັນພະຊາ ອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ນັນທະ ຖ້າເປັນແນວນັ້ນ ທ່ານຈົ່ງມອບງົວໃຫ້ເຈົ້າຂອງເຂົາເທີ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ພວກງົວລູກອ່ອນຈັກພາກັນໄປເອງ

ນັນທະ ທ່ານຈົ່ງມອບງົວໃຫ້ແກ່ເຈົ້າຂອງເຂົາເທີ້ນ

ຕໍ່ມາ ນາຍນັນທະຄົນລ້ຽງງົວມອບງົວໃຫ້ແກ່ເຈົ້າຂອງແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ມອບງົວໃຫ້ແກ່ເຈົ້າຂອງເຂົາແລ້ວ ຂ້າພຣະອົງເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍເທີ້ນ

ຕໍ່ມາ ນາຍນັນທະຄົນລ້ຽງງົວ ໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ເມື່ອທ່ານພຣະນັນທະອຸປະສົມບົດໄດ້ບໍ່ດົນ ກໍຫຼີກອອກໄປຢູ່ຄົນດຽວ ຯລຯ

ອັນໜຶ່ງ ທ່ານພຣະນັນທະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ປະຖົມທາຣຸກຂັນໂທປະມະສູດທີ ໔ ຈົບ**

# ໕. ທຸຕິຍະທາຣຸກຂັນໂທປະມະສູດ

## ວ່າດ້ວຍອຸປະມາດ້ວຍຂອນໄມ້ ສູດທີ ໕

[໔໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຝັ່ງແມ່ນ້ຳຄົງຄາ ເຂດເມືອງກິມມິລະ ໄດ້ທອດພຣະເນດເຫັນຂອນໄມ້ໃຫຍ່ລອຍມາຕາມກະແສແມ່ນ້ຳຄົງຄາ ຈຶ່ງຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນຂອນໄມ້ໃຫຍ່ນັ້ນ ທີ່ລອຍມາຕາມກະແສແມ່ນ້ຳຄົງຄາແດ່ບໍ?

ພິກຂຸທັງຫຼາຍຂາບທູນວ່າ ເຫັນ ຂ້ານ້ອຍຯລຯ

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ແລ້ວ ທ່ານພຣະກິມມິລະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດຊື່ວ່າຝັ່ງນີ້ ຯລຯ

ກິມມິລະ ຄວາມເນົ່າພາຍໃນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຕ້ອງອາບັດທີ່ເສົ້າໝອງແນວໃດແນວໜຶ່ງແລ້ວ ການອອກຈາກອາບັດເສົ້າໝອງບໍ່ຜາກົດ

ນີ້ຮຽກວ່າ ຄວາມເນົ່າພາຍໃນ

**ທຸຕິຍະທາຣຸກຂັນໂທປະມະສູດທີ ໕ ຈົບ**

# ໖. ອະວັດສຸຕະປະຣິຍາຍະສູດ

## ວ່າດ້ວຍອະວັດສຸຕະບັນຍາຍ

[໔໔໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນີໂຄທາຣາມ ເຂດເມືອງກະບິນລະພັດ ແຄວັນສັກກະ ສະໄໝນັ້ນ ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດຮັບສັ່ງໃຫ້ສ້າງຫ້ອງປະຊຸມຫຼວງຂຶ້ນໃໝ່ສຳເລັດໄດ້ບໍ່ດົນ ຍັງບໍ່ມີສະມະນະ ພາມ ຫຼື ມະນຸດຄົນໃດຄົນໜຶ່ງເຂົ້າໄປຢູ່ອາໄສ ຄັ້ງນັ້ນ ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍ ຄື ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດຮັບສັ່ງໃຫ້ສ້າງຫ້ອງປະຊຸມຫຼວງຂຶ້ນໃໝ່ ສຳເລັດໄດ້ບໍ່ດົນຍັງບໍ່ມີສະມະນະ ພາມ ຫຼື ມະນຸດຄົນໃດຄົນໜຶ່ງເຂົ້າໄປຢູ່ອາໄສ ຂໍພຣະຜູ້ມີພຣະພາກເຈົ້າໂຜດໃຊ້ສອຍຫ້ອງປະຊຸມຫຼວງນັ້ນກ່ອນເທີ້ນ ຂ້ານ້ອຍ ເມື່ອພຣະອົງຊົງໃຊ້ສອຍຫ້ອງປະຊຸມຫຼວງກ່ອນແລ້ວ ເຈົ້າສາກະຍະຣາຊາທັງຫຼາຍຜູ້ຄອງນະຄອນກະບິນລະພັດຈັກໃຊ້ສອຍໃນພາຍຫຼັງ ການໃຊ້ສອຍຂອງພຣະອົງນັ້ນ ເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດສິ້ນການລະນານ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ

ລຳດັບນັ້ນ ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດຊົງຮູ້ວ່າ ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນແລ້ວ ຈຶ່ງສະເດັດລຸກຂຶ້ນຈາກທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວສະເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງໃໝ່ ຮັບສັ່ງໃຫ້ປູລາດຫ້ອງປະຊຸມຫຼວງ ເຊິ່ງເຈົ້າພະນັກງານໄດ້ປູລາດດ້ວຍເຄື່ອງປູລາດທັງປວງແລ້ວ ໃຫ້ປູລາດອາສະນະທັງຫຼາຍ ໃຫ້ຕັ້ງໂອ່ງນ້ຳໄວ້ ໃຫ້ໄຕ້ປະທີບນ້ຳມັນຂຶ້ນແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຫ້ອງປະຊຸມຫຼວງໄດ້ປູລາດດ້ວຍເຄື່ອງປູລາດທັງປວງແລ້ວອາສະນະປູລາດແລ້ວ ຕັ້ງໂອ່ງນ້ຳປະຈຳໄວ້ ແລະໄຕ້ປະທີບນ້ຳມັນໄວ້ແລ້ວ ຂໍພຣະອົງຊົງຮູ້ການອັນສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າ ຊົງຄອງອັນຕະຣະວາສົກແລ້ວ ຖືບາດແລະຈີວອນ ສະ

ເດັດເຂົ້າໄປສູ່ຫ້ອງປະຊຸມຫຼວງໃໝ່ພ້ອມດ້ວຍພິກຂຸສົງ ຊົງລ້າງພຣະບາດແລ້ວສະເດັດເຂົ້າໄປປະທັບນັ່ງອີງເສົາກາງ ຊົງອວ່າຍພຣະພັກໄປທາງທິດຕາເວັນອອກ ຝ່າຍພຣະສົງລ້າງຕີນແລ້ວກໍເຂົ້າໄປສູ່ຫ້ອງປະຊຸມຫຼວງແລ້ວນັ່ງອີງຝາດ້ານທິດຕາເວັນຕົກ ອວ່າຍໜ້າໄປທາງທິດຕາເວັນອອກໃຫ້ພຣະຜູ້ມີພຣະພາກເຈົ້າປະທັບຢູ່ດ້ານໜ້າ

ແມ່ນເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດຊົງລ້າງພຣະບາດແລ້ວກໍສະເດັດເຂົ້າໄປສູ່ ຫ້ອງປະຊຸມຫຼວງ ປະທັບນັ່ງອີງຝາດ້ານທິດຕາເວັນອອກ ຊົງອວ່າຍພຣະພັກໄປທາງທິດຕາເວັນຕົກ ໃຫ້ພຣະຜູ້ມີພຣະພາກເຈົ້າປະທັບຢູ່ດ້ານໜ້າຄືກັນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ເຈົ້າສາກະຍະທັງຫຼາຍຜູ້ຄອງນະຄອນກະບິນລະພັດ ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈ ໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາຕະຫຼອດຣາຕີສ່ວນຫຼາຍ ແລ້ວຊົງສົ່ງໄປດ້ວຍພຣະດຳຣັດວ່າ ທ່ານຜູ້ໂຄຕະມະໂຄດທັງຫຼາຍ ຣາຕີລ່ວງໄປແລ້ວ ທ່ານທັງຫຼາຍຈົ່ງຮູ້ການອັນສົມຄວນໃນບັດນີ້ເທີ້ນ

ເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດ ທູນຮັບພຣະດຳຣັດແລ້ວສະເດັດລຸກຂຶ້ນຈາກທີ່ປະທັບ ຖວາຍອະພິວາດ ກະທຳປະທັກຂິນແລ້ວສະເດັດຈາກໄປ

ຂະນະນັ້ນ ເມື່ອເຈົ້າສາກະຍະທັງຫຼາຍ ຜູ້ຄອງນະຄອນກະບິນລະພັດສະເດັດຈາກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກທ່ານພຣະມະຫາໂມກຄັນລານະມາຕັດວ່າ ໂມກຄັນລານະ ພິກຂຸສົງ ປາສະຈາກຖີນະມິດທະແລ້ວ ທຳມີກະຖາຂອງທ່ານຈົ່ງຜາກົດແກ່ພິກຂຸທັງຫຼາຍເຮົາເມື່ອຍຫຼັງ ຈັກຢຽດຫຼັງ ທ່ານພຣະມະຫາໂມກຄັນລານະທູນຮັບສະໜອງພຣະດຳຣັດແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງປູຜ້າສັງຄາຕິ ໔ ຊັ້ນ ຊົງສຳເລັດສີຫະໄສຍາດ (ການນອນຄືຣາດຊະສີ) ໂດຍສະແຄງຂວາ ຊ້ອນພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ຊົງກຳນົດໄວ້ໃນພຣະຫະໄທວ່າ ຈະສະເດັດລຸກຂຶ້ນໃນບ່ອນນັ້ນ ທ່ານພຣະມະຫາໂມກຄັນລານະ ຮຽກພິກຂຸທັງຫຼາຍມາກ່າວດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳຂອງທ່ານພຣະມະຫາໂມກຄັນລານະແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ກ່າວດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍຈັກສະແດງອະວັດສຸຕະບັນຍາຍ ແລະອະນະວັດສຸຕະບັນຍາຍແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກລ່າວ ພິກຂຸເຫຼົ່ານັ້ນ ຮັບຄຳຂອງທ່ານພຣະມະຫາໂມກຄັນລານະແລ້ວ ທ່ານພຣະມະຫາໂມກຄັນລານະໄດ້ກ່າວ ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸເປັນຜູ້ຊຸ່ມດ້ວຍກິເລດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວຍ່ອມຍິນດີໃນຮູບທີ່ໜ້າຮັກ ຍ່ອມຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະ ບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະ ປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂື້ນແລ້ວແກ່ທ່ານ ຯລຯ

ຊີມຣົດທາງລີ້ນ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມຍິນດີໃນທຳມາຣົມທີ່ໜ້າຮັກ ຍ່ອມຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິຕຕະຈິດຢູ່ ແລະ ບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະ ປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂື້ນແລ້ວແກ່ທ່ານ

ຜູ້ມີອາຍຸທັງຫຼາຍ ພິກຂຸນີ້ຮຽກວ່າ ເປັນຜູ້ຊຸ່ມດ້ວຍກິເລດໃນຮູບທີ່ເພິ່ງຮູ້ແຈ້ງທາງຕາ ຯລຯ
ເປັນຜູ້ຊຸ່ມດ້ວຍກິເລດໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ
ຯລຯ
ເປັນຜູ້ຊຸ່ມດ້ວຍກິເລດໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈ

ຜູ້ມີອາຍຸທັງຫຼາຍ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແບບນີ້ທາງຕາ ມານກໍເພິ່ງໄດ້ປ່ອງໄດ້ອາລົມ ຯລຯ
ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແບບນີ້ທາງລີ້ນ
ຯລຯ
ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແບບນີ້ທາງໃຈ ມານກໍເພິ່ງໄດ້ປ່ອງໄດ້ອາລົມ

ເຮືອນທີ່ສ້າງດ້ວຍໄມ້ອໍ້ ຫຼື ເຮືອນທີ່ສ້າງດ້ວຍຫຍ້າແຫ້ງກອບມີອາຍຸ ໓-໔ ປີ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນອອກ ໄຟກໍເພິ່ງໄດ້ປ່ອງໄດ້ເຊື້ອ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນຕົກ ຯລຯ ທາງທິດເໜືອ ຯລຯ ທາງທິດໃຕ້ ຯລຯ ທາງທິດເບື້ອງຕ່ຳ ຯລຯ ທາງທິດເບື້ອງເທິງ ຯລຯ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດໃດ ໆ ກໍຕາມ ໄຟກໍເພິ່ງໄດ້ປ່ອງໄດ້ເຊື້ອແມ່ນສັນໃດ

ຂໍ້ນີ້ ກໍຄືກັນສັນນັ້ນ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນຜູ້ມີປົກກະຕິຢູ່ແບບນີ້ທາງຕາ ມານກໍເພິ່ງໄດ້ປ່ອງໄດ້ອາລົມ ຯລຯ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນຜູ້ມີປົກກະຕິຢູ່ແບບນີ້ທາງລີ້ນ ຯລຯ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນຜູ້ມີປົກກະຕິຢູ່ແບບນີ້ທາງໃຈ ມານກໍເພິ່ງໄດ້ປ່ອງໄດ້ອາລົມ

ຮູບຄອບງຳພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນີ້ໄດ້ ພິກຂຸຫາຄອບງຳຮູບໄດ້ບໍ່ ສຽງຄອບງຳພິກຂຸໄດ້ ພິກຂຸຫາຄອບງຳສຽງໄດ້ບໍ່ ກິ່ນຄອບງຳພິກຂຸໄດ້ ພິກຂຸຫາຄອບງຳກິ່ນໄດ້ບໍ່ ຣົດຄອບງຳພິກຂຸໄດ້ ພິກຂຸຫາຄອບງຳຣົດໄດ້ບໍ່ ໂຜດຖັບພະຄອບງຳພິກຂຸໄດ້ ພິກຂຸຫາຄອບງຳໂຜດຖັບພະໄດ້ບໍ່ ທຳມາຣົມຄອບງຳພິກຂຸໄດ້ ພິກຂຸຫາຄອບງຳທຳມາຣົມໄດ້ບໍ່

ພິກຂຸນີ້ຮຽກວ່າ ເປັນຜູ້ຖືກຄອບງຳ ຄື ຖືກຮູບຄອບງຳ ຖືກສຽງຄອບງຳ ຖືກກິ່ນຄອບງຳ ຖືກຣົດຄອບງຳ ຖືກໂຜດຖັບພະຄອບງຳ ແລະ ຖືກທຳມາຣົມຄອບງຳ ແຕ່ຄອບງຳຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະ ທຳມາຣົມບໍ່ໄດ້ ທຳທີ່ເປັນບາບອະກຸສົນອັນເປັນເຫດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດ ຊະຣາ ແລະມໍລະນະຕໍ່ໄປ ຄອບງຳທ່ານແລ້ວ

ພິກຂຸເປັນຜູ້ຊຸ່ມດ້ວຍກິເລດ ເປັນແນວນີ້ແລ

ພິກຂຸເປັນຜູ້ບໍ່ຊຸ່ມດ້ວຍກິເລດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ຍິນດີໃນຮູບທີ່ໜ້າຮັກ ບໍ່ຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັປປະມານະຈິດຢູ່ ແລະ ຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ ຯລຯ

ຊີມຣົດ ທາງລີ້ນ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ຍິນດີໃນທຳມາຣົມທີ່ໜ້າຮັກ ບໍ່ຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັປປະມາໜະຈິດຢູ່ ແລະ ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ

ພິກຂຸນີ້ຮຽກວ່າ ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນຮູບທີ່ເພິ່ງຮູ້ແຈ້ງທາງ ຕາ ຯລຯ

ພິກຂຸນີ້ຮຽກວ່າ ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນຣົດທີ່ເພິ່ງຮູ້ແຈ້ງທາງ ລີ້ນ ຯລຯ

ເປັນຜູ້ບໍ່ຊຸ່ມດ້ວຍກິເລດໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງ ໃຈ

ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຜູ້ມີປົກກະຕິຢູ່ແນວນີ້ທາງຕາ ມານກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ອາລົມ ຯລຯ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຯລຯ ທາງລີ້ນ ຯລຯ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຯລຯ ທາງໃຈ ມານກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ອາລົມ

ເຮືອນຍອດ ຫຼື ສາລາທີ່ພອກດິນໜຽວໜາມີເຄື່ອງສາບທາປຽກ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນອອກ ໄຟກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ເຊື້ອ ຯລຯ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດຕາເວັນຕົກ ຯລຯ ທາງທິດໃຕ້ ຯລຯ ທາງທິດເບື້ອງຕ່ຳ ຯລຯ ທາງທິດເບື້ອງເທິງ ຯລຯ ຖ້າແມ່ນຄົນເອົາທອນໄຟທີ່ຕິດໄຟເຂົ້າໄປຈູດເຮືອນນັ້ນທາງທິດໃດ ໆ ກໍຕາມ ໄຟກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ເຊື້ອ ແມ່ນສັນໃດ

ຂໍ້ນີ້ ກໍຄືກັນສັນນັ້ນ ຖ້າແມ່ນມານເຂົ້າໄປຫາພິກຂຸຜູ້ມີປົກກະຕິຢູ່ແນວນີ້ທາງຕາ ມານກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ອາລົມ ຯລຯ ຖ້າແມ່ນມານເຂົ້າໄປຫາພິກຂຸນັ້ນ ຯລຯ ທາງໃຈ ມານກໍບໍ່ເພິ່ງໄດ້ປ່ອງ ບໍ່ເພິ່ງໄດ້ອາລົມ ພິກຂຸຜູ້ມີປົກກະຕິຢູ່ແນວນີ້ຄອບງຳຮູບໄດ້ ຮູບຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳສຽງໄດ້ ສຽງຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳກິ່ນໄດ້ ກິ່ນຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳຣົດໄດ້ ຣົດຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳໂຜດຖັບພະໄດ້ ໂຜດຖັບພະຄອບງຳພິກຂຸບໍ່ໄດ້ ພິກຂຸຄອບງຳທຳມາຣົມໄດ້ ທຳມາຣົມຄອບງຳພິກຂຸບໍ່ໄດ້

ພິກຂຸນີ້ຮຽກວ່າ ເປັນຜູ້ຄອບງຳ ຄື ຄອບງຳຮູບໄດ້ ຄອບງຳສຽງໄດ້ ຄອບງຳກິ່ນໄດ້ ຄອບງຳຣົດໄດ້ ຄອບງຳໂຜດຖັບພະໄດ້ ແລະ ຄອບງຳທຳມາຣົມໄດ້ ແຕ່ບໍ່ຖືກຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະ ທຳມາຣົມຄອບງຳ ທ່ານຄອບງຳທຳທີ່ເປັນບາບອະກຸສົນເຫຼົ່ານັ້ນອັນເປັນເຫດໃຫ້ເສົ້າໝອງ ເຮັດໃຫ້ເກີດໃນພົບໃໝ່ ມີຄວາມກະວົນກະວາຍ ມີທຸກເປັນວິບາກ ເປັນທີ່ຕັ້ງແຫ່ງຊາດ ຊະຣາ ແລະ ມໍລະນະຕໍ່ໄປໄດ້ແລ້ວ

ຜູ້ມີອາຍຸທັງຫຼາຍ ພິກຂຸເປັນຜູ້ບໍ່ຊຸ່ມດ້ວຍກິເລດເປັນແນວນີ້ແລ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດລຸກຂຶ້ນ ຮັບສັ່ງຮຽກທ່ານພຣະມະຫາໂມກຄັນລານະ ມາຕັດຊົມວ່າ ດີແລ້ວ ດີແລ້ວ ໂມກຄັນລານະ ດີຫຼາຍ ທີ່ທ່ານໄດ້ກ່າວອະວັດສຸຕະບັນຍາຍ ແລະ ອະນະວັດສຸຕະບັນຍາຍແກ່ພິກຂຸທັງຫຼາຍ

ທ່ານພຣະມະຫາໂມກຄັນລານະໄດ້ກ່າວໄວຍາກອນພາສິດນີ້ແລ້ວ ພຣະສາດສະດາຊົງພໍພຣະທະໄທ ພິກຂຸເຫຼົ່ານັ້ນ ກໍມີໃຈຍິນດີ ຕ່າງຊົມຊື່ນພາສິດຂອງທ່ານພຣະມະຫາໂມກຄັນລານະດັ່ງນີ້ແລ

**ອະວັດສຸຕະປະຣິຍາຍະສູດທີ ໖ ຈົບ**

# ໗. ທຸກຂະທຳມະສູດ

## ວ່າດ້ວຍທຸກຂະທຳ

[໔໔໔] ພິກຂຸທັງຫຼາຍ ເມື່ອໃດພິກຂຸຮູ້ແຈ້ງຄວາມເກີດ ແລະຄວາມດັບແຫ່ງທຸກຂະທຳທັງປວງຕາມຄວາມເປັນຈິງ ເມື່ອນັ້ນທ່ານຍ່ອມເຫັນກາມໂດຍອາການທີ່ເມື່ອເຫັນກາມຢູ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍ ອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍຈະບໍ່ນອນຈົມ ທັງຕາມຮູ້ທຳເຄື່ອງປະພຶດ ແລະ ທຳເຄື່ອງຢູ່ໂດຍອາການທີ່ເມື່ອປະພຶດຢູ່ ທຳທີ່ເປັນບາບອະກຸສົນຄືອະພິດຊາ ແລະ ໂທມະນັດຈະບໍ່ຄອບງຳ

ພິກຂຸຮູ້ແຈ້ງຄວາມເກີດ ແລະ ຄວາມດັບແຫ່ງທຸກຂະທຳທັງປວງຕາມຄວາມເປັນຈິງເປັນແນວໃດ?

ຄື ຮູ້ແຈ້ງວ່າ ແນວນີ້ຮູບ ແນວນີ້ຄວາມເກີດແຫ່ງຮູບ ແນວນີ້ຄວາມດັບແຫ່ງຮູບ ແນວນີ້ເວທະນາ ฯລฯ ແນວນີ້ສັນຍາ ฯລฯ ແນວນີ້ສັງຂານ ฯລฯ ແນວນີ້ວິນຍານ ແນວນີ້ຄວາມເກີດແຫ່ງວິນຍານ ແນວນີ້ຄວາມດັບແຫ່ງວິນຍານ

ພິກຂຸຮູ້ແຈ້ງຄວາມເກີດ ແລະ ຄວາມດັບແຫ່ງທຸກຂະທຳທັງປວງຕາມຄວາມເປັນຈິງເປັນແນວນີ້ແລ

ພິກຂຸເຫັນກາມໂດຍອາການທີ່ເມື່ອເຫັນກາມຢູ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍຈະບໍ່ນອນຈົມ ເປັນແນວໃດ?

ຄື ຂຸມຖ່ານໄຟ ເລິກກວ່າຊົ່ວບຸຣຸດ ເຕັມດ້ວຍຖ່ານໄຟ ບໍ່ມີນ້ຳ ບໍ່ມີຄວັນ ຂະນະນັ້ນມີບຸຣຸດຄົນໜຶ່ງຍາກມີຊີວິດຢູ່ ບໍ່ຢາກຕາຍ ຮັກສຸກ ກຽດຊັງທຸກຍ່າງມາ ມີບຸຣຸດ ໒ ຄົນທີ່ແຂງແຮງຈັບແຂນເຂົາຄົນລະຂ້າງ ລາກເຂົ້າຫາຂຸມຖ່ານໄຟ ເຂົາໂອນເອນກາຍໄປຂ້າງນັ້ນຂ້າງນີ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸຣຸດນັ້ນຮູ້ວ່າ ເຮົາຕົກຂຸມຖ່ານໄຟນີ້ ຈັກເຖິງຄວາມຕາຍຫຼືທຸກປາງຕາຍ ຍ້ອນຕົກຂຸມຖ່ານໄຟນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຍ່ອມເຫັນກາມເຊິ່ງປຽບດ້ວຍຂຸມຖ່ານໄຟ ໂດຍອາການທີ່ເມື່ອເຫັນກາມຢູ່ ຄວາມພໍໃຈດ້ວຍອຳນາດຄວາມຕ້ອງການ ຄວາມເຍື່ອໃຍດ້ວຍອຳນາດຄວາມຕ້ອງການ ຄວາມສະຍົບດ້ວຍອຳນາດຄວາມຕ້ອງການ ຄວາມຮ້ອນຮົນດ້ວຍອຳນາດຄວາມຕ້ອງການໃນກາມທັງຫຼາຍຈະບໍ່ນອນຈົມ

ພິກຂຸຕາມຮູ້ທຳເຄື່ອງປະພຶດ ແລະທຳເຄື່ອງຢູ່ ໂດຍອາການທີ່ເມື່ອປະພຶດຢູ່ ທຳທີ່ເປັນບາບອະກຸສົນຄືອະພິດຊາ ແລະໂທມະນັດຈະບໍ່ຄອບງຳ ເປັນແນວໃດ?

ຄື ບຸຣຸດເຂົ້າໄປສູ່ປ່າທີ່ມີໜາມຫຼາຍ ຂ້າງໜ້າຂອງເຂົາກໍມີໜາມ ຂ້າງຫຼັງກໍມີໜາມ ຂ້າງຊ້າຍກໍມີໜາມ ຂ້າງຂວາກໍມີໜາມ ຂ້າງລຸ່ມກໍມີໜາມ ຂ້າງເທິງກໍມີໜາມ ເຂົາມີສະຕິກ້າວໄປ ມີສະຕິຖອຍກັບ ດ້ວຍຄິດວ່າ ໜາມຢ່າປັກເຮົາ ແມ່ນສັນໃດ ຂໍ້ນີ້ກໍຄືກັນສັນນັ້ນ ເຮົາກ່າວຮູບທີ່ໜ້າຮັກ ໜ້າຍິນດີໃນໂລກວ່າເປັນໜາມໃນອະຣິຍະວິໄນ ພິກຂຸ ຮູ້ແນວນີ້ແລ້ວເພິ່ງຮູ້ຈັກຄວາມບໍ່ສັງລວມແລະຄວາມສັງລວມ

ຄວາມບໍ່ສັງລວມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ຍ່ອມຍິນດີໃນຮູບທີ່ໜ້າຮັກ ຍ່ອມຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນທີ່ເກີດຂຶ້ນແລ້ວແກ່ທ່ານ ຯລຯ ຊິມຣົດທາງລີ້ນ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມຍິນດີໃນທຳມາຣົມທີ່ໜ້າຮັກ ຍ່ອມຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນທີ່ເກີດຂຶ້ນແກ່ທ່ານ

ຄວາມບໍ່ສັງລວມເປັນແນວນີ້ແລ

ຄວາມສັງລວມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ບໍ່ຍິນດີໃນຮູບທີ່ໜ້າຮັກ ບໍ່ຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັບປະມານະຈິດຢູ່ ແລະຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ ຯລຯ ຊິມຣົດທາງລີ້ນ ຯລຯ ຮູ້ແຈ້ງທຳມາຣົມ ທາງໃຈແລ້ວ ບໍ່ຍິນດີໃນທຳມາຣົມທີ່ໜ້າຮັກ ບໍ່ຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັບປະມານະຈິດຢູ່ ແລະ ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນ ແລ້ວແກ່ທ່ານ

ຄວາມສັງລວມເປັນແນວນີ້ແລ

ຖ້າເມື່ອພິກຂຸນັ້ນ ປະພຶດຢູ່ແນວນີ້ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປເກື້ອກູນແກ່ສັງໂຍດ ຍ່ອມເກີດຂຶ້ນຍ້ອນຄວາມຫຼົງລືມສະຕິໃນການລາງເທື່ອບາງເວລາ ສະຕິເກີດ

ຂຶ້ນຊ້າ ຂະນະນັ້ນທ່ານຍ່ອມລະ ບັນເທົາທຳທີ່ເປັນບາບອະກຸສົນນັ້ນ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກທັນທີ

ບຸຣຸດເພິ່ງໃຫ້ຢາດນ້ຳ ໒-໓ ຢົດຕົກລົງໃນກະທະເຫຼັກທີ່ຮ້ອນ ໆ ເມັດນີ້ ເມັດ ນ້ຳຕົກລົງຊ້າ ຂະນະນັ້ນ ຢາດນ້ຳເພິ່ງຣະເຫີຍ ເຫືອດແຫ້ງໄປຢ່າງວ່ອງໄວ ແມ່ນສັນໃດ ຂໍ້ນີ້ ກໍຄືກັນສັນນັ້ນ ຖ້າເມື່ອພິກຂຸນັ້ນ ປະພຶດຢູ່ແນວນີ້ ທຳທີ່ເປັນບາບອະກຸສົນ ມີຄວາມດຳຣິຊ່ານໄປ ເກື້ອກູນແກ່ສັງໂຍດຍ່ອມເກີດຂຶ້ນ ຍ້ອນຄວາມຫຼົງລືມສະຕິໃນການລາງເທື່ອບາງເວລາ ສະຕິເກີດຂຶ້ນຊ້າຂະນະນັ້ນທ່ານຍ່ອມລະ ບັນເທົາທຳທີ່ເປັນບາບອະກຸສົນນັ້ນ ເຮັດໃຫ້ໝົດສິ້ນໄປ ໃຫ້ເຖິງຄວາມບໍ່ມີອີກທັນທີ

ພິກຂຸຕາມຮູ້ທຳເຄື່ອງປະພຶດ ແລະ ທຳເຄື່ອງຢູ່ ໂດຍອາການທີ່ເມື່ອປະພຶດຢູ່ ທຳທີ່ເປັນບາບອະກຸສົນ ຄື ອະພິດຊາແລະໂທມະນັດຈະບໍ່ຄອບງຳ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຖ້າພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ມິດ ອຳມາດ ຍາດສາໂລຫິດກໍຕາມ ເພິ່ງປະວາຣະນາພິກຂຸຜູ້ປະພຶດຢູ່ແນວນີ້ເພື່ອໃຫ້ຍິນດີຍິ່ງດ້ວຍໂພຄະຊັບທັງຫຼາຍວ່າ ມາເທີ້ນ ພຣະຜູ້ເປັນເຈົ້າຜູ້ຈະເລີນ ຜ້າກາສາວະພັດເຫຼົ່ານີ້ເຮັດໃຫ້ທ່ານຮ້ອນຮົນບໍ່ແມ່ນບໍທ່ານຈະເປັນຄົນຫົວໂລ້ນ ທ່ຽວຖືກະເບື້ອງໄປເຮັດຫຍັງ ເຊີນເທີ້ນ ເຊີນທ່ານກັບມາເປັນຄະລືຫັດໃຊ້ສອຍໂພຄະຊັບ ແລະ ທຳບຸນຢູ່ເທີ້ນ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນ ເມື່ອປະພຶດຢູ່ແນວນີ້ຈັກບອກຄືນສິກຂາກັບມາເປັນຄະລືຫັດ

ປຽບຄື ແມ່ນ້ຳຄົງຄາທີ່ໄຫຼໄປທາງທິດຕາເວັນອອກ ບ່າໄປທາງທິດຕາເວັນອອກ ລົ້ນໄປທາງທິດຕາເວັນອອກ ຖ້າໝູ່ມະຫາຊົນພາກັນຖືເອົາຈົກ ແລະ ກະຕ່າມາດ້ວຍຕັ້ງໃຈວ່າ ພວກເຮົາຈັກຊ່ອຍກັນກັ້ນແມ່ນ້ຳຄົງຄານີ້ໃຫ້ໄຫຼໄປຂ້າງຫຼັງ ບ່າໄປຂ້າງຫຼັງ ລົ້ນໄປຂ້າງຫຼັງ

ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ໝູ່ມະຫາຊົນນັ້ນ ເພິ່ງກັ້ນແມ່ນ້ຳຄົງຄາໃຫ້ໄຫຼໄປຂ້າງຫຼັງ ບ່າໄປຂ້າງຫຼັງ ລົ້ນໄປຂ້າງຫຼັງໄດ້ບໍ?

ພິກຂຸທັງຫຼາຍຂາບທູນວ່າ ບໍ່ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນແມ່ນ້ຳຄົງຄາໄຫຼໄປທາງທິດຕາເວັນອອກ ບ່າໄປທາງທິດຕາເວັນອອກ ລົ້ນໄປທາງທິດຕາເວັນອອກ ໝູ່ມະຫາຊົນຈະກັ້ນແມ່ນ້ຳຄົງຄານັ້ນໃຫ້ໄຫຼໄປ

ຂ້າງຫຼັງ ບ່າໄປຂ້າງຫຼັງ ລີ້ນໄປຂ້າງຫຼັງ ບໍ່ແມ່ນເຮັດໄດ້ງ່າຍ ແລະ ໝູ່ມະຫາຊົນນັ້ນເພິ່ງມີສ່ວນແຫ່ງຄວາມລຳບາກ ອິດເມື່ອຍໄປລ່າ ໆ ຢ່າງແນ່ນອນ

ພິກຂຸທັງຫຼາຍ ອຸປະມານີ້ແມ່ນສັນໃດ ອຸປະໄມກໍຄືກັນສັນນັ້ນ ຖ້າພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ມິດ ອຳມາດ ຍາດ ສາໂລຫິດກໍຕາມ ເພິ່ງປະວາຣະນາພິກຂຸຜູ້ປະພຶດຢູ່ແນວນີ້ເພື່ອໃຫ້ຍິນດີຍິ່ງດ້ວຍໂພຄະຊັບທັງຫຼາຍວ່າ ມາເທີ້ນ ອັນຍາເຈົ້າຜູ້ຈະເລີນ ຜ້າກາສາວະພັດເຫຼົ່ານີ້ເຮັດໃຫ້ທ່ານຮ້ອນຮົນບໍ່ແມ່ນບໍ ທ່ານຈະເປັນຄົນຫົວໂລ້ນ ຖ່ຽວຖືກະເບື້ອງໄປເຮັດຫຍັງເຊີນເທີ້ນ ເຊີນທ່ານກັບມາເປັນຄະລືຫັດໃຊ້ສອຍໂພຄະຊັບ ແລະທຳບຸນຢູ່ເທີ້ນ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນ ເມື່ອປະພຶດຢູ່ແນວນີ້ຈັກບອກຄືນສິກຂາກັບມາເປັນຄະລືຫັດ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເປັນໄປບໍ່ໄດ້ເລີຍທີ່ຈິດນັ້ນທີ່ນ້ອມໄປໃນວິເວກ ອຽງໄປໃນວິເວກ ໂອນໄປໃນວິເວກຕະຫຼອດການລະນານແລ້ວ ຈັກວຽນມາເພື່ອເປັນຄະລືຫັດອີກ

**ທຸກຂະທຳມະສູດທີ ໗ ຈົບ**

## ໘. ກິງສຸໂກປະມະສູດ

### ວ່າດ້ວຍອຸປະມາດ້ວຍຕົ້ນດອກຈານ

[໔໔໕] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປຫາພິກຂຸອີກອົງໜຶ່ງຮອດບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນດັ່ງນີ້ວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງມີທັດສະນະນົດຈົດດີ

ພິກຂຸອົງນັ້ນຕອບວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງເຖິງຄວາມເກີດ ແລະຄວາມດັບແຫ່ງຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງມີທັດສະນະນົດຈົດດີ

ຂະນະນັ້ນ ທ່ານບໍ່ພໍໃຈການຕອບບັນຫາຂອງພິກຂຸອົງນັ້ນ ຈຶ່ງເຂົ້າໄປຫາພິກຂຸອີກອົງໜຶ່ງຮອດບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນດັ່ງນີ້ວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸ ຈຶ່ງມີທັດສະນະນົດຈົດດີ

ພິກຂຸອົງນັ້ນຕອບວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງເຖິງຄວາມເກີດ ແລະຄວາມດັບແຫ່ງອຸປາທານຂັນ ໕ ຕາມຄວາມເປັນຈິງ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸ ຈຶ່ງມີທັດສະນະນົດຈົດດີ

ຕໍ່ມາ ທ່ານບໍ່ພໍໃຈການຕອບບັນຫາຂອງພິກຂຸອົງນັ້ນ ຈຶ່ງເຂົ້າໄປຫາພິກຂຸອີກອົງໜຶ່ງຮອດ

ບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸ ຈຶ່ງມີທັດສະນະມົດຈົດດີ

ພິກຂຸນັ້ນຕອບວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງເຖິງຄວາມເກີດ ແລະຄວາມດັບແຫ່ງມະຫາພູຕະຮູບ ໔ ຕາມຄວາມເປັນຈິງ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸ ຈຶ່ງມີທັດສະນະມົດຈົດດີ

ຕໍ່ມາ ທ່ານບໍ່ພໍໃຈການຕອບບັນຫາຂອງພິກຂຸອົງນັ້ນ ຈຶ່ງເຂົ້າໄປຫາພິກຂຸອີກອົງໜຶ່ງຮອດບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ ພິກຂຸ ຈຶ່ງມີທັດສະນະມົດຈົດດີ

ພິກຂຸອົງນັ້ນຕອບວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງຕາມຄວາມເປັນຈິງວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນ ທັງປວງມີຄວາມດັບໄປເປັນທຳມະດາ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸ ຈຶ່ງມີທັດສະນະມົດຈົດດີ

ຕໍ່ມາ ທ່ານບໍ່ພໍໃຈການຕອບບັນຫາຂອງພິກຂຸອົງນັ້ນ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງເຂົ້າໄປຫາພິກຂຸອົງໜຶ່ງຮອດບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງມີທັດສະນະມົດຈົດດີ

ເມື່ອຂ້າພຣະອົງຖາມແນວນີ້ແລ້ວ ພິກຂຸອົງນັ້ນ ໄດ້ຕອບຂ້າພຣະອົງດັ່ງນີ້ວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງເຖິງຄວາມເກີດ ແລະ ຄວາມດັບແຫ່ງຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງມີທັດສະນະມົດຈົດດີ

ຂະນະນັ້ນ ຂ້າພຣະອົງບໍ່ພໍໃຈການຕອບບັນຫາຂອງພິກຂຸນັ້ນ ຈຶ່ງເຂົ້າໄປຫາພິກຂຸອີກອົງໜຶ່ງຮອດບ່ອນຢູ່ ແລ້ວໄດ້ຖາມພິກຂຸອົງນັ້ນວ່າ ຜູ້ມີອາຍຸ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງມີທັດສະນະມົດຈົດດີ

ເມື່ອຂ້າພຣະອົງຖາມແນວນີ້ແລ້ວ ພິກຂຸອົງນັ້ນ ໄດ້ຕອບຂ້າພຣະອົງວ່າ ຜູ້ມີອາຍຸ ຍ້ອນພິກຂຸຮູ້ແຈ້ງເຖິງຄວາມເກີດແລະຄວາມດັບແຫ່ງອຸປາທານຂັນ ໕ ຯລຯ ແຫ່ງມະຫາພູຕະຮູບ ໔ ຕາມຄວາມເປັນຈິງ ຯລຯ ຮູ້ແຈ້ງຕາມຄວາມເປັນຈິງວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸ ຈຶ່ງມີທັດສະນະມົດຈົດດີ

ຕໍ່ມາ ຂ້າພຣະອົງ ບໍ່ພໍໃຈການຕອບບັນຫາຂອງພິກຂຸອົງນັ້ນ ຈຶ່ງເຂົ້າມາເຝົ້າພຣະອົງຮອດບ່ອນຢູ່ ໗ລ໗ ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດນໍ ພິກຂຸ ຈຶ່ງມີທັດສະນະມົດຈິດດີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ປຽບຄື ບຸຣຸດບໍ່ເຄີຍເຫັນຕົ້ນດອກຈານເລີຍ ເຂົາເຂົ້າໄປຫາບຸຣຸດຄົນໜຶ່ງ ຜູ້ເຄີຍເຫັນຕົ້ນດອກຈານຮອດບ່ອນຢູ່ ແລ້ວຖາມບຸຣຸດນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານເປັນແນວໃດ?

ບຸຣຸດນັ້ນ ເພິ່ງຕອບແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານດຳຄືຕໍທີ່ຖືກໄຟໄໝ້ ເວລານັ້ນຕົ້ນດອກຈານເປັນດັ່ງທີ່ເຂົາເຫັນ ຂະນະນັ້ນ ເຂົາບໍ່ພໍໃຈການຕອບບັນຫາຂອງບຸຣຸດນັ້ນ ຈຶ່ງເຂົ້າໄປຫາບຸຣຸດອີກຄົນໜຶ່ງ ຜູ້ເຄີຍເຫັນຕົ້ນດອກຈານຮອດບ່ອນຢູ່ ແລ້ວຖາມບຸຣຸດນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານເປັນແນວໃດ?

ບຸຣຸດນັ້ນ ເພິ່ງຕອບແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານແດງຄືຕ່ອນຊີ້ນ ເວລານັ້ນຕົ້ນດອກຈານເປັນດັ່ງທີ່ເຂົາເຫັນ ຕໍ່ມາເຂົາບໍ່ພໍໃຈການຕອບບັນຫາຂອງບຸຣຸດນັ້ນ ຈຶ່ງເຂົ້າໄປຫາບຸຣຸດອີກຄົນໜຶ່ງຜູ້ເຄີຍເຫັນຕົ້ນດອກຈານຮອດບ່ອນຢູ່ ແລ້ວຖາມບຸຣຸດນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານເປັນແນວໃດ?

ບຸຣຸດນັ້ນ ເພິ່ງຕອບແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານທີ່ເກີດດົນມີຝັກ ຄື ຕົ້ນອີຮຸມປ່າ ເວລານັ້ນ ຕົ້ນດອກຈານເປັນດັ່ງທີ່ເຂົາເຫັນ ຕໍ່ມາເຂົາບໍ່ພໍໃຈການຕອບບັນຫາຂອງບຸຣຸດນັ້ນ ຈຶ່ງເຂົ້າໄປຫາບຸຣຸດອີກຄົນໜຶ່ງຜູ້ເຄີຍເຫັນຕົ້ນດອກຈານຮອດບ່ອນຢູ່ ແລ້ວຖາມບຸຣຸດນັ້ນແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານເປັນແນວໃດ?

ບຸຣຸດນັ້ນ ເພິ່ງຕອບແນວນີ້ວ່າ ທ່ານຜູ້ຈະເລີນ ຕົ້ນດອກຈານມີໃບແກ່ແລະໃບອ່ອນໜາແໜ້ນ ມີຮົ່ມທຶບຄືຕົ້ນໄຮ

ເວລານັ້ນ ຕົ້ນດອກຈານເປັນດັ່ງທີ່ເຂົາເຫັນແມ່ນສັນໃດ ຂໍ້ນີ້ກໍຄືກັນສັນນັ້ນ ການເຫັນຂອງສັດຕະບຸຣຸດເຫຼົ່ານັ້ນ ຜູ້ເຊື່ອແລ້ວເປັນອັນຖືກຕ້ອງໂດຍປະການໃດ ໆ ສັດຕະບຸຣຸດເຫຼົ່ານັ້ນກໍໄດ້ຕອບໂດຍປະການນັ້ນ ໆ

ພິກຂຸ ເມືອງຊາຍແດນຂອງພຣະຣາຊາ ມີກຳແພງແລະທໍຍາມໝັ້ນຄົງ ມີ ໖ ປະຕູ ນາຍປະຕູຂອງເມືອງນັ້ນເປັນບັນດິດ ມີປັນຍາແຫຼມຄົມ ຖ້າຫ້າມຄົນທີ່ຕົນບໍ່ຮູ້ຈັກ ອະນຸຍາດສະເພາະຄົນທີ່ຕົນຮູ້ຈັກໃຫ້ເຂົ້າໄປໃນເມືອງນັ້ນ ຣາດຊະທູດ ໒ ນາຍມີຣາດຊະການດ່ວນມາຈາກທິດຕາເວັນອອກຖາມນາຍປະຕູນັ້ນແນວນີ້ວ່າ ຜູ້ຈະເລີນ ເຈົ້າເມືອງ ໆ ນີ້ຢູ່ບ່ອນໃດ?

ນາຍປະຕູນັ້ນຕອບແນວນີ້ວ່າ ທ່ານຜູ້ຈະເລີນ ນັ້ນເຈົ້າເມືອງນັ່ງຢູ່ທີ່ທາງສີ່ແຍກກາງເມືອງ

ລຳດັບນັ້ນ ຣາດຊະທູດ ໒ ນາຍຜູ້ມີຣາດຊະການດ່ວນໄດ້ມອບຖວາຍພຣະຣາດຊະສານຕາມຄວາມເປັນຈິງແກ່ເຈົ້າເມືອງແລ້ວກັບໄປຕາມທາງທີ່ຕົນມາ ຣາດຊະທູດອີກ ໒ ນາຍຜູ້ມີຣາດຊະການດ່ວນ ມາຈາກທິດຕາເວັນຕົກ ຯລຯ ມາຈາກທິດເໜືອ ຯລຯ ມາຈາກທິດໃຕ້ ແລ້ວຖາມນາຍປະຕູນັ້ນແນວນີ້ວ່າ ຜູ້ຈະເລີນ ເຈົ້າເມືອງ ໆ ນີ້ຢູ່ບ່ອນໃດ?

ນາຍປະຕູນັ້ນຕອບແນວນີ້ວ່າ ທ່ານຜູ້ຈະເລີນ ນັ້ນເຈົ້າເມືອງນັ່ງຢູ່ທີ່ທາງສີ່ແຍກກາງເມືອງ

ລຳດັບນັ້ນ ຣາດຊະທູດ ໒ ນາຍຜູ້ມີຣາດຊະການດ່ວນນັ້ນ ໄດ້ມອບຖວາຍພຣະຣາຊະສານຕາມ ຄວາມເປັນຈິງແກ່ເຈົ້າເມືອງແລ້ວ ກໍກັບໄປຕາມທາງທີ່ຕົນມາ ແມ່ນສັນໃດ

ອຸປະໄມນີ້ກໍສັນນັ້ນ ເຮົາຍົກມາກໍເພື່ອໃຫ້ເຂົ້າໃຈເນື້ອຄວາມຊັດເຈນ ໃນອຸປະໄມນັ້ນມີອະທິບາຍດັ່ງຕໍ່ໄປນີ້

ຄຳວ່າ ເມືອງ ນີ້ເປັນຊື່ຂອງກາຍນີ້ເຊິ່ງປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນໄວຍ້ອນເຂົ້າສຸກ ແລະ ເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນແຕກກະຈັດກະຈາຍໄປເປັນທຳມະດາ

ຄຳວ່າ ມີ ໖ ປະຕູ ນີ້ເປັນຊື່ຂອງອາຍະຕະນະພາຍໃນ ໖ ປະການ

ຄຳວ່າ ນາຍປະຕູ ນີ້ເປັນຊື່ຂອງສະຕິ

ຄຳວ່າ ຣາດຊະທູດ ໒ ນາຍຜູ້ມີຣາດຊະການດ່ວນ ນີ້ເປັນຊື່ ຂອງສະມະຖະແລະວິປັດສະນາ

ຄຳວ່າ ເຈົ້າເມືອງ ນີ້ເປັນຊື່ຂອງວິນຍານ

ຄຳວ່າ ທາງສີ່ແຍກກາງເມືອງ ນີ້ເປັນຊື່ຂອງມະຫາພູຕະຮູບທັງ ໔ ຄື

໑. ປະຖະວີທາດ (ທາດດິນ) ໒. ອາໂປທາດ (ທາດນ້ຳ)

໓. ເຕໂຊທາດ (ທາດໄຟ) ໔. ວາໂຍທາດ (ທາດລົມ)

ຄຳວ່າ ພຣະຣາດຊະສານຕາມຄວາມເປັນຈິງ ນີ້ເປັນຊື່ຂອງນິບພານ

ຄຳວ່າ ທາງຕາມທີ່ຕົນມາ ນີ້ເປັນຊື່ຂອງອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ (ເຫັນຖືກ) ຯລຯ ໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

**ກິງສຸໂກປະມະສູດທີ ໘ ຈົບ**

# ໙. ວິໂນປະມະສູດ

## ວ່າດ້ວຍອຸປະມາດ້ວຍພິນ

[໔໔໖] ພິກຂຸທັງຫຼາຍ ສັນທະ (ຄວາມພໍໃຈ) ຣາຄະ (ຄວາມກຳໜັດ) ໂທສະ (ຄວາມຂັດເຄືອງ) ໂມຫະ (ຄວາມຫຼົງ) ຫຼື ແມ່ນຄວາມກະທົບກະທັ່ງໃນໃຈໃນຮູບທີ່ເພິ່ງຮູ້ແຈ້ງທາງຕາເພິ່ງເກີດຂຶ້ນແກ່ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງ ພິກຂຸຫຼືພິກຂຸນີອົງນັ້ນ ເພິ່ງຫ້າມຈິດຈາກຮູບທີ່ເພິ່ງຮູ້ແຈ້ງທາງຕານັ້ນໂດຍພິຈາລະນາວ່າ ທາງນັ້ນມີໄພ ມີໄພຈຳເພາະໜ້າ ມີໜາມ ຮົກທຶບ ເປັນທາງອ້ອມ ເປັນທາງຜິດ ແລະໄປລຳບາກ ທາງນັ້ນ ເປັນທາງທີ່ອະສັດຕະບຸຣຸດດຳເນີນ ບໍ່ແມ່ນທາງທີ່ສັດຕະບຸຣຸດດຳເນີນ ທ່ານບໍ່ຄວນດຳເນີນໄປທາງນັ້ນ

ພິກຂຸຫຼືພິກຂຸນີ ເພິ່ງຫ້າມຈິດຈາກຮູບທີ່ເພິ່ງຮູ້ແຈ້ງທາງຕານັ້ນ ຯລຯ

ສັນທະ ຣາຄະ ໂທສະ ໂມຫະ ຫຼື ແມ່ນຄວາມກະທົບກະທັ່ງໃນໃຈໃນຣົດທີ່ເພິ່ງຮູ້ແຈ້ງທາງລີ້ນເພິ່ງເກີດຂຶ້ນແກ່ພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງ ຯລຯ

ສັນທະ ຣາຄະ ໂທສະ ໂມຫະ ຫຼື ແມ່ນຄວາມກະທົບກະທັ່ງໃນໃຈໃນທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈເພິ່ງເກີດຂຶ້ນແກ່ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງ ພິກຂຸຫຼືພິກຂຸນີອົງນັ້ນ ເພິ່ງຫ້າມຈິດຈາກທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈນັ້ນໂດຍພິຈາລະນາວ່າ ທາງນັ້ນມີໄພ ມີໄພຈຳເພາະໜ້າ ມີໜາມ ຮົກທຶບ ເປັນທາງອ້ອມ ເປັນທາງຜິດ ແລະໄປລຳບາກ ທາງນັ້ນເປັນທາງທີ່ອະສັດຕະບຸຣຸດດຳເນີນ ບໍ່ແມ່ນທາງທີ່ສັດຕະບຸຣຸດດຳເນີນ ທ່ານບໍ່ຄວນດຳເນີນໄປທາງນັ້ນ ພິກຂຸຫຼືພິກຂຸນີເພິ່ງຫ້າມຈິດຈາກທຳມາຣົມທີ່ເພິ່ງຮູ້ແຈ້ງທາງໃຈນັ້ນ

ເຂົ້າກ້າເຖິງຈະສົມບູນ ແຕ່ຄົນເຝົ້າເຂົ້າກ້າຜະໝາດ ແລະງົວໂຕກິນເຂົ້າກ້າກໍລົງລຸຍເຂົ້າກ້ານັ້ນ ເພິ່ງເຖິງຄວາມເມົາມັນເລີນເລີ່ຕາມຕ້ອງການແມ່ນສັນໃດ ປຸຖຸຊົນຜູ້ບໍ່ໄດ້ສະດັບ ກໍຄືກັນສັນນັ້ນ ບໍ່ທຳຄວາມສັງລວມໃນຜັດສາຍະຕະນະ ໖ ປະການ ຍ່ອມເຖິງຄວາມມົວເມົາຜະໝາດໃນກາມມະຄຸນ ໕ ຕາມຕ້ອງການ

ເຂົ້າກ້າສົມບູນ ຄົນເຝົ້າເຂົ້າກ້າກໍບໍ່ຜະໝາດ ແລະ ງົວທີ່ກິນເຂົ້າກ້າ ກໍລົງລຸຍເຂົ້າກ້ານັ້ນ ຄົນເຝົ້າເຂົ້າກ້າຈັບງົວສົນເຄົາໃຫ້ແໜ້ນ ແລ້ວຈັບເຊືອກເຄົາເໜືອເຂົາໃຫ້ໝັ້ນ ຕີຮອດດ້ວຍໄມ້ຄ້ອນແລ້ວປ່ອຍເຂົ້າຝູງໄປ

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ງົວທີ່ກິນເຂົ້າກ້າກໍລົງລຸຍເຂົ້າກ້ານັ້ນອີກ ຄົນເຝົ້າເຂົ້າກ້າກໍຈັບງົວສິນເຄົາ ໃຫ້ແໜ້ນ ແລ້ວຈັບເຊືອກເຄົາເໜືອເຂົາໃຫ້ໝັ້ນ ຕີຮວດດ້ວຍໄມ້ຄ້ອນແລ້ວປ່ອຍເຂົ້າຝູງໄປ ເມື່ອ ເປັນຈັ່ງຊັ້ນ ງົວທີ່ກິນເຂົ້າກ້ານັ້ນຈະຢູ່ໃນບ້ານກໍຕາມ ຢູ່ໃນປ່າກໍຕາມ ກໍຈະເປັນສັດຢືນຫຼາຍຫຼື ນອນຫຼາຍ ບໍ່ກັບລົງສູ່ເຂົ້າກ້າອີກ ພ້ອມນຶກເຖິງການຖືກຕີດ້ວຍໄມ້ຄ້ອນຄັ້ງກ່ອນນັ້ນເອງແມ່ນ ສັນໃດ ຂໍ້ນີ້ກໍຄືກັນສັນນັ້ນ ເມື່ອໃດພິກຂຸຂົ່ມຂູ່ຄຸກຄາມຈິດໃນຜັດສາຍະຕະນະ ໖ ປະການດີແລ້ວ ເມື່ອນັ້ນຈິດຍ່ອມຢູ່ສະງົບມິດຢູ່ພາຍໃນ ຕັ້ງໝັ້ນ ເປັນໜຶ່ງຜຸດຂຶ້ນ

ປຽບຄື ພຣະຣາຊາຫຼືອຳມາດຂອງພຣະຣາຊາບໍ່ເຄີຍສະດັບສຽງພິນ ພຣະຣາຊາຫຼືອຳມາດ ຂອງພຣະຣາຊານັ້ນສະດັບສຽງພິນແລ້ວເພິ່ງຖາມວ່າ ຜູ້ຈະເລີນ ສຽງທີ່ໜ້າຕ້ອງການແນວນີ້ ໜ້າ ພໍໃຈແນວນີ້ ໜ້າເພີດເພີນໃນແນວນີ້ ໜ້າໝົກມຸ້ນແນວນີ້ ໜ້າພົວພັນ ແນວນີ້ ເປັນສຽງອັນໃດ

ຣາດຊະບຸຣຸດທັງຫຼາຍເພິ່ງທູນວ່າ ສຽງທີ່ໜ້າຕ້ອງການແນວນີ້ ໜ້າພໍໃຈແນວນີ້ ໜ້າເພີດ ເພີນໃນແນວນີ້ ໜ້າໝົກມຸ້ນແນວນີ້ ໜ້າພົວພັນແນວນີ້ ເປັນສຽງພິນ ຂ້ານ້ອຍ

ພຣະຣາຊາ ຫຼື ອຳມາດຂອງພຣະຣາຊາເພິ່ງກ່າວວ່າ ຜູ້ຈະເລີນ ທ່ານທັງຫຼາຍຈົ່ງໄປນຳ ພິນນັ້ນມາໃຫ້ເຮົາ

ຣາດຊະບຸຣຸດທັງຫຼາຍນຳພິນນັ້ນມາຖວາຍພຣະຣາຊາ ຫຼື ອຳມາດຂອງພຣະຣາຊານັ້ນ ແລ້ວ ເພິ່ງຂາບທູນວ່າ ນີ້ຄືພິນນັ້ນເຊິ່ງມີສຽງໜ້າຕ້ອງການແນວນີ້ ໜ້າພໍໃຈແນວນີ້ ໜ້າເພີດເພີນ ໃນແນວນີ້ ໜ້າໝົກມຸ້ນແນວນີ້ ໜ້າພົວພັນແນວນີ້ ຂ້ານ້ອຍ

ພຣະຣາຊາ ຫຼື ອຳມາດຂອງພຣະຣາຊາເພິ່ງກ່າວວ່າ ຜູ້ຈະເລີນ ເຮົາບໍ່ຕ້ອງການພິນນີ້ ທ່ານທັງຫຼາຍ ຈົ່ງນຳສຽງພິນນັ້ນມາໃຫ້ເຮົາ

ຣາດຊະບຸຣຸດທັງຫຼາຍເພິ່ງຂາບທູນວ່າ ຂຶ້ນຊື່ວ່າ ພິນນີ້ມີເຄື່ອງປະກອບຫຼາຍຢ່າງຫຼາຍອັນ ພິນທີ່ນາຍຊ່າງປະກອບດີແລ້ວດ້ວຍເຄື່ອງປະກອບຫຼາຍແນວຈຶ່ງຈະອອກສຽງໄດ້ ຄື ອາໄສຮາງ ອາໄສໜັງ ອາໄສຄັນ ອາໄສລູກບິດ ອາໄສສາຍ ອາໄສໄມ້ດີດພິນ ແລະອາໄສຄວາມພະຍາ ຍາມຂອງບຸຣຸດ ເຊິ່ງເໝາະແກ່ພິນນັ້ນ

ຂຶ້ນຊື່ວ່າ ພິນນີ້ມີເຄື່ອງປະກອບຫຼາຍຢ່າງຫຼາຍອັນ ພິນທີ່ນາຍຊ່າງປະກອບດີແລ້ວດ້ວຍ ເຄື່ອງປະກອບຫຼາຍແນວ ຈຶ່ງຈະອອກສຽງໄດ້ຢ່າງນີ້ ຂ້ານ້ອຍ

ພຣະຣາຊາ ຫຼື ອຳມາດຂອງພຣະຣາຊານັ້ນເພິ່ງຜ່າພິນນັ້ນເປັນ ໑໐ ສ່ຽງ ຫຼື ໑໐໐ ສ່ຽງ ແລ້ວ ເຮັດໃຫ້ເປັນຕ່ອນນ້ອຍຕ່ອນນ້ອຍ ແລ້ວເພິ່ງເຜົາໄຟເຮັດໃຫ້ເປັນຂີ້ ໂຮຍໄປໃນລົມພະຍຸຫຼື ລອຍໄປໃນແມ່ນ້ຳທີ່ມີແລວນ້ຳໄຫຼແຮງ ເພິ່ງກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ໄດ້ຂ່າວວ່າ ຂຶ້ນຊື່ວ່າ

ພິນນີ້ຊົ່ວຊາມ ສິ່ງໃດສິ່ງໜຶ່ງທີ່ຊື່ວ່າ ພິນ ກໍຊົ່ວຊາມຄືພິນສັນນັ້ນ ຍ້ອນພິນນີ້ເຮັດໃຫ້ຄົນຜະໝາດ ຫຼົງໄຫຼຈົນເກີນຂອບເຂດ ແມ່ນສັນໃດ

ພິກຂຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ຍ່ອມຄົ້ນຫາຮູບຕະຫຼອດຄະຕິແຫ່ງຮູບທີ່ມີຢູ່ ຄົ້ນຫາເວທະນາຕະຫຼອດຄະຕິແຫ່ງເວທະນາທີ່ມີຢູ່ ຄົ້ນຫາສັນຍາຕະຫຼອດຄະຕິແຫ່ງສັນຍາທີ່ມີຢູ່ ຄົ້ນຫາສັງຂານຕະຫຼອດຄະຕິແຫ່ງສັງຂານທີ່ມີຢູ່ ຄົ້ນຫາວິນຍານຕະຫຼອດຄະຕິແຫ່ງວິນຍານທີ່ມີຢູ່

ເມື່ອພິກຂຸນັ້ນ ຄົ້ນຫາຮູບ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ເມື່ອພິກຂຸນັ້ນ ຄົ້ນຫາວິນຍານຕະຫຼອດຄະຕິແຫ່ງວິນຍານທີ່ມີຢູ່ ຄວາມຖືວ່າ ເຮົາ ຂອງເຮົາ ມີເຮົາ ຂອງພິກຂຸນັ້ນບໍ່ມີເລີຍ

**ວີໂນປະມະສູດທີ ໙ ຈົບ**

# ໑໐. ສັບປານະໂກປະມະສູດ

## ວ່າດ້ວຍອຸປະມາດ້ວຍສັດ ໖ ຊະນິດ

[໔໘໗] ພິກຂຸທັງຫຼາຍ ບຸຣຸດມີຮ່າງກາຍເຕັມໄປດ້ວຍບາດພຸພອງ ເຂົ້າໄປສູ່ປ່າຫຍ້າຄາ ແມ່ນຖ້າໜໍ່ຫຍ້າຄາປັກຕີນຂອງເຂົາ ໃບຫຍ້າຄາບາດຮ່າງກາຍທີ່ພຸພອງ ເມື່ອເປັນຈັ່ງຊັ້ນ ບຸຣຸດນັ້ນເພິ່ງສະເຫວີຍທຸກໂທມະນັດເຫຼືອປະມານຍ້ອນເຫດນັ້ນແມ່ນສັນໃດ

ພິກຂຸລາງອົງໃນທຳວິໄນນີ້ກໍຄືກັນສັນນັ້ນ ຈະໄປສູ່ບ້ານຫຼືຈະໄປສູ່ປ່າກໍຕາມຈະມີຜູ້ທັກທ້ວງວ່າ ທ່ານອົງນີ້ ເຮັດແນວນີ້ ມີຄວາມປະພຶດແນວນີ້ ເປັນຜູ້ບໍ່ສະອາດເປັນຄືໜາມຖ້າສຽບແທງຊາວບ້ານ

ທ່ານທັງຫຼາຍຮູ້ວ່າ ພິກຂຸນັ້ນ ເປັນຄືໜາມ ແລ້ວເພິ່ງຮູ້ຄວາມສັງລວມ ແລະຄວາມບໍ່ສັງລວມຕໍ່ໄປ

### ຄວາມບໍ່ສັງລວມ

ຄວາມບໍ່ສັງລວມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ຍ່ອມຍິນດີໃນຮູບທີ່ໜ້າຮັກ ຍ່ອມຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ

ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວ ຍ່ອມຍິນດີໃນທຳມາຣົມທີ່ໜ້າຮັກ ຍ່ອມຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ບໍ່ຕັ້ງໝັ້ນກາຍະຄະຕາສະຕິ ມີປະຣິດຕະຈິດຢູ່ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ

ພິກຂຸທັງຫຼາຍ ບຸຣຸດຈັບສັດ ໖ ຊະນິດເຊິ່ງມີບ່ອນຢູ່ຕ່າງກັນ ມີບ່ອນຫາກິນຕ່າງກັນແລ້ວມັດດ້ວຍເຊືອກທີ່ໜຽວ ຄື ຈັບງູແລ້ວມັດດ້ວຍເຊືອກທີ່ໜຽວ ຈັບແຂ້ແລ້ວມັດດ້ວຍ ເຊືອກທີ່ໜຽວ ຈັບນົກແລ້ວມັດດ້ວຍເຊືອກທີ່ໜຽວ ຈັບໝາແລ້ວມັດດ້ວຍເຊືອກທີ່ໜຽວ ຈັບໝາຈອກແລ້ວມັດດ້ວຍເຊືອກທີ່ໜຽວ ຈັບລີງແລ້ວມັດດ້ວຍເຊືອກທີ່ໜຽວ ກ່ຽວເປັນຂອດໄວ້ສູນກາງແລ້ວຈຶ່ງປ່ອຍໄປ

ລຳດັບນັ້ນ ສັດທັງ ໖ ຊະນິດເຊິ່ງມີບ່ອນຢູ່ຕ່າງກັນ ມີບ່ອນຫາກິນຕ່າງກັນເຫຼົ່ານັ້ນເພິ່ງດຶງໄປສູ່ບ່ອນຫາກິນ ແລະບ່ອນຢູ່ຂອງຕົນ ໆ ຄື

| | | |
|---|---|---|
| ງູ | ດຶງໄປດ້ວຍຕ້ອງການວ່າ | ຈັກເຂົ້າໄປສູ່ໂພນປວກ |
| ແຂ້ | ດຶງໄປດ້ວຍຕ້ອງການວ່າ | ຈັກລົງນ້ຳ |
| ນົກ | ດຶງໄປດ້ວຍຕ້ອງການວ່າ | ຈັກບິນຂຶ້ນສູ່ອາກາດ |
| ໝາ | ດຶງໄປດ້ວຍຕ້ອງການວ່າ | ຈັກເຂົ້າບ້ານ |
| ໝາຈອກ | ດຶງໄປດ້ວຍຕ້ອງການວ່າ | ຈັກເຂົ້າປ່າຊ້າ |
| ລີງ | ດຶງໄປດ້ວຍຕ້ອງການວ່າ | ຈັກເຂົ້າປ່າ |

ເມື່ອໃດສັດທັງ ໖ ຊະນິດນັ້ນຕ່າງກໍຈະໄປຕາມໃຈຂອງຕົນ ເພິ່ງລຳບາກ ເມື່ອນັ້ນສັດເຫຼົ່ານັ້ນກໍເພິ່ງຕົກຢູ່ໃນອຳນາດ ໄປຕາມສັດທີ່ມີກຳລັງກວ່າ

ແມ່ນສັນໃດ ຂໍ້ນີ້ ກໍຄືກັນສັນນັ້ນ ກາຍະຄະຕາສະຕິທີ່ພິກຂຸອົງໃດອົງໜຶ່ງບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ

ຕາ ຍ່ອມດຶງພິກຂຸນັ້ນໄປໃນຮູບທີ່ໜ້າພໍໃຈ ຮູບທີ່ບໍ່ໜ້າພໍໃຈ ຯລຯ
ລີ້ນ ຍ່ອມດຶງ ຯລຯ
ໃຈ ຍ່ອມດຶງພິກຂຸໄປໃນທຳມາຣົມທີ່ໜ້າພໍໃຈ ທຳມາຣົມທີ່ບໍ່ໜ້າພໍໃຈ ຯລຯ

ພິກຂຸທັງຫຼາຍ ຄວາມບໍ່ສັງລວມເປັນແນວນີ້ແລ

## ຄວາມສັງລວມ

ພິກຂຸທັງຫຼາຍ ຄວາມສັງລວມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທາງຕາແລ້ວ ບໍ່ຍິນດີໃນຮູບທີ່ໜ້າຮັກ ບໍ່ຍິນຮ້າຍໃນຮູບທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັບປະມານະຈິດຢູ່ ແລະ ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ ຯລຯ

ຊີມຣົດທາງລີ້ນ ຯລຯ

ຮູ້ແຈ້ງທຳມາຣົມທາງໃຈແລ້ວ ບໍ່ຍິນດີໃນທຳມາຣົມທີ່ໜ້າຮັກ ບໍ່ຍິນຮ້າຍໃນທຳມາຣົມທີ່ບໍ່ໜ້າຮັກ ເປັນຜູ້ຕັ້ງໝັ້ນກາຍະຄະຕາສະຕິ ມີອັປປະມາໜະຈິດຢູ່ ແລະ ຮູ້ແຈ້ງເຈໂຕວິມຸດຕິແລະປັນຍາວິມຸດຕິຕາມຄວາມເປັນຈິງ ອັນເປັນທີ່ດັບໄປໂດຍບໍ່ເຫຼືອແຫ່ງທຳ ທີ່ເປັນບາບອະກຸສົນເຫຼົ່ານັ້ນທີ່ເກີດຂຶ້ນແລ້ວແກ່ທ່ານ

ພິກຂຸທັງຫຼາຍ ບຸຣຸດຈັບສັດ ໖ ຊະນິດເຊິ່ງມີບ່ອນຢູ່ຕ່າງກັນ ມີບ່ອນຫາກິນຕ່າງກັນແລ້ວມັດດ້ວຍເຊືອກທີ່ໜຽວ ຄື ຈັບງູແລ້ວມັດດ້ວຍເຊືອກທີ່ໜຽວ ຈັບແຂ້ແລ້ວມັດດ້ວຍ ເຊືອກທີ່ໜຽວ ຈັບນົກແລ້ວມັດດ້ວຍເຊືອກທີ່ໜຽວ ຈັບໝາແລ້ວມັດດ້ວຍເຊືອກທີ່ໜຽວ ຈັບໝາຈອກແລ້ວມັດດ້ວຍເຊືອກທີ່ໜຽວ ຈັບລິງແລ້ວມັດດ້ວຍເຊືອກທີ່ໜຽວ ແລ້ວມັດຕິດໄວ້ທີ່ຫຼັກ ຫຼື ເສົາອັນໝັ້ນຄົງ

ລຳດັບນັ້ນ ສັດທັງ ໖ ຊະນິດເຊິ່ງມີບ່ອນຢູ່ຕ່າງກັນ ມີບ່ອນຫາກິນຕ່າງກັນເຫຼົ່ານັ້ນເພິ່ງດຶງໄປສູ່ບ່ອນຫາກິນ ແລະບ່ອນຢູ່ຂອງຕົນ ໆ ຄື

ງູ ດຶງໄປດ້ວຍຕ້ອງການວ່າ ຈັກເຂົ້າໄປສູ່ໂພນປວກ
ແຂ້ ດຶງໄປດ້ວຍຕ້ອງການວ່າ ຈັກລົງນ້ຳ
ນົກ ດຶງໄປດ້ວຍຕ້ອງການວ່າ ຈັກບິນຂຶ້ນສູ່ອາກາດ
ໝາ ດຶງໄປດ້ວຍຕ້ອງການວ່າ ຈັກເຂົ້າບ້ານ
ໝາຈອກ ດຶງໄປດ້ວຍຕ້ອງການວ່າ ຈັກເຂົ້າປ່າຊ້າ
ລິງ ດຶງໄປດ້ວຍຕ້ອງການວ່າ ຈັກເຂົ້າປ່າ

ເມື່ອໃດສັດທັງ ໖ ຊະນິດນັ້ນຕ່າງກໍຈະໄປຕາມໃຈຂອງຕົນ ເພິ່ງລຳບາກ ເມື່ອນັ້ນສັດເຫຼົ່ານັ້ນເພິ່ງຢືນອີງ ນັ່ງອີງ ນອນອີງຫຼັກ ຫຼື ເສົານັ້ນ ແມ່ນສັນໃດ ຂໍ້ນີ້ກໍຄືກັນສັນນັ້ນ ກາຍະຄະຕາສະຕິທີ່ພິກຂຸອົງໃດອົງໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ

ຕາ ຍ່ອມບໍ່ດຶງພິກຂຸນັ້ນໄປໃນຮູບທີ່ໜ້າພໍໃຈ ຮູບທີ່ບໍ່ໜ້າພໍໃຈ ฯລฯ
ລີ້ນ ຍ່ອມບໍ່ດຶງ ฯລฯ
ໃຈ ຍ່ອມບໍ່ດຶງພິກຂຸນັ້ນ ໄປໃນທຳມາຣົມທີ່ໜ້າພໍໃຈ ທຳມາຣົມທີ່ບໍ່ໜ້າພໍໃຈ ฯລฯ

ພິກຂຸທັງຫຼາຍ ຄວາມສັງລວມເປັນແນວນີ້ແລ

ຄຳວ່າ ຫຼັກຫຼືເສົາອັນໝັ້ນຄົງ ນີ້ເປັນຊື່ຂອງກາຍະຄະຕາສະຕິ

ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ ກາຍະຄະຕາສະຕິເຮົາທັງຫຼາຍຈັກຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ຢູ່ສະເໝີ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

**ສັບປານະໂກປະມະສູດທີ ໑໐ ຈົບ**

# ໑໑. ຍະວະກະລາປີສູດ

## ວ່າດ້ວຍຟ່ອນເຂົ້າໜຽວ

[໔໔໗] ພິກຂຸທັງຫຼາຍ ຟ່ອນເຂົ້າໜຽວ ບຸກຄົນກອງໄວ້ທີ່ຖະໜົນໃຫຍ່ສີ່ແຍກ ລຳດັບນັ້ນບຸຣຸດ ໖ ຄົນຖືໄມ້ຄານຍ່າງມາ ພວກເຂົາຊ່ອຍກັນນວດຟ່ອນເຂົ້າໜຽວດ້ວຍໄມ້ຄານທັງ ໖ ອັນ ຟ່ອນເຂົ້າ ໜຽວນັ້ນຖືກນວດຢ່າງດີດ້ວຍໄມ້ຄານ ໖ ອັນແນວນີ້ ຕໍ່ມາ ບຸຣຸດຄົນທີ ໗ ຖືໄມ້ຄານຍ່າງມາ ເຂົາເພິ່ງນວດຟ່ອນເຂົ້າໜຽວນັ້ນ ດ້ວຍໄມ້ຄານອັນທີ ໗ ຟ່ອນເຂົ້າໜຽວນັ້ນຖືກນວດດ້ວຍໄມ້ຄານອັນທີ ໗ ເພິ່ງຖືກນວດດີກວ່າແນວນີ້ ແມ່ນສັນໃດ ປຸຖຸຊົນ ຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ

ຖືກ ຮູບ ທີ່ໜ້າພໍໃຈ ແລະ ບໍ່ໜ້າພໍໃຈກະທົບຕາ ฯລฯ
ຖືກ ຣົດ ທີ່ໜ້າພໍໃຈ ແລະ ບໍ່ໜ້າພໍໃຈກະທົບລີ້ນ ฯລฯ
ຖືກ ທຳມາຣົມ ທີ່ໜ້າພໍໃຈ ແລະ ບໍ່ໜ້າພໍໃຈກະທົບໃຈ ฯລฯ

ຖ້າປຸຖຸຊົນຜູ້ບໍ່ໄດ້ສະດັບນັ້ນຍ່ອມຄິດເພື່ອຈະເກີດອີກຕໍ່ໄປ ເມື່ອເປັນຈັ່ງຊັ້ນ ປຸຖຸຊົນນັ້ນຍ່ອມເປັນໂມຄະບຸຣຸດຜູ້ຖືກອາຍະຕະນະພາຍນອກກະທົບຢ່າງໜັກ ຄື ຟ່ອນເຂົ້າໜຽວທີ່ຖືກນວດດ້ວຍໄມ້ຄານອັນທີ ໗ ສັນນັ້ນ

# ສົງຄາມລະຫວ່າງເທວະດາກັບອະສູນ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທວະດາກັບອະສູນໄດ້ປະຊິດກັນ ຄັ້ງນັ້ນ ທ້າວເວປະຈິດຕິຈອມອະສູນຮັບສັ່ງຮຽກພວກອະສູນມາຕັດວ່າ ທ່ານຜູ້ນິຣະທຸກທັງຫຼາຍ ຖ້າເມື່ອສົງຄາມລະຫວ່າງເທວະດາກັບອະສູນຮົບປະຊິດກັນ ພວກອະສູນເພິ່ງຊະນະ ພວກເທວະດາເພິ່ງປຣາໄຊ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຄຸມຂັງທ້າວສັກກະຈອມເທບນັ້ນດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລ້ວນຳມາຍັງເມືອງອະສູນໃນສຳນັກຂອງເຮົາ

ຝ່າຍທ້າວສັກກະຈອມເທບກໍຮັບສັ່ງຮຽກພວກເທວະດາຊັ້ນຕາວະຕິງສາມາຕັດວ່າ ທ່ານຜູ້ນິຣະທຸກທັງຫຼາຍ ຖ້າເມື່ອສົງຄາມລະຫວ່າງເທວະດາກັບອະສູນປະຊິດກັນ ພວກເທວະດາເພິ່ງຊະນະ ພວກອະສູນເພິ່ງປຣາໄຊ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຄຸມຂັງທ້າວເວປະຈິດຕິຈອມອະສູນນັ້ນ ດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍແລ້ວ ນຳມາຍັງເທວະສະພາຊື່ສຸທຳມາໃນສຳນັກຂອງເຮົາ

ສົງຄາມຄັ້ງນັ້ນ ພວກເທວະດາຊະນະ ພວກອະສູນປຣາໄຊ ຕໍ່ມາ ພວກເທວະດາຊັ້ນຕາວະຕິງສາໄດ້ຄຸມຂັງທ້າວເວປະຈິດຕິຈອມອະສູນດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລ້ວນຳມາຍັງເທວະສະພາຊື່ສຸທຳມາໃນສຳນັກຂອງທ້າວສັກກະຈອມເທບ ໄດ້ຂ່າວວ່າ ທ້າວເວປະຈິດຕິຈອມອະສູນຖືກຄຸມຂັງດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ

ໃນການທີ່ທ້າວເວປະຈິດຕິຈອມອະສູນຊົງດຳຣິວ່າ ພວກເທວະດາຕັ້ງຢູ່ໃນທຳ ພວກອະສູນບໍ່ຕັ້ງຢູ່ໃນທຳ ບັດນີ້ເຮົາຈັກໄປສູ່ເທບນະຄອນ ທ້າວເວປະຈິດຕິຈອມອະສູນຍ່ອມພິຈາລະນາເຫັນຕົນພົ້ນຈາກເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລະເປັນຜູ້ເອີບອີ່ມ ພ້ອມພຽງ ປິ່ນເປີຢູ່ດ້ວຍກາມມະຄຸນ ໕ ອັນເປັນທິບ

ໃນການທີ່ທ້າວເວປະຈິດຕິຈອມອະສູນຊົງດຳຣິວ່າ ພວກອະສູນຕັ້ງຢູ່ໃນທຳ ພວກເທວະດາບໍ່ຕັ້ງຢູ່ໃນທຳ ບັດນີ້ເຮົາຈັກໄປສູ່ເມືອງອະສູນ ທ້າວເວປະຈິດຕິຈອມອະສູນພິຈາລະນາ ເຫັນຕົນຖືກຄຸມຂັງດ້ວຍເຄື່ອງຄຸມຂັງທັງ ໕ ລວມທັງເຄື່ອງມັດຄໍ ແລະເສື່ອມຈາກກາມມະຄຸນ ໕ ອັນເປັນທິບ

ພິກຂຸທັງຫຼາຍ ເຄື່ອງຄຸມຂັງທ້າວເວປະຈິດຕິລະອຽດແບບນີ້ ເຄື່ອງຄຸມຂັງຂອງມານລະອຽດຍິ່ງກວ່ານັ້ນ ບຸກຄົນເມື່ອກຳນົດໝາຍກໍຖືກມານຜູກມັດໄວ້ ເມື່ອບໍ່ກຳນົດໝາຍກໍພົ້ນຈາກມານຜູ້ມີບາບ

## ຄວາມກຳນົດໝາຍເປັນຕົ້ນເປັນພະຍາດ ເປັນຫົວຝີ ເປັນລູກສອນ

ພິກຂຸທັງຫຼາຍ ຄວາມກຳນົດໝາຍວ່າ ເຮົາມີ ຄວາມກຳນົດໝາຍວ່າ ເຮົາເປັນນີ້ ຄວາມກຳນົດໝາຍວ່າ ເຮົາຈັກມີ ຄວາມກຳນົດໝາຍວ່າ ເຮົາຈັກບໍ່ມີ ຄວາມກຳນົດໝາຍວ່າ ເຮົາຈັກເປັນຜູ້ມີຮູບ ຄວາມກຳນົດໝາຍວ່າ ເຮົາຈັກເປັນຜູ້ບໍ່ມີຮູບ ຄວາມກຳນົດໝາຍວ່າ ເຮົາຈັກເປັນຜູ້ມີສັນຍາ ຄວາມກຳນົດໝາຍວ່າ ເຮົາຈັກເປັນຜູ້ບໍ່ມີສັນຍາ ຄວາມກຳນົດໝາຍວ່າ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ຄວາມກຳນົດໝາຍເປັນພະຍາດ ຄວາມກຳນົດໝາຍເປັນຫົວຝີ ຄວາມກຳນົດໝາຍເປັນລູກສອນ ຍ້ອນແນວນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍ ຈັກມີຈິດບໍ່ກຳນົດໝາຍຢູ່

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸທັງຫຼາຍ ຄວາມຫວັ່ນໄຫວວ່າ ເຮົາມີ ຄວາມຫວັ່ນໄຫວວ່າ ເຮົາເປັນນີ້ ຄວາມຫວັ່ນໄຫວວ່າ ເຮົາຈັກມີ ຄວາມຫວັ່ນໄຫວວ່າ ເຮົາຈັກບໍ່ມີ ຄວາມຫວັ່ນໄຫວວ່າ ເຮົາຈັກເປັນຜູ້ມີຮູບ ຄວາມຫວັ່ນໄຫວວ່າ ເຮົາຈັກເປັນຜູ້ບໍ່ມີຮູບ ຄວາມຫວັ່ນໄຫວວ່າ ເຮົາຈັກເປັນຜູ້ມີສັນຍາ ຄວາມຫວັ່ນໄຫວວ່າ ເຮົາຈັກເປັນຜູ້ບໍ່ມີສັນຍາ ຄວາມຫວັ່ນໄຫວວ່າ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ຄວາມຫວັ່ນໄຫວເປັນພະຍາດ ຄວາມຫວັ່ນໄຫວເປັນຫົວຝີ ຄວາມຫວັ່ນໄຫວເປັນລູກສອນ ຍ້ອນສັນນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍຈັກມີຈິດບໍ່ຫວັ່ນໄຫວຢູ່

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸທັງຫຼາຍ ຄວາມດີ້ນຮົນວ່າ ເຮົາມີ ຄວາມດີ້ນຮົນວ່າ ເຮົາເປັນນີ້ ຄວາມດີ້ນຮົນວ່າ ເຮົາຈັກມີ ຄວາມດີ້ນຮົນວ່າ ເຮົາຈັກບໍ່ມີ ຄວາມດີ້ນຮົນວ່າ ເຮົາຈັກເປັນຜູ້ມີຮູບ ຄວາມດີ້ນຮົນວ່າ ເຮົາຈັກເປັນຜູ້ບໍ່ມີຮູບ ຄວາມດີ້ນຮົນວ່າ ເຮົາຈັກເປັນຜູ້ມີສັນຍາ ຄວາມດີ້ນຮົນວ່າ ເຮົາຈັກເປັນຜູ້ບໍ່ມີສັນຍາ ຄວາມດີ້ນຮົນວ່າ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ຄວາມດີ້ນຮົນເປັນພະຍາດ ຄວາມດີ້ນຮົນເປັນຫົວຝີ ຄວາມດີ້ນຮົນເປັນລູກສອນ ຍ້ອນແນວນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍຈັກມີຈິດບໍ່ດີ້ນຮົນຢູ່

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸທັງຫຼາຍ ຄວາມປຸງແຕ່ງວ່າ ເຮົາມີ ຄວາມປຸງແຕ່ງວ່າ ເຮົາເປັນນີ້ ຄວາມປຸງແຕ່ງ

ວ່າ ເຮົາຈັກມີ ຄວາມປຸງແຕ່ງວ່າ ເຮົາຈັກບໍ່ມີ ຄວາມປຸງແຕ່ງວ່າ ເຮົາຈັກເປັນຜູ້ມີຮູບ ຄວາມປຸງແຕ່ງວ່າ ເຮົາຈັກເປັນຜູ້ບໍ່ມີຮູບ ຄວາມປຸງແຕ່ງວ່າ ເຮົາຈັກເປັນຜູ້ມີສັນຍາ ຄວາມປຸງແຕ່ງວ່າ ເຮົາຈັກເປັນຜູ້ບໍ່ມີສັນຍາ ຄວາມປຸງແຕ່ງ ວ່າ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ຄວາມປຸງແຕ່ງເປັນພະຍາດ ຄວາມປຸງແຕ່ງເປັນຫົວຝີ ຄວາມປຸງແຕ່ງເປັນລູກສອນຍ້ອນ ສັນນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍ ຈັກມີຈິດບໍ່ປຸງແຕ່ງຢູ່

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸທັງຫຼາຍ ຄວາມຖືໂຕວ່າ ເຮົາມີ ຄວາມຖືໂຕວ່າ ເຮົາເປັນນີ້ ຄວາມຖືໂຕວ່າ ເຮົາຈັກມີ ຄວາມຖືໂຕວ່າ ເຮົາຈັກບໍ່ມີ ຄວາມຖືໂຕວ່າ ເຮົາຈັກເປັນຜູ້ມີຮູບ ຄວາມຖືໂຕວ່າ ເຮົາຈັກເປັນຜູ້ບໍ່ມີຮູບ ຄວາມຖືໂຕວ່າ ເຮົາຈັກເປັນຜູ້ມີສັນຍາ ຄວາມຖືໂຕວ່າ ເຮົາຈັກເປັນຜູ້ບໍ່ມີສັນຍາ ຄວາມຖືໂຕວ່າ ເຮົາຈັກເປັນຜູ້ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ

ຄວາມຖືໂຕເປັນພະຍາດ ຄວາມຖືໂຕເປັນຫົວຝີ ຄວາມຖືໂຕເປັນລູກສອນ ຍ້ອນແນວນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍຈັກມີຈິດບໍ່ຖືໂຕຢູ່

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ຍະວະກະລາປິສູດທີ ໑໑ ຈົບ**

**ອາສີວິສະວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາສີວິໂສປະມະສູດ

໒. ຣະໂຖປະມະສູດ

໓. ກຸມໂມປະມະສູດ

໔. ປະຖົມທາຣຸກຂັນໂທປະມະສູດ

໕. ທຸຕິຍະທາຣຸກຂັນໂທປະມະສູດ

໖. ອະວັດສຸຕະປະຣິຍາຍະສູດ

໗. ທຸກຂະທຳມະສູດ

໘. ກິງສຸໂກປະມະສູດ

໙. ວີໂນປະມະສູດ

໑໐. ສັບປານະໂກປະມະສູດ

໑໑. ຍະວະກະລາປິສູດ

**ຈະຕຸດຖະປັນນາດໃນສະລາຍະຕະນະວັກ ຈົບບໍລິບູນ**

# ລວມວັກທີ່ມີໃນຈະຕຸດຖະປັນນາດນີ້ ຄື

໑. ນັນທິກະຂະຍະວັກ

໒. ສະມຸດທະວັກ

໓. ສັດຖິເປີຍຍາລະວັກ

໔. ອາສີວິສະວັກ

**ສະລາຍະຕະນະສັງຍຸດ ຈົບບໍລິບູນ**

# ໒. ເວທະນາສັງຍຸດ

## ໑. ສະຄາຖະວັກ

### ໝວດວ່າດ້ວຍສູດທີ່ ມີຄາຖາ

## ໑. ສະມາທິສູດ

### ວ່າດ້ວຍສະມາທິ

[໒໔໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ (ຄວາມຮູ້ສຶກສຸກ)
໒. ທຸກຂະເວທະນາ (ຄວາມຮູ້ສຶກທຸກ)
໓. ອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກສຸກກໍບໍ່ແມ່ນທຸກກໍບໍ່ແມ່ນ)

ພິກຂຸທັງຫຼາຍ ເວທະນາມີ ໓ ປະການນີ້ແລ

ສາວົກຂອງພຣະພຸດທະເຈົ້າມີຈິດຕັ້ງໝັ້ນ ມີສະຕິສຳປະຊັນຍະ
ຍ່ອມຮູ້ແຈ້ງເວທະນາ ເຫດເກີດແຫ່ງເວທະນາ
ນິບພານອັນເປັນທີ່ດັບແຫ່ງເວທະນາ
ແລະທາງດຳເນີນໃຫ້ເຖິງຄວາມໝົດສິ້ນໄປແຫ່ງເວທະນາເຫຼົ່ານັ້ນ
ຍ້ອນໝົດສິ້ນເວທະນາ ພິກຂຸຈຶ່ງເປັນຜູ້ໝົດຄວາມຫິວ ປະຣິນິບພານແລ້ວ

**ສະມາທິສູດທີ່ ໑ ຈົບ**

## ໒. ສຸຂະສູດ

### ວ່າດ້ວຍຄວາມສຸກ

[໒໕໐] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ພິກຂຸທັງຫຼາຍ ເວທະນາມີ ໓ ປະການນີ້ແລ

ຄວາມສະເຫວີຍອາລົມແນວໃດແນວໜຶ່ງ
ທີ່ເປັນສຸກຫຼືທຸກ ຫຼືບໍ່ແມ່ນສຸກບໍ່ແມ່ນທຸກ
ທັງທີ່ເປັນພາຍໃນ ທັງທີ່ເປັນພາຍນອກມີຢູ່
ພິກຂຸຮູ້ວ່າເວທະນານີ້ເປັນທຸກ
ມີຄວາມພິນາດແຕກສະຫຼາຍເປັນທຳມະດາ
ຖືກຕ້ອງສຳຜັດຄວາມເສື່ອມ (ດ້ວຍຍານ) ຢູ່
ຍ່ອມຄາຍຄວາມຍິນດີໃນເວທະນາເຫຼົ່ານັ້ນ ດ້ວຍປະການແນວນີ້

**ສຸຂະສູດທີ ໒ ຈົບ**

# ໓. ປະຫານະສູດ

## ວ່າດ້ວຍການລະ

[໔໕໑] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ທ່ານທັງຫຼາຍ ເພິ່ງລະຣາຄານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືຣາຄະ) ໃນສຸກເວທະນາ ເພິ່ງລະປະຕິຄານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືຄວາມກະທົບໃນໃຈ) ໃນທຸກຂະເວທະນາ ເພິ່ງລະອະວິດຊານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືອະວິດຊາ) ໃນອະທຸກຂະມະສຸກຂະເວທະນາ ຍ້ອນພິກຂຸລະຣາຄານຸໄສໃນສຸກຂະເວທະນາ ລະປະຕິຄານຸໄສໃນທຸກຂະເວທະນາ ລະອະວິດຊານຸໄສໃນອະທຸກຂະມະສຸກຂະເວທະນາໄດ້ ສັນນັ້ນພິກຂຸນີ້ເຮົາຈຶ່ງຮຽກວ່າຜູ້ບໍ່ມີອະນຸໄສ ມີຄວາມເຫັນຖືກ ຕັດຕັນຫາໄດ້ ເພີກຖອນສັງໂຍດແລ້ວ ໄດ້ເຮັດບ່ອນສຸດແຫ່ງທຸກຍ້ອນຮູ້ແຈ້ງມານະໄດ້ໂດຍຖືກຕ້ອງ

ຣາຄານຸໄສນັ້ນຍ່ອມມີແກ່ພິກຂຸຜູ້ສະເຫວີຍສຸກຂະເວທະນາ
ຜູ້ບໍ່ຮູ້ແຈ້ງ ມີປົກກະຕິບໍ່ເຫັນທຳເຄື່ອງສະບັດອອກ
ປະຕິຄານຸໄສຍ່ອມມີແກ່ພິກຂຸຜູ້ສະເຫວີຍທຸກຂະເວທະນາ
ຜູ້ບໍ່ຮູ້ແຈ້ງ ມີປົກກະຕິບໍ່ເຫັນທຳເຄື່ອງສະບັດອອກ
ບຸກຄົນເພີດເພີນໃນອະທຸກຂະມະສຸກຂະເວທະນາເຊິ່ງມີຢູ່
ທີ່ພຣະຜູ້ມີພຣະພາກເຈົ້າຜູ້ມີປັນຍາຄືແຜ່ນດິນຊົງສະແດງໄວ້ແລ້ວ
ຍ່ອມບໍ່ພົ້ນຈາກທຸກ
ເມື່ອໃດພິກຂຸມີຄວາມພຽນ ບໍ່ລະສຳປະຊັນຍະ
ເມື່ອນັ້ນທ່ານເປັນບັນດິດ ກຳນົດຮູ້ເວທະນາທັງປວງໄດ້
ທ່ານເມື່ອກຳນົດຮູ້ເວທະນາແລ້ວ ບໍ່ມີອາສະວະໃນປັດຈຸບັນ
ຕັ້ງຢູ່ໃນທຳ ຈົບເວດ ຕາຍໄປ ຍ່ອມບໍ່ເຂົ້າເຖິງການບັນຍັດ

**ປະຫານະສູດທີ ໓ ຈົບ**

# ໔. ປາຕາລະສູດ

## ວ່າດ້ວຍບາດານ

[໔໕໔] ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບກ່າວຄຳໃດວ່າ ໃນມະຫາສະມຸດມີບາດານ ປຸຖຸຊົນຜູ້ບໍ່ໄດ້ສະດັບກ່າວຄຳນັ້ນ ເຊິ່ງບໍ່ມີບໍ່ຜາກົດວ່າ ໃນມະຫາສະມຸດມີບາດານ

ຄຳວ່າ ບາດານ ນີ້ເປັນຊື່ຂອງທຸກຂະເວທະນາທີ່ເປັນໄປໃນສະຣີຣະ

ປຸຖຸຊົນ ຜູ້ບໍ່ໄດ້ສະດັບຖືກທຸກຂະເວທະນາທີ່ເປັນໄປໃນສະຣີຣະຖືກຕ້ອງແລ້ວ ຍ່ອມເສົ້າໂສກ ລຳບາກ ຂັດສົນ ທຸບເອິກ ຮ່ຳໄຮ ເຖິງຄວາມລຸ້ມຫຼົງ

ປຸຖຸຊົນຜູ້ບໍ່ໄດ້ສະດັບນີ້ເຮົາກ່າວວ່າ ຜາກົດໃນບາດານບໍ່ໄດ້ ແລະ ເຖິງການຢັ່ງລົງບໍ່ໄດ້

ສ່ວນອະຣິຍະສາວົກ ຜູ້ໄດ້ສະດັບຖືກທຸກຂະເວທະນາທີ່ເປັນໄປໃນສະຣີຣະຖືກຕ້ອງແລ້ວ ຍ່ອມບໍ່ເສົ້າໂສກ ບໍ່ລຳບາກ ບໍ່ຂັດສົນ ບໍ່ທຸບເອິກຮ່ຳໄຮ ບໍ່ເຖິງຄວາມລຸ້ມຫຼົງ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບນີ້ເຮົາກ່າວວ່າ ຜາກົດໃນບາດານໄດ້ແລະເຖິງການຢັ່ງລົງໄດ້

ພິກຂຸໃດ ຖືກທຸກຂະເວທະນາທີ່ເປັນໄປໃນສະຣີຣະ
ອັນນຳຊີວິດໄປເຊິ່ງເກີດຂຶ້ນຖືກຕ້ອງແລ້ວ
ອົດກັ້ນບໍ່ໄດ້ ຍ່ອມຫວັ່ນໄຫວ
ມີກຳລັງຊາມ ເຫື່ອແຮງໜ້ອຍ ຍ່ອມຮ້ອງໄຫ້ຮ່ຳໄຮ
ພິກຂຸນັ້ນຜາກົດໃນບາດານບໍ່ໄດ້
ທັງເຖິງການຢັ່ງລົງບໍ່ໄດ້ດ້ວຍ
ສ່ວນພິກຂຸໃດຖືກທຸກຂະເວທະນາທີ່ເປັນໄປໃນສະຣີຣະ
ອັນນຳຊີວິດໄປເຊິ່ງເກີດຂຶ້ນຖືກຕ້ອງແລ້ວ
ອົດກັ້ນໄດ້ ຍ່ອມບໍ່ຫວັ່ນໄຫວ
ພິກຂຸນັ້ນແລ ຜາກົດໃນບາດານໄດ້
ທັງເຖິງການຢັ່ງລົງໄດ້ດ້ວຍ

**ປາຕາລະສູດທີ ໔ ຈົບ**

# ໕. ທັດຖັບພະສູດ

## ວ່າດ້ວຍສິ່ງທີ່ຄວນເຫັນ

[໔໕໖] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ
໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ທ່ານທັງຫຼາຍ ເພິ່ງເຫັນສຸກຂະເວທະນາໂດຍຄວາມເປັນທຸກ ເພິ່ງເຫັນທຸກຂະເວທະນາໂດຍຄວາມເປັນລູກສອນ ເພິ່ງເຫັນອະທຸກຂະມະສຸກຂະເວທະນາໂດຍຄວາມບໍ່ທ່ຽງ ຍ້ອນພິກຂຸເຫັນສຸກຂະເວທະນາໂດຍຄວາມເປັນທຸກ ເຫັນທຸກຂະເວທະນາໂດຍຄວາມເປັນລູກສອນ ເຫັນອະທຸກຂະມະສຸກຂະເວທະນາໂດຍຄວາມບໍ່ທ່ຽງ ພິກຂຸນີ້ເຮົາຮຽກວ່າ ມີຄວາມເຫັນຖືກ ຕັດຕັນຫາໄດ້ ເພີກຖອນສັງໂຍດແລ້ວ ໄດ້ເຮັດບ່ອນສຸດແຫ່ງທຸກ ຍ້ອນຮູ້ແຈ້ງມານະໄດ້ໂດຍຖືກຕ້ອງ

ພິກຂຸໃດ ເຫັນສຸກຂະເວທະນາໂດຍຄວາມເປັນທຸກ
ເຫັນທຸກຂະເວທະນາໂດຍຄວາມເປັນລູກສອນ
ເຫັນອະທຸກຂະມະສຸກຂະເວທະນາທີ່ມີຢູ່ໂດຍຄວາມບໍ່ທ່ຽງ

ພິກຂຸນັ້ນມີຄວາມເຫັນຖືກ ຍ່ອມກຳນົດຮູ້ເວທະນາທັງຫຼາຍໄດ້
ທ່ານເມື່ອກຳນົດຮູ້ເວທະນາແລ້ວ ບໍ່ມີອາສະວະໃນປັດຈຸບັນ
ຕັ້ງຢູ່ໃນທຳ ຈົບເວດ ຕາຍໄປ ຍ່ອມບໍ່ເຂົ້າເຖິງການບັນຍັດ

**ທັດຖັບພະສູດທີ ໕ ຈົບ**

# ໖. ສັນລະສູດ

## ວ່າດ້ວຍລູກສອນ

[໔໕໔] ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບ ສະເຫວີຍສຸກຂະເວທະນາແດ່ ທຸກຂະເວທະນາແດ່ ອະທຸກຂະມະສຸກຂະເວທະນາແດ່ ອະຣິຍະສາວົກ ຜູ້ໄດ້ສະດັບກໍສະເຫວີຍສຸກຂະເວທະນາແດ່ ທຸກຂະເວທະນາແດ່ ອະທຸກຂະມະສຸກຂະເວທະນາແດ່

ໃນຊົນ ໔ ຈຳພວກນັ້ນ ມີອັນໃດເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງອະຣິຍະສາວົກ ຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ

ພິກຂຸທັງຫຼາຍຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບຖືກທຸກຂະເວທະນາຖືກຕ້ອງ ຍ່ອມເສົ້າໂສກ ລຳບາກ ຂັດສົນ ທຸບເອິກຮ່ຳໄຮ ເຖິງຄວາມລຸ້ມຫຼົງ ເຂົາຍ່ອມສະເຫວີຍເວທະນາ ໔ ປະການ ຄື

໑. ເວທະນາທາງກາຍ  ໔. ເວທະນາທາງໃຈ

ນາຍຂະມັງທະນູໃຊ້ລູກສອນຍິງບຸຣຸດ ຍິງຊ້ຳບຸຣຸດນັ້ນດ້ວຍລູກສອນດອກທີ ໔ ອີກ ເມື່ອເປັນແນວນີ້ ບຸຣຸດນັ້ນຍ່ອມສະເຫວີຍເວທະນາ ໔ ປະການຍ້ອນລູກສອນ ຄື

໑. ເວທະນາທາງກາຍ  ໔. ເວທະນາທາງໃຈ

ແມ່ນສັນໃດ

ປຸຖຸຊົນຜູ້ບໍ່ໄດ້ສະດັບກໍຄືກັນສັນນັ້ນ ຖືກທຸກຂະເວທະນາຖືກຕ້ອງຍ່ອມເສົ້າໂສກ ລຳບາກ ຂັດສົນ ທຸບເອິກຮ່ຳໄຮ ເຖິງຄວາມລຸ້ມຫຼົງ ເຂົາຍ່ອມສະເຫວີຍເວທະນາ ໔ ປະການ ຄື

໑. ເວທະນາທາງກາຍ ໒. ເວທະນາທາງໃຈ

ອັນໜຶ່ງ ເຂົາຖືກທຸກຂະເວທະນານັ້ນເອງຖືກຕ້ອງແລ້ວ ຍ່ອມຂັດເຄືອງ ປະຕິຄານຸໄສໃນທຸກຂະເວທະນາ ຍ່ອມໄຫຼໄປຕາມເຂົາຜູ້ຂັດເຄືອງໃນຍ້ອນທຸກຂະເວທະນາ ເຂົາຖືກທຸກຂະເວທະນາຖືກຕ້ອງ ແລ້ວກໍຍັງເພີດເພີນໃນກາມສຸກ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນປຸຖຸຊົນ ຜູ້ບໍ່ໄດ້ສະດັບນັ້ນ ບໍ່ຮູ້ແຈ້ງເຄື່ອງສະບັດອອກຈາກທຸກຂະເວທະນານອກຈາກກາມສຸກ ເມື່ອເຂົາເພີດເພີນໃນກາມສຸກ ຣາຄານຸໄສໃນສຸກຂະເວທະນານັ້ນຍ່ອມໄຫຼໄປຕາມເຂົາຍ່ອມບໍ່ຮູ້ແຈ້ງ ຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກເວທະນາເຫຼົ່ານັ້ນຕາມຄວາມເປັນຈິງ ເມື່ອເຂົາບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກ

ເວທະນາເຫຼົ່ານັ້ນ ຕາມຄວາມເປັນຈິງ ອະວິດຊານຸໄສໃນອະທຸກຂະມະສຸກຂະເວທະນາຍ່ອມໄຫຼໄປຕາມ ເຂົາສະເຫວີຍສຸກຂະເວທະນາ ກໍເປັນຜູ້ປະກອບ (ດ້ວຍກິເລດ) ສະເຫວີຍສຸກຂະເວທະນານັ້ນ ສະເຫວີຍທຸກຂະເວທະນາ ກໍເປັນຜູ້ປະກອບ (ດ້ວຍກິເລດ) ສະເຫວີຍທຸກຂະເວທະນານັ້ນ ແລະ ສະເຫວີຍອະທຸກຂະມະສຸກຂະເວທະນາ ກໍເປັນຜູ້ປະກອບ (ດ້ວຍກິເລດ) ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ພິກຂຸທັງຫຼາຍ ປຸຖຸຊົນຜູ້ບໍ່ໄດ້ສະດັບນີ້ເຮົາຮຽກວ່າ ເປັນຜູ້ປະກອບດ້ວຍຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເຮົາກ່າວວ່າ ເປັນຜູ້ປະກອບດ້ວຍທຸກ

ພິກຂຸທັງຫຼາຍ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ຖືກທຸກຂະເວທະນາຖືກຕ້ອງ ຍ່ອມບໍ່ເສົ້າໂສກ ລຳບາກ ຂັດສົນ ທຸບເອິກຮ່ຳໄຮ ບໍ່ເຖິງຄວາມລຸ້ມຫຼົງ ທ່ານຍ່ອມສະເຫວີຍເວທະນາທາງກາຍປະການດຽວ ບໍ່ສະເຫວີຍເວທະນາທາງໃຈ

ນາຍຂະມັງທະນູໃຊ້ລູກສອນຍິງບຸຣຸດ ບໍ່ຍິງຊ້ຳບຸຣຸດນັ້ນ ດ້ວຍລູກສອນດອກທີ ໒ ເມື່ອເປັນແນວນີ້ ບຸຣຸດນັ້ນ ຍ່ອມສະເຫວີຍເວທະນາຍ້ອນລູກສອນດອກດຽວແມ່ນສັນໃດ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບກໍຄືກັນສັນນັ້ນ ຖືກທຸກຂະເວທະນາຖືກຕ້ອງຍ່ອມບໍ່ເສົ້າໂສກ ລຳບາກ ຂັດສົນ ທຸບເອິກຮ່ຳໄຮ ບໍ່ເຖິງຄວາມລຸ້ມຫຼົງ ເຂົາຍ່ອມສະເຫວີຍເວທະນາທາງກາຍປະການດຽວ ບໍ່ສະເຫວີຍເວທະນາທາງໃຈ

ອັນໜຶ່ງ ທ່ານຖືກທຸກຂະເວທະນານັ້ນ ຖືກຕ້ອງແລ້ວ ຍ່ອມບໍ່ຂັດເຄືອງ ປະຕິຄານຸໄສໃນ

ທຸກຂະເວທະນາ ຍ່ອມບໍ່ໄຫຼໄປຕາມທ່ານຜູ້ບໍ່ຂັດເຄືອງໃນ ຍ້ອນທຸກຂະເວທະນາ ທ່ານຖືກທຸກຂະເວທະນາຖືກຕ້ອງແລ້ວ ຍ່ອມບໍ່ເພີດເພີນໃນກາມສຸກ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນອະຣິຍະສາວົກ ຜູ້ໄດ້ສະດັບນັ້ນຮູ້ແຈ້ງ ເຄື່ອງສະບັດອອກຈາກທຸກຂະເວທະນາ ເວັ້ນຈາກກາມສຸກ ເມື່ອທ່ານບໍ່ເພີດເພີນໃນກາມສຸກ ຣາຄານຸໄສໃນສຸກຂະເວທະນາ ຍ່ອມບໍ່ໄຫຼໄປຕາມ ທ່ານຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກເວທະນາເຫຼົ່ານັ້ນຕາມຄວາມເປັນຈິງ ເມື່ອທ່ານຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກເວທະນາເຫຼົ່ານັ້ນ ຕາມຄວາມເປັນຈິງ ອະວິດຊານຸໄສໃນອະທຸກຂະມະສຸກຂະເວທະນາຍ່ອມບໍ່ໄຫຼໄປຕາມ ຖ້າທ່ານສະເຫວີຍສຸກຂະເວທະນາ ກໍປາສະຈາກ (ກິເລດ) ສະເຫວີຍສຸກຂະເວທະນານັ້ນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍປາສະຈາກ (ກິເລດ) ສະເຫວີຍທຸກຂະເວທະນານັ້ນ ຖ້າທ່ານສະເຫວີຍອທຸກຂະມະສຸຂະເວທະນາ ກໍປາສະຈາກ (ກິເລດ) ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບນີ້ເຮົາຮຽກວ່າ ເປັນຜູ້ປາສະຈາກຊາດ ຊະຣາມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ເຮົາກ່າວວ່າ ເປັນຜູ້ປາດຈາກທຸກ

ພິກຂຸທັງຫຼາຍ ນີ້ແລ ເປັນຄວາມແປກກັນ ເປັນຄວາມແຕກຕ່າງກັນ ເປັນເຫດເຮັດໃຫ້ຕ່າງກັນລະຫວ່າງ ອະຣິຍະສາວົກຜູ້ໄດ້ສະດັບກັບປຸຖຸຊົນຜູ້ບໍ່ໄດ້ສະດັບ

ອະຣິຍະສາວົກນັ້ນມີປັນຍາ ເປັນພະຫູສູດ
ຍ່ອມບໍ່ສະເຫວີຍທັງສຸກຂະເວທະນາ ທັງທຸກຂະເວທະນາ
ນີ້ເປັນຄວາມແປກກັນລະຫວ່າງທີຣະຊົນຜູ້ສະຫຼາດກັບປຸຖຸຊົນ
ທຳທີ່ໜ້າປາຖະໜາຍ່ອມບໍ່ຍ່ຳຍີຈິດ
ຂອງອະຣິຍະສາວົກນັ້ນຜູ້ມີທຳອັນຮູ້ແຈ້ງແລ້ວ
ເປັນພະຫູສູດເຫັນແຈ້ງໂລກນີ້ແລະໂລກໜ້າຢູ່
ທ່ານຍ່ອມບໍ່ເຖິງຄວາມຂັດເຄືອງຍ້ອນອະນິດຖາຣົມ
ອັນໜຶ່ງ ຄວາມຍິນດີຫຼືຄວາມຍິນຮ້າຍຖືກທ່ານກຳຈັດແລ້ວ
ຕັ້ງຢູ່ບໍ່ໄດ້ ຍ່ອມບໍ່ມີ ທ່ານຮູ້ບົດທີ່ປາສະຈາກທຸລີ
ບໍ່ມີຄວາມເສົ້າໂສກ ຮູ້ແຈ້ງໂດຍຖືກຕ້ອງ ເຖິງຝັ່ງແຫ່ງພົບໄດ້

**ສັນລະສູດທີ ໖ ຈົບ**

# ໗. ປະຖົມເຄລັນຍະສູດ

## ວ່າດ້ວຍຄວາມເຈັບປ່ວຍ ສູດທີ ໑

[໘໕໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປສູ່ສາລາຄົນໄຂ້ແລ້ວ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຕະຫຼອດເວລາ ນີ້ເປັນຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

### ລັກສະນະຂອງຜູ້ມີສະຕິສຳປະຊັນຍະ

ພິກຂຸຜູ້ມີສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຯລຯ ໃນເວທະນາທັງຫຼາຍ ຯລຯ ໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຜູ້ມີສະຕິເປັນແນວນີ້ແລ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫຼຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງຜ້າສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍ້ຳ ການກິນ ການຖ່າຍອຸດຈາຣະ ປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການມິດ

ພິກຂຸຜູ້ມີສຳປະຊັນຍະເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຕະຫຼອດເວລາ ນີ້ເປັນຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

# ຜູ້ມີສະຕິສຳປະຊັນຍະຍ່ອມຮູ້ເວທະນາໄດ້ຊັດແຈ້ງ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນມີສະຕິສຳປະຊັນຍະ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ສຸກຂະເວທະນາເກີດຂຶ້ນ

ທ່ານຮູ້ແຈ້ງແນວນີ້ວ່າ ສຸກຂະເວທະນານີ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອາໄສກັນ ສຸກຂະເວທະນານັ້ນ ຈຶ່ງເກີດຂຶ້ນ ຍ້ອນບໍ່ອາໄສກັນ ຈຶ່ງບໍ່ເກີດຂຶ້ນ ຍ້ອນອາໄສອັນໃດ ຍ້ອນອາໄສກາຍນີ້ເອງ ແຕ່ກາຍນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ສຸກຂະເວທະນາເກີດຂຶ້ນ ຍ້ອນອາໄສກາຍທີ່ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ແລ້ວຢູ່ໄສຈັກທ່ຽງໄດ້ບໍ

ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບແລະຄວາມສະລະຄືນໃນກາຍ ແລະໃນສຸກຂະເວທະນາຢູ່ ເມື່ອທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບ ແລະຄວາມສະລະຄືນໃນກາຍ ແລະໃນສຸກຂະເວທະນາຢູ່ແນວນີ້ ຍ່ອມລະຣາຄານຸໄສໃນກາຍ ແລະໃນສຸກຂະເວທະນາໄດ້

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນມີສະຕິສຳປະຊັນຍະ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ແນວນີ້ ທຸກຂະເວທະນາເກີດຂຶ້ນ

ທ່ານຮູ້ແຈ້ງແນວນີ້ວ່າ ທຸກຂະເວທະນານີ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອາໄສກັນ ທຸກຂະເວທະນາ ນັ້ນຈຶ່ງເກີດຂຶ້ນ ຍ້ອນບໍ່ອາໄສກັນ ຈຶ່ງບໍ່ເກີດຂຶ້ນ ຍ້ອນອາໄສອັນໃດ ຍ້ອນອາໄສກາຍນີ້ເອງ ແຕ່ກາຍນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ທຸກຂະເວທະນາເກີດຂຶ້ນ ຍ້ອນອາໄສກາຍທີ່ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ບໍ?

ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບ ແລະຄວາມສະລະຄືນໃນກາຍ ແລະໃນທຸກຂະເວທະນາຢູ່ ເມື່ອທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຯລຯ ແລະ ຄວາມສະລະຄືນໃນກາຍ ແລະໃນທຸກຂະເວທະນາຢູ່ແນວນີ້ ຍ່ອມລະປະຕິຄານຸໄສໃນກາຍ ແລະໃນທຸກຂະເວທະນາໄດ້

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນ ມີສະຕິສຳປະຊັນຍະ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ອະທຸກຂະມະສຸກຂະເວທະນາເກີດຂຶ້ນ

ທ່ານຮູ້ແຈ້ງແນວນີ້ວ່າ ອະທຸກຂະມະສຸກຂະເວທະນານີ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອາໄສກັນ ອະທຸກຂະມະສຸກຂະເວທະນານັ້ນຈຶ່ງເກີດຂຶ້ນ ຍ້ອນບໍ່ອາໄສກັນ ຈຶ່ງບໍ່ເກີດຂຶ້ນ ຍ້ອນອາໄສອັນໃດ ຍ້ອນອາໄສກາຍນີ້ເອງ ແຕ່ກາຍນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ

ອະທຸກຂະມະສຸກຂະເວທະນາເກີດຂຶ້ນ ຍ້ອນອາໄສກາຍທີ່ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນ ແລະກັນເກີດຂຶ້ນ ແລ້ວຈັກຫາຄວາມທ່ຽງມາແຕ່ໃສໄດ້ບໍ?

ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບ ແລະ ຄວາມສະລະຄືນໃນກາຍ ແລະໃນອະທຸກຂະມະສຸກຂະເວທະນາຢູ່ ເມື່ອທ່ານພິຈາລະນາເຫັນ ຄວາມບໍ່ທ່ຽງ ຯລຯ ແລະ ຄວາມສະລະຄືນໃນກາຍ ແລະໃນອະທຸກຂະມະສຸກຂະເວທະນາຢູ່ ແບບນີ້ ຍ່ອມລະອະວິດຊານຸໄສໃນກາຍ ແລະໃນອະທຸກຂະມະສຸກຂະເວທະນາໄດ້

ຖ້າພິກຂຸນັ້ນ ສະເຫວີຍສຸກຂະເວທະນາ ກໍຮູ້ແຈ້ງວ່າ ສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງ ວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ ຖ້າທ່ານສະເຫວີຍທຸກຂະເວທະນາ ຯລຯ ຖ້າທ່ານ ສະເຫວີຍອະທຸກຂະມະສຸກຂະເວທະນາ ກໍຮູ້ແຈ້ງວ່າ ອະທຸກຂະມະສຸກຂະເວທະນານັ້ນ ບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ

ຖ້າທ່ານສະເຫວີຍສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍສຸກຂະເວ ທະນານັ້ນ ຖ້າທ່ານສະເຫວີຍ ທຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍທຸກຂະ ເວທະນານັ້ນ ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະ ເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ທ່ານເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີ ກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວ ທະນາມີຊີວິດເປັນບ່ອນສຸດ ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກ ເຢັນໃນໂລກນີ້ຢ່າງແນ່ນອນ

## ປຽບເວທະນາກັບຕະກຽງ

ພິກຂຸທັງຫຼາຍ ຍ້ອນອາໄສນ້ຳມັນແລະໄສ້ ຕະກຽງນ້ຳມັນຈຶ່ງຕິດຢູ່ໄດ້ ຍ້ອນໝົດ ນ້ຳມັນ ແລະໄສ້ ຕະກຽງນ້ຳມັນນັ້ນກໍໝົດເຊື້ອດັບໄປແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອສະເຫວີຍເວ ທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ເມື່ອ ສະເຫວີຍ ເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນ ສຸດ ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງ ແນ່ນອນ

**ປະຖົມເຄລັນຍະສູດທີ ໑ ຈົບ**

# ๗. ທຸຕິຍະເຄລັນຍະສູດ

## ວ່າດ້ວຍຄວາມເຈັບປ່ວຍ ສູດທີ ๘

[๘๕๖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ເມື່ອໃນເວລາຄ່ຳພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປສູ່ສາລາຄົນໄຂ້ແລ້ວ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຕະຫຼອດເວລາ ນີ້ເປັນຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

### ລັກສະນະຂອງຜູ້ມີສະຕິສຳປະຊັນຍະ

ພິກຂຸຜູ້ມີສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ฯລฯ ໃນເວທະນາທັງຫຼາຍ ฯລฯ ໃນຈິດ ฯລฯ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຜູ້ມີສະຕິເປັນແນວນີ້ແລ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ທຳຄວາມຮູ້ສຶກໂຕ ໃນການກ້າວໄປ ການຖອຍກັບ ฯລฯ ການເວົ້າ ການມິດ

ພິກຂຸຜູ້ມີສຳປະຊັນຍະເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຕະຫຼອດເວລາ ນີ້ເປັນຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

### ຜູ້ມີສະຕິສຳປະຊັນຍະຍ່ອມຮູ້ເວທະນາໄດ້ຊັດແຈ້ງ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນມີສະຕິສຳປະຊັນຍະ ບໍ່ໝະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ແນວນີ້ ສຸກຂະເວທະນາເກີດຂຶ້ນ ທ່ານຮູ້ແຈ້ງແນວນີ້ວ່າ ສຸກຂະເວທະນານີ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອາໄສກັນ ສຸກຂະເວທະນານັ້ນຈຶ່ງເກີດຂຶ້ນ ຍ້ອນບໍ່ອາໄສກັນ ຈຶ່ງບໍ່ເກີດ

ຂຶ້ນ ຍ້ອນອາໄສອັນໃດ ຍ້ອນອາໄສຜັດສະນີ້ເອງ ແຕ່ຜັດສະນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ

ສຸກຂະເວທະນາເກີດຂຶ້ນຍ້ອນອາໄສຜັດສະທີ່ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ແລ້ວຈັກຫາຄວາມທ່ຽງມາແຕ່ໄສໄດ້ບໍ?

ທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບ ແລະ ຄວາມສະລະຄືນໃນຜັດສະແລະໃນສຸກຂະເວທະນາຢູ່ ເມື່ອທ່ານພິຈາລະນາເຫັນຄວາມບໍ່ທ່ຽງ ຄວາມເສື່ອມ ຄວາມຄາຍກຳໜັດ ຄວາມດັບ ແລະ ຄວາມສະລະຄືນໃນຜັດສະ ແລະໃນສຸກຂະເວທະນາຢູ່ແນວນີ້ ຍ່ອມລະຣາຄານຸໄສໃນຜັດສະ ແລະໃນສຸກຂະເວທະນາໄດ້

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນມີສະຕິ ຯລຯ ຢູ່ແນວນີ້ ທຸກຂະເວທະນາເກີດຂຶ້ນ ຯລຯ ອະທຸກຂະມະສຸກຂະເວທະນາເກີດຂຶ້ນ ທ່ານຮູ້ແຈ້ງແນວນີ້ວ່າ ອະທຸກຂະມະສຸກຂະເວທະນານີ້ເກີດຂຶ້ນແລ້ວແກ່ເຮົາ ຍ້ອນອາໄສກັນ ອະທຸກຂະມະສຸກຂະເວທະນານັ້ນຈຶ່ງເກີດຂຶ້ນ ຍ້ອນບໍ່ອາໄສກັນຈຶ່ງບໍ່ເກີດຂຶ້ນ ຍ້ອນອາໄສອັນໃດ ຍ້ອນອາໄສຜັດສະນີ້ເອງ ແຕ່ຜັດສະນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ຯລຯ (ຄວນຂະຫຍາຍຄວາມໃຫ້ພິດສະດານຄືສູດທຳອິດ) ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ ນອນ

## ປຽບເວທະນາກັບຕະກຽງ

ພິກຂຸທັງຫຼາຍ ຍ້ອນອາໄສນ້ຳມັນແລະໄສ້ ຕະກຽງນ້ຳມັນຈຶ່ງຕິດຢູ່ໄດ້ ຍ້ອນສິ້ນນ້ຳມັນແລະໄສ້ ຕະກຽງນ້ຳມັນນັ້ນກໍໝົດເຊື້ອດັບໄປແນ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ

**ທຸຕິຍະເຄລັນຍະສູດທີ ໗ ຈົບ**

# ໙. ອະນິດຈະສູດ
## ວ່າດ້ວຍເວທະນາບໍ່ທ່ຽງ

[໔໕໗] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້ບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນ ແລະກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ມີຄວາມເສື່ອມໄປເປັນທຳມະດາ ມີຄວາມຄາຍອອກເປັນທຳມະດາ ມີຄວາມດັບໄປເປັນທຳມະດາ

**ອະນິດຈະສູດທີ ໙ ຈົບ**

# ໑໐. ຜັດສະມູລະກະສູດ

## ວ່າດ້ວຍເວທະນາມີຜັດສະເປັນມູນ

[໘໕໗] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້ເກີດຈາກຜັດສະ ມີຜັດສະເປັນມູນ ມີຜັດສະເປັນເຫດ ມີຜັດສະເປັນປັດໄຈ

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນາ ສຸກຂະເວທະນາຈຶ່ງເກີດ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນານັ້ນ ໆ ດັບ ສຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງສຸກຂະເວທະນາທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນກໍດັບຄືສະງົບໄປ

ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາ ທຸກຂະເວທະນາຈຶ່ງເກີດ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນານັ້ນ ໆ ດັບ ທຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງທຸກຂະເວທະນາທີ່ສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນ ກໍດັບ ຄື ສະງົບໄປ

ຍ້ອນອາໄສຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາ ອະທຸກຂະມະສຸກຂະເວທະນາຈຶ່ງເກີດ ຍ້ອນຜັດສະອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນານັ້ນ ໆ ດັບ ອະທຸກຂະມະສຸກຂະເວທະນາທີ່ເກີດຍ້ອນອາໄສຜັດສະ ອັນເປັນທີ່ຕັ້ງແຫ່ງອະທຸກຂະມະສຸກຂະເວທະນາທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນ ກໍດັບຄືສະງົບໄປ

## ປຽບເວທະນາກັບຄວາມຮ້ອນ

ພິກຂຸທັງຫຼາຍ ຍ້ອນໄມ້ ໔ ອັນສຽດສີກັນ ຈຶ່ງເກີດຄວາມຮ້ອນ ມີໄຟລຸກຂຶ້ນ ຍ້ອນແຍກໄມ້ທັງສອງນັ້ນອອກຈາກກັນ ຄວາມຮ້ອນທີ່ເກີດຈາກການສຽດສີນັ້ນ ຈຶ່ງດັບ ລະງັບໄປ

ແມ່ນສັນໃດ ເວທະນາ ๓ ປະການນີ້ກໍຄືກັນສັນນັ້ນ ເກີດແຕ່ຜັດສະ ມີຜັດສະເປັນມູນ ມີຜັດສະເປັນເຫດ ມີຜັດສະເປັນປັດໄຈ ຍ້ອນອາໄສຜັດສະທີ່ເກີດແຕ່ປັດໄຈນັ້ນ ເວທະນາທີ່ເກີດແຕ່ຜັດສະນັ້ນຈຶ່ງເກີດ ຍ້ອນຜັດສະທີ່ເກີດແຕ່ປັດໄຈນັ້ນດັບ ເວທະນາທີ່ເກີດແຕ່ຜັດສະນັ້ນຈຶ່ງດັບ

**ຜັດສະມູລະກະສູດທີ ໑໐ ຈົບ**

**ສະຄາຖະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສະມາທິສູດ
໒. ສຸຂະສູດ
๓. ປະຫານະສູດ
໔. ປາຕາລະສູດ
໕. ທັດຖັບພະສູດ
໖. ສັນລະສູດ
໗. ປະຖົມເຄລັນຍະສູດ
໘. ທຸຕິຍະເຄລັນຍະສູດ
໙. ອະນິດຈະສູດ
໑໐. ຜັດສະມູລະກະສູດ

# ໔. ຣະໂຫຄະຕະວັກ

## ໝວດວ່າດ້ວຍພິກຂຸຜູ້ຢູ່ໃນບ່ອນສະງັດ

# ໑. ຣະໂຫຄະຕະສູດ

## ວ່າດ້ວຍພິກຂຸຜູ້ຢູ່ໃນບ່ອນສະງັດ

[໔໕໗] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະງັດໄດ້ເກີດຄວາມຄຶດຄຳນຶງຂຶ້ນມາ ວ່າ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດເວທະນາໄວ້ ໓ ປະການນີ້

ສົມຈິງດັ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ

ພຣະດຳຣັດທີ່ວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ ນັ້ນພຣະຜູ້ມີພຣະພາກເຈົ້າຕັດໝາຍເຖິງອັນໃດ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ

ດີແລ້ວ ດີແລ້ວ ພິກຂຸ ເຮົາກ່າວເວທະນາໄວ້ ໓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ເຮົາກ່າວເວທະນາໄວ້ ໓ ປະການນີ້

ສົມຈິງດັ່ງຄຳທີ່ເຮົາກ່າວວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ

ຄຳທີ່ວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ ນັ້ນເຮົາກ່າວໝາຍເຖິງຄວາມທີ່ສັງຂານທັງຫຼາຍນັ້ນເອງ ບໍ່ທ່ຽງ

ຄຳທີ່ວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ ນັ້ນເຮົາກ່າວໝາຍເຖິງຄວາມທີ່ສັງຂານທັງຫຼາຍນັ້ນເອງ ມີຄວາມສິ້ນໄປເປັນທຳມະດາ ຯລຯ ມີຄວາມເສື່ອມໄປເປັນທຳມະດາ ຯລຯ ມີຄວາມແຕກໄປເປັນທຳມະດາ ຯລຯ ມີຄວາມດັບໄປເປັນທຳມະດາ ຯລຯ

ຄຳທີ່ວ່າ ຄວາມສະເຫວີຍອາລົມແນວໃດແນວໜຶ່ງນັ້ນເປັນທຸກ ນັ້ນເຮົາກ່າວໝາຍເຖິງຄວາມທີ່ສັງຂານທັງຫຼາຍນັ້ນເອງ ມີຄວາມຜັນແປເປັນທຳມະດາ

ຕໍ່ມາ ເຮົາກ່າວຄວາມດັບໄປແຫ່ງສັງຂານຕາມລຳດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍດັບໄປ
໒. ເມື່ອເຂົ້າທຸຕິຍະຊານ ວິຕົກວິຈານກໍດັບໄປ
໓. ເມື່ອເຂົ້າຕະຕິຍະຊານ ປີຕິກໍດັບໄປ
໔. ເມື່ອເຂົ້າຈະຕຸດຖະຊານ ລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກກໍດັບໄປ
໕. ເມື່ອເຂົ້າອາກາສານັນຈາຍະຕະນະຊານ ຮູບສັນຍາກໍດັບໄປ
໖. ເມື່ອເຂົ້າວິນຍານັນຈາຍະຕະນະຊານ ອາກາສານັນຈາຍະຕະນະສັນຍາກໍດັບໄປ
໗. ເມື່ອເຂົ້າອາກິນຈັນຍາຍະຕະນະຊານ ວິນຍານັນຈາຍະຕະນະສັນຍາກໍດັບໄປ
໘. ເມື່ອເຂົ້າເນວະສັນຍານາສັນຍາຍະຕະນະຊານ ອາກິນຈັນຍາຍະຕະນະສັນຍາກໍດັບໄປ
໙. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍດັບໄປ
໑໐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມດັບໄປ ໂທສະຍ່ອມດັບໄປ ໂມຫະຍ່ອມດັບໄປ

ຕໍ່ມາ ເຮົາກ່າວຄວາມລະງັບໄປແຫ່ງສັງຂານຕາມລຳດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍລະງັບໄປ
ຯລຯ
໙. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍລະງັບໄປ
໑໐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມລະງັບໄປ ໂທສະຍ່ອມລະງັບໄປ ໂມຫະຍ່ອມລະງັບໄປ

ພິກຂຸ ປັດສັດທິ ໖ ປະການນີ້ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍສະງົບ
໒. ເມື່ອເຂົ້າທຸຕິຍະຊານ ວິຕົກວິຈານກໍສະງົບ
໓. ເມື່ອເຂົ້າຕະຕິຍະຊານ ປີຕິກໍສະງົບ
໔. ເມື່ອເຂົ້າຈະຕຸດຖະຊານ ລົມຫັນໃຈເຂົ້າແລະລົມຫັນໃຈອອກກໍສະງົບ
໕. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍສະງົບ

໓. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມສະງົບ ໂທສະຍ່ອມສະງົບ ໂມຫະຍ່ອມສະງົບ

**ຣະໂຫຄະຕະສູດທີ ໑ ຈົບ**

# ໔. ປະຖົມອາກາສະສູດ

## ວ່າດ້ວຍອາກາດ ສູດທີ ໑

[໔໑໐] ພິກຂຸທັງຫຼາຍ ລົມຊະນິດຕ່າງ ໆ ພັດໄປໃນອາກາດ

ຄື ລົມມາຈາກທິດຕາເວັນອອກພັດໄປແດ່ ລົມມາຈາກທິດຕາເວັນຕົກພັດໄປແດ່

ລົມມາຈາກທິດເໜືອພັດໄປແດ່ ລົມມາຈາກທິດໃຕ້ພັດໄປແດ່ ລົມເຈືອຝຸ່ນພັດໄປແດ່ ລົມບໍ່ເຈືອຝຸ່ນພັດໄປແດ່ ລົມໜາວພັດໄປແດ່ ລົມຮ້ອນພັດໄປແດ່ ລົມອ່ອນ ໆ ພັດໄປແດ່ ລົມແຮງພັດໄປແດ່ ແມ່ນສັນໃດ

ພິກຂຸທັງຫຼາຍ ເວທະນາຊະນິດຕ່າງ ໆ ກໍຄືກັນ ສັນນັ້ນ ຍ່ອມເກີດຂຶ້ນໃນກາຍນີ້ ຄື ສຸກຂະເວທະນາເກີດຂຶ້ນແດ່ ທຸກຂະເວທະນາເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາເກີດຂຶ້ນແດ່

ລົມຫຼາຍຊະນິດ ພັດໄປໃນອາກາດ ຄື ລົມມາຈາກທິດຕາເວັນອອກແດ່ ລົມມາຈາກທິດຕາເວັນຕົກແດ່ ລົມມາຈາກທິດເໜືອແດ່ ລົມມາຈາກທິດໃຕ້ແດ່ ລົມເຈືອຝຸ່ນແດ່ ລົມບໍ່ເຈືອຝຸ່ນແດ່ ລົມໜາວແດ່ ລົມຮ້ອນແດ່ ບາງເວລາລົມແຮງແດ່ ລົມອ່ອນ ໆ ແດ່ ແມ່ນສັນໃດ

ເວທະນາກໍຄືກັນສັນນັ້ນ ຍ່ອມເກີດຂຶ້ນໃນກາຍນີ້ ຄື ສຸກຂະເວທະນາເກີດຂຶ້ນແດ່ ທຸກຂະເວທະນາເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາເກີດຂຶ້ນແດ່

ເມື່ອໃດພິກຂຸມີຄວາມພຽນ ບໍ່ລະສຳປະຊັນຍະ
ເມື່ອນັ້ນທ່ານເປັນບັນດິດ ກຳນົດຮູ້ເວທະນາທັງປວງໄດ້
ທ່ານເມື່ອກຳນົດຮູ້ເວທະນາແລ້ວ
ບໍ່ມີອາສະວະໃນປັດຈຸບັນ ຕັ້ງຢູ່ໃນທຳ ຈົບເວດ
ຕາຍໄປ ຍ່ອມບໍ່ເຂົ້າເຖິງການບັນຍັດ

**ປະຖົມອາກາສະສູດທີ ໔ ຈົບ**

# ໓. ທຸຕິຍະອາກາສະສູດ

## ວ່າດ້ວຍອາກາດ ສູດທີ ໘

[໘໒໑] ພິກຂຸທັງຫຼາຍ ລົມຊະນິດຕ່າງ ໆ ພັດໄປໃນອາກາດ ຄື ລົມມາຈາກທິດຕາເວັນອອກພັດໄປແດ່ ຯລຯ ລົມແຮງພັດໄປແດ່ ແມ່ນສັນໃດ

ພິກຂຸທັງຫຼາຍ ເວທະນາຊະນິດຕ່າງ ໆ ກໍຄືກັນ ສັນນັ້ນ ຍ່ອມເກີດຂຶ້ນໃນກາຍນີ້ ຄື ສຸກຂະເວທະນາເກີດຂຶ້ນແດ່ ທຸກຂະເວທະນາເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາເກີດຂຶ້ນແດ່

**ທຸຕິຍະອາກາສະສູດທີ ໓ ຈົບ**

# ໔. ອະຄາຣະສູດ

## ວ່າດ້ວຍເຮືອນພັກ

[໘໒໔] ພິກຂຸທັງຫຼາຍ ມີເຮືອນພັກຄົນເດີນທາງຢູ່ ຄົນທັງຫຼາຍມາຈາກທິດຕາເວັນອອກແດ່ ມາຈາກທິດຕາເວັນຕົກແດ່ ມາຈາກທິດເໜືອແດ່ ມາຈາກທິດໃຕ້ແດ່ ເຂົ້າມາພັກໃນເຮືອນພັກຄົນເດີນທາງນັ້ນ ຄື ກະສັດມາພັກແດ່ ພາມມາພັກແດ່ ແພດມາພັກແດ່ ສູດມາພັກແດ່ ແມ່ນສັນໃດ

ພິກຂຸທັງຫຼາຍ ເວທະນາຊະນິດຕ່າງ ໆ ກໍຄືກັນສັນນັ້ນ ຍ່ອມເກີດຂຶ້ນໃນກາຍນີ້ ຄື ສຸກຂະເວທະນາເກີດຂຶ້ນແດ່ ທຸກຂະເວທະນາເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາເກີດຂຶ້ນແດ່

ສຸກຂະເວທະນາເຈືອອາມິດເກີດຂຶ້ນແດ່ ທຸກຂະເວທະນາເຈືອອາມິດເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາເຈືອອາມິດເກີດຂຶ້ນແດ່ ສຸກຂະເວທະນາບໍ່ເຈືອອາມິດເກີດຂຶ້ນແດ່ ທຸກຂະເວທະນາບໍ່ເຈືອອາມິດເກີດຂຶ້ນແດ່ ອະທຸກຂະມະສຸກຂະເວທະນາບໍ່ເຈືອອາມິດເກີດຂຶ້ນແດ່

**ອະຄາຣະສູດທີ ໔ ຈົບ**

# ໕. ປະຖົມອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ໑

[໘໒໓] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເວທະນາມີທີ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ?

ຄວາມດັບແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາເປັນແນວໃດ?

ອັນໃດ ເປັນຄຸນແຫ່ງເວທະນາ ອັນໃດ ເປັນໂທດແຫ່ງເວທະນາ ອັນໃດເປັນເຄື່ອງສະບັດອອກຈາກເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ເວທະນາມີ ໓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດເວທະນາຈຶ່ງເກີດ ຍ້ອນຜັດສະດັບເວທະນາຈຶ່ງດັບ ອະຣິຍະມັກມີອົງ ໘ ນີ້ເອງ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄື

໑. ສໍາມາທິດຖິ ฯລฯ ໘. ສໍາມາສະມາທິ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນແຫ່ງເວທະນາ

ສະພາບທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທໍາມະດາ ນີ້ເປັນໂທດແຫ່ງເວທະນາ

ທໍາເປັນທີ່ກໍາຈັດສັນທະຣາຄະ ທໍາເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

ຕໍ່ມາເຮົາກ່າວຄວາມດັບໄປແຫ່ງສັງຂານຕາມລໍາດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍດັບໄປ

ฯລฯ

໙. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍດັບໄປ

໑໐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມດັບໄປ ໂທສະຍ່ອມດັບໄປ ໂມຫະຍ່ອມ ດັບໄປ

ຕໍ່ມາເຮົາກ່າວຄວາມລະງັບໄປແຫ່ງສັງຂານຕາມລໍາດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍລະງັບໄປ

ฯລฯ

๘. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍລະງັບໄປ

๑๐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມລະງັບໄປ ໂທສະຍ່ອມລະງັບໄປ ໂມຫະຍ່ອມລະງັບໄປ

ອານົນ ຕໍ່ມາ ເຮົາກ່າວຄວາມສະງົບແຫ່ງສັງຂານຕາມລຳດັບ ຄື

๑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍສະງົບ ฯລฯ

๕. ເມື່ອເຂົ້າອາກາສານັນຈາຍະຕະນະຊານ ຮູບສັນຍາກໍສະງົບ

໖. ເມື່ອເຂົ້າວິນຍານັນຈາຍະຕະນະຊານ ອາກາສານັນຈາຍະຕະນະສັນຍາກໍສະງົບ

໗. ເມື່ອເຂົ້າອາກິນຈັນຍາຍະຕະນະຊານ ວິນຍານັນຈາຍະຕະນະສັນຍາກໍສະງົບ

๗. ເມື່ອເຂົ້າເນວະສັນຍານາສັນຍາຍະຕະນະຊານ ອາກິນຈັນຍາຍະຕະນະສັນຍາກໍສະງົບ

๘. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍສະງົບ

๑๐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມສະງົບ ໂທສະຍ່ອມສະງົບ ໂມຫະຍ່ອມສະງົບ

**ປະຖົມອານັນທະສູດທີ ๕ ຈົບ**

# ໖. ທຸຕິຍະອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ๘

[๘໖๔] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະອານົນດັ່ງນີ້ວ່າ

ອານົນ ເວທະນາມີທໍ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ? ຄວາມດັບແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາເປັນແນວໃດ? ອັນໃດເປັນຄຸນແຫ່ງເວທະນາ ອັນໃດເປັນໂທດແຫ່ງເວທະນາ ອັນໃດເປັນເຄື່ອງສະບັດອອກຈາກເວທະນາ

ທ່ານພຣະອານົນຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍ ເມື່ອຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຖ້າຈັ່ງຊັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ເມື່ອທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດວ່າ ອານົນ ເວທະນາມີ ๓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າເວທະນາ ຯລຯ ຍ້ອນຜັດສະເກີດ ຯລຯ ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມສະງົບ ໂທສະຍ່ອມສະງົບ ໂມຫະຍ່ອມສະງົບ

**ທຸຕິຍະອານັນທະສູດທີ ໑໐ ຈົບ**

# ໆ. ປະຖົມສຳພະຫຸລະສູດ

## ວ່າດ້ວຍພິກຂຸຫຼາຍອົງ ສູດທີ ໑

[໔໙໕] ຄັ້ງນັ້ນ ພິກຂຸຫຼາຍ ອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເວທະນາມີທໍ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ?

ຄວາມດັບແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ເປັນແນວໃດ?

ອັນໃດ ເປັນຄຸນແຫ່ງເວທະນາ ອັນໃດ ເປັນໂທດແຫ່ງເວທະນາ ອັນໃດ ເປັນເຄື່ອງສະບັດອອກຈາກເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ເວທະນາມີ ໓ ປະການ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດເວທະນາຈຶ່ງເກີດ ຍ້ອນຜັດສະດັບເວທະນາຈຶ່ງດັບ ອະຣິຍະມັກມີອົງ ໘ ນີ້ແລ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນແຫ່ງເວທະນາ

ສະພາບທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດແຫ່ງ ເວທະນາ

ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

ຕໍ່ມາ ເຮົາກ່າວຄວາມດັບແຫ່ງສັງຂານຕາມລຳດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍດັບໄປ

ฯลฯ

໑໐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມດັບໄປ ໂທສະຍ່ອມດັບໄປ ໂມຫະຍ່ອມດັບໄປ

ຕໍ່ມາ ເຮົາກ່າວຄວາມລະງັບໄປແຫ່ງສັງຂານຕາມລຳດັບ ຄື

໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍລະງັບໄປ ฯลฯ

໑໐. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມລະງັບໄປ ໂທສະຍ່ອມລະງັບໄປ ໂມຫະຍ່ອມລະງັບໄປ

ພິກຂຸທັງຫຼາຍ ປັດສັດທິ ໖ ປະການນີ້ ຄື
໑. ເມື່ອພິກຂຸເຂົ້າປະຖົມຊານ ວາຈາກໍສະງົບ
໒. ເມື່ອເຂົ້າທຸຕິຍະຊານ ວິຕົກວິຈານກໍສະງົບ
໓. ເມື່ອເຂົ້າຕະຕິຍະຊານ ປິຕິກໍສະງົບ
໔. ເມື່ອເຂົ້າຈະຕຸດຖະຊານ ລົມຫັນໃຈເຂົ້າແລະລົມຫັນໃຈອອກກໍສະງົບ
໕. ເມື່ອເຂົ້າສັນຍາເວທະຍິຕະນິໂຣດ ສັນຍາແລະເວທະນາກໍສະງົບ
໖. ພິກຂຸຜູ້ສິ້ນອາສະວະແລ້ວ ຣາຄະຍ່ອມສະງົບ ໂທສະຍ່ອມສະງົບ ໂມຫະຍ່ອມສະງົບ

**ປະຖົມສຳພະຫຸລະສູດທີ ໑ ຈົບ**

## ໒. ທຸຕິຍະສຳພະຫຸລະສູດ

### ວ່າດ້ວຍພິກຂຸຫຼາຍອົງ ສູດທີ ໒

[໒໖໖] ຄັ້ງນັ້ນ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ฯลฯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມພິກdຂຸເຫຼົ່ານັ້ນດັ່ງນີ້ວ່າ

ພິກຂຸທັງຫຼາຍ ເວທະນາມີທີ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ? ຄວາມດັບ

ແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາເປັນແນວໃດ? ອັນໃດເປັນຄຸນແຫ່ງເວທະນາ ອັນໃດເປັນໂທດແຫ່ງເວທະນາ ອັນໃດເປັນເຄື່ອງສະບັດອອກຈາກເວທະນາ

ພິກຂຸທັງຫຼາຍຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເວທະນາມີ ໓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດຂຶ້ນ ຯລຯ

(ຄວນຂະຫຍາຍຄວາມໃຫ້ພິດສະດານຄືສູດທຳອິດ)

**ທຸຕິຍະສຳພະຫຸລະສູດທີ ໗ ຈົບ**

# ໘. ປັນຈະກັງຄະສູດ

## ວ່າດ້ວຍຊ່າງໄມ້ຊື່ປັນຈະກັງຄະ

[໔໙໗] ຄັ້ງນັ້ນ ຊ່າງໄມ້ຊື່ປັນຈະກັງຄະ ເຂົ້າໄປຫາທ່ານພຣະອຸທາຍີຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ທໍ່ໃດ?

ທ່ານພຣະອຸທາຍີຕອບວ່າ ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການນີ້

ເມື່ອທ່ານພຣະອຸທາຍີກ່າວແນວນີ້ແລ້ວ ຊ່າງໄມ້ຊື່ປັນຈະກັງຄະໄດ້ກ່າວກັບທ່ານ

ພຣະອຸທາຍີດັ່ງນີ້ວ່າ ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໔ ປະການ ຄື

໑. ສຸກຂະເວທະນາ ໔. ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະງົບປະນີດ

ແມ່ນເທື່ອທີ ໔ ທ່ານພຣະອຸທາຍີກໍໄດ້ກ່າວກັບຊ່າງໄມ້ຊື່ປັນຈະກັງຄະດັ່ງນີ້ວ່າ ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໔ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື

໑. ສຸກຂະເວທະນາ ໔. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການນີ້

ແມ່ນເທື່ອທີ ໔ ຊ່າງໄມ້ຊື່ປັນຈະກັງຄະກໍໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານອຸທາຍີ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໔ ປະການ ຄື

໑. ສຸກຂະເວທະນາ ໔. ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະງົບປະນີດ

ແມ່ນເທື່ອທີ ໓ ທ່ານພຣະອຸທາຍີກໍໄດ້ກ່າວກັບຊ່າງໄມ້ຊື່ປັນຈະກັງຄະດັ່ງນີ້ວ່າ ຊ່າງໄມ້ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໔ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການ ຄື

໑. ສຸກຂະເວທະນາ ໔. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດເວທະນາໄວ້ ໓ ປະການນີ້

ແມ່ນເທື່ອທີ ໓ ຊ່າງໄມ້ຊື່ປັນຈະກັງຄະກໍໄດ້ກ່າວກັບທ່ານພຣະອຸທາຍີດັ່ງນີ້ວ່າ ທ່ານອຸທາ ຍີ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຕັດເວທະນາໄວ້ ໓ ປະການ ແຕ່ພຣະຜູ້ມີພຣະພາກເຈົ້າຕັດເວທະ ນາໄວ້ ໒ ປະການ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

ທ່ານຜູ້ຈະເລີນ ອະທຸກຂະມະສຸກຂະເວທະນາ ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນສຸກທີ່ສະ ງົບປະນີດ

ທ່ານພຣະອຸທາຍີ ບໍ່ສາມາດອະທິບາຍໃຫ້ຊ່າງໄມ້ຊື່ປັນຈະກັງຄະຍິນຍອມໄດ້ ຊ່າງໄມ້ຊື່ ປັນຈະກັງຄະກໍບໍ່ສາມາດອະທິບາຍໃຫ້ທ່ານພຣະອຸທາຍີຍິນຍອມໄດ້ ທ່ານພຣະອານົນໄດ້ຍິນການ ສົນທະນາປາໄສນີ້ຂອງທ່ານພຣະອຸທາຍີກັບຊ່າງໄມ້ຊື່ ປັນຈະກັງຄະ

ຄັ້ງນັ້ນ ທ່ານພຣະອານົນ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ນັ່ງຢູ່ ບ່ອນທີ່ສົມຄວນ ໄດ້ຂາບທູນເຖິງການສົນທະນາປາໄສຂອງທ່ານພຣະອຸທາຍີກັບຊ່າງໄມ້ຊື່ ປັນ ຈະກັງຄະ ທັງໝົດນັ້ນແດ່ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ ອານົນ ຊ່າງໄມ້ຊື່ ປັນຈະກັງຄະບໍ່ຄວນຕາມບັນລະ ຍາຍທີ່ມີຢູ່ຂອງອຸທາຍີພິກຂຸ ສ່ວນອຸທາຍີພິກຂຸກໍບໍ່ຄວນຕາມບັນລະຍາຍທີ່ມີຢູ່ຂອງຊ່າງໄມ້ຊື່ປັນ ຈະກັງຄະ

## ປະເພດແຫ່ງເວທະນາ

ອານົນ ເຮົາກ່າວເວທະນາ ໒ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓ ປະ ການ ໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໕ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໖ ປະການ ໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໘ ປະການໄວ້ໂດຍບັນລະຍາຍກໍມີ ກ່າວ ເວທະນາ ໓໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໐໘ ປະການໄວ້ໂດຍບັນລະ ຍາຍກໍມີ

ທໍາອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແນວນີ້ ເມື່ອທໍາອັນເຮົາສະແດງໄວ້ແລ້ວ ໂດຍບັນລະຍາຍແນວນີ້ ຊົນເຫຼົ່າໃດຈັກບໍ່ສໍາຄັນ ບໍ່ຮູ້ ບໍ່ຊົມຊື່ນຕາມຄໍາທີ່ເຮົາກ່າວເຈລະຈາດີ ແລ້ວ ແກ່ກັນແລະກັນ ຊົນເຫຼົ່ານັ້ນ ເພິ່ງຫວັງໄດ້ວ່າ ຈັກໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກ ຄືປາກສຽບແທງກັນຢູ່

ທໍາອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແນວນີ້ ເມື່ອທໍາອັນເຮົາສະແດງແລ້ວໂດຍ ບັນລະຍາຍແນວນີ້ ຊົນເຫຼົ່າໃດຈັກສໍາຄັນ ຮູ້ ຊົມຊື່ນຕາມຄໍາທີ່ເຮົາກ່າວເຈລະຈາດີແລ້ວແກ່ກັນ

ແລະກັນ ຊົນເຫຼົ່ານັ້ນເພິ່ງຫວັງໄດ້ວ່າ ຈັກພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ເປັນຄືນ້ຳນົມກັບນ້ຳ ແນມເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່

## ກາມສຸກ (ສຸກທີ່ເກີດຈາກກາມມະຄຸນ)

ອານົນ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນມີ ໕ ປະການນີ້

ສຸກໂສມະນັດທີ່ເກີດຂຶ້ນຍ້ອນອາໄສກາມມະຄຸນ ໕ ປະການນີ້ ເຮົາຮຽກວ່າ ກາມສຸກ

ຊົນເຫຼົ່າໃດເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ? ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

## ສຸກອື່ນທີ່ດີກວ່າແລະປະນີດກວ່າ

ອານົນ ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະຈາກອະກຸສົນທຳແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ຍ້ອນວິຕົກວິຈານລະງັບໄປ ພິກຂຸໃນທຳວິໄນນີ້ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ຍ້ອນປີຕິຈາງຄາຍອອກ ພິກຂຸໃນທຳວິໄນນີ້ມີອຸເປກຂາ ມີສະຕິສຳປະຊັນຍະສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳນີ້ຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸໃນທຳວິໄນນີ້ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍ ຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍ ຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍ ຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດ?

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍ ຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ຊົນເຫຼົ່າໃດ ເພິ່ງກ່າວແນວນີ້ວ່າ ຊົນທັງຫຼາຍ ຍ່ອມສະເຫວີຍສຸກໂສມະນັດທີ່ສະງົບຢ່າງຍິ່ງນີ້ ເຮົາກໍບໍ່ຄວນຕາມຄຳຂອງຊົນເຫຼົ່ານັ້ນ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຍັງມີສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລ່ວງເນວະສັນຍານາສັນຍາຍະຕະນະຊານ ໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່

ສຸກອື່ນທີ່ດີກວ່າ ແລະປະນີດກວ່າສຸກນີ້ ເປັນແນວນີ້ແລ

ເປັນໄປໄດ້ທີ່ອັນຍະເດຍຣະຖີປະຣິພາຊົກທັງຫຼາຍ ເພິ່ງກ່າວແນວນີ້ວ່າ ເປັນໄປໄດ້ບໍ ເປັນໄປໄດ້ແນວໃດ ທີ່ພຣະສະມະນະໂຄດົມກ່າວສັນຍາເວທະຍິຕະນິໂຣດ ແລະບັນຍັດສັນຍາເວທະຍິຕະນິໂຣດນັ້ນໄວ້ໃນສຸກ

ອານົນ ອັນຍະເດຍຣະຖີປະຣິພາຊົກທັງຫຼາຍຜູ້ກ່າວແນວນີ້ ທ່ານທັງຫຼາຍເພິ່ງຄ້ານວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າ ບໍ່ໄດ້ຊົງໝາຍເຖິງສຸກຂະເວທະນາ ບັນຍັດສັນຍາເວທະຍິຕະນິໂຣດນັ້ນໄວ້ໃນສຸກເລີຍ ບຸກຄົນຍ່ອມປະສົບສຸກໃນຖານະໃດ ໆ ມີສຸກໃນຖານະໃດ ໆ ພຣະຕະຖາຄົດຈຶ່ງຊົງບັນຍັດຖານະນັ້ນ ໆ ໄວ້ໃນສຸກ

**ປັນຈະກັງຄະສູດທີ ໙ ຈົບ**

## ໑໐. ພິກຂຸສູດ

## ວ່າດ້ວຍພິກຂຸ

[໔໙໗] ເຮົາກ່າວເວທະນາ ໒ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໕ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໘ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໐໘ ປະການໄວ້ໂດຍບັນລະຍາຍກໍມີ

ທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແນວນີ້ ເມື່ອທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແນວນີ້ ຊົນເຫຼົ່າໃດຈັກບໍ່ສຳຄັນ ບໍ່ຮູ້ ບໍ່ຊົມຊື່ນຕາມຄຳທີ່ເຮົາກ່າວເຈລະຈາດີແລ້ວແກ່ກັນແລະກັນ ຊົນເຫຼົ່ານັ້ນ ເພິ່ງຫວັງໄດ້ວ່າ ຈັກໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່

ທຳອັນເຮົາສະແດງໄວ້ແລ້ວໂດຍບັນລະຍາຍແນວນີ້ ເມື່ອທຳອັນເຮົາສະແດງໄວ້ແລ້ວ

ໂດຍບັນລະຍາຍແນວນີ້ ຊົນເຫຼົ່າໃດຈັກສຳຄັນຮູ້ ຊົມຊື່ນຕາມຄຳທີ່ເຮົາກ່າວເຈລະຈາດີແລ້ວແກ່ກັນແລະກັນ ຊົນເຫຼົ່ານັ້ນເພິ່ງຫວັງໄດ້ວ່າ ຈັກພ້ອມພຽງກັນ ຊົມຊື່ນກັນ ບໍ່ຜິດຖຽງກັນ ຄືນ້ຳນົມກັບນ້ຳ ແນມເບິ່ງກັນດ້ວຍສາຍຕາທີ່ປ່ຽມດ້ວຍຄວາມຮັກຢູ່

ພິກຂຸທັງຫຼາຍ ກາມມະຄຸນ ๕ ປະການນີ້ ໆລໆ ເປັນໄປໄດ້ທີ່ອັນຍະເດຍຣະຖີປະຣິພາຊົກທັງຫຼາຍ ເພິ່ງກ່າວແນວນີ້ວ່າ ເປັນໄປໄດ້ບໍ ເປັນໄປໄດ້ແນວໃດ ທີ່ພຣະສະມະນະໂຄດົມກ່າວສັນຍາເວທະຍິຕະນິໂຣດ ແລະບັນຍັດສັນຍາເວທະຍິຕະນິໂຣດນັ້ນໄວ້ໃນສຸກ

ພິກຂຸທັງຫຼາຍ ອັນຍະເດຍຣະຖີປະຣິພາຊົກທັງຫຼາຍຜູ້ກ່າວແນວນີ້ ທ່ານທັງຫຼາຍເພິ່ງຄ້ານວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າບໍ່ໄດ້ຊົງໝາຍເຖິງສຸກຂະເວທະນາ ບັນຍັດສັນຍາເວທະຍິຕະນິໂຣດນັ້ນໄວ້ໃນສຸກເລີຍ ບຸກຄົນຍ່ອມປະສົບສຸກໃນຖານະໃດ ໆ ມີສຸກໃນຖານະໃດ ໆ ພຣະຕະຖາຄົດ ຈຶ່ງຊົງບັນຍັດຖານະນັ້ນ ໆ ໄວ້ໃນສຸກ

**ພິກຂຸສູດທີ ๑๐ ຈົບ**

**ຣະໂຫຄະຕະວັກທີ ๘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ៣. ອັດຖະສະຕະປະຣິຍາຍະວັກ

## ໝວດວ່າດ້ວຍບັນລະຍາຍ ໑໐໘ ປະການ

## ໑. ສີວະກະສູດ

### ວ່າດ້ວຍສີວະກະປະຣິພາຊົກ

[໔໖໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ປະຣິພາຊົກຊື່ໂມລິຍະສີວະກະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະໂຄດົມຜູ້ຈະເລີນ ມີສະມະນະພາມພວກໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ບຸຣຸດບຸກຄົນນີ້ສະເຫວີຍສຸກ ທຸກ ຫຼື ອະທຸກຂົມສຸກແນວໃດແນວໜຶ່ງ ສຸກ ທຸກ ຫຼື ອະທຸກຂະມະສຸຂະທັງໝົດນັ້ນ ມີເຫດທີ່ໄດ້ເຮັດໄວ້ໃນປາງກ່ອນ ກໍໃນຂໍ້ນີ້ພຣະໂຄດົມຜູ້ຈະເລີນຕັດໄວ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສີວະກະ ເວທະນາບາງຢ່າງມີປິເປັນສະມຸດຖານເກີດຂຶ້ນໃນກາຍນີ້ກໍມີ ການທີ່ເວທະນາບາງຢ່າງ ເຊິ່ງມີປິເປັນສະມຸດຖານເກີດຂຶ້ນໃນກາຍນີ້ ບຸກຄົນເພິ່ງຮູ້ໄດ້ ເອງນີ້ກໍມີ ການທີ່ເວທະນາບາງຢ່າງເຊິ່ງມີປິເປັນສະມຸດຖານເກີດຂຶ້ນໃນກາຍນີ້ ຊາວໂລກສົມມຸດ ວ່າເປັນຄວາມຈິງກໍມີ ໃນຂໍ້ນັ້ນ ສະມະນະພາມເຫຼົ່າໃດມີວາທະແນວນີ້ ມີທິດຖິແນວນີ້ວ່າ ບຸຣຸດບຸກຄົນນີ້ສະເຫວີຍສຸກ ທຸກ ຫຼື ອະທຸກຂະມະສຸກຂະແນວໃດແນວໜຶ່ງ ສຸກ ທຸກ ຫຼື ອະທຸກຂະມະສຸກຂະທັງໝົດນັ້ນ ມີເຫດທີ່ໄດ້ເຮັດໄວ້ໃນປາງກ່ອນ ຍ່ອມແລ່ນໄປຫາສິ່ງທີ່ຕົນເອງຮູ້ ແລະແລ່ນໄປຫາສິ່ງທີ່ຊາວໂລກສົມມຸດວ່າເປັນຄວາມຈິງ ຍ້ອນແນວນັ້ນ ເຮົາຈຶ່ງກ່າວວ່າ ເປັນຄວາມຜິດຂອງສະມະນະພາມເຫຼົ່ານັ້ນ

ຯລຯ ມີຊີ້ກະເທົ່າເປັນສະມຸດຖານ ຯລຯ ມີລົມເປັນສະມຸດຖານ ຯລຯ ມີປິ ຊີ້ກະເທົ່າແລະລົມລວມກັນເປັນສະມຸດຖານ ຯລຯ ເກີດຈາກການປ່ຽນລະດູ ຯລຯ ເກີດຈາກການບໍລິຫານກາຍບໍ່ສະໝ່ຳສະເໝີ ຯລຯ ເກີດຈາກການຖືກທຳຮ້າຍ ຯລຯ ເວທະນາບາງຢ່າງເກີດຈາກຜົນກຳເກີດຂຶ້ນໃນກາຍນີ້ກໍມີ ການທີ່ເວທະນາບາງຢ່າງເຊິ່ງເກີດຈາກຜົນກຳເກີດຂຶ້ນໃນກາຍນີ້ບຸກຄົນເພິ່ງຮູ້ໄດ້ເອງກໍມີ ການທີ່ເວທະນາບາງຢ່າງ ເຊິ່ງເກີດຈາກຜົນກຳເກີດຂຶ້ນໃນກາຍນີ້ ຊາວໂລກສົມມຸດ

ວ່າເປັນຄວາມຈິງກໍມີ ໃນຂໍ້ນັ້ນ ສະມະນະພາມເຫຼົ່າໃດມີວາທະແນວນີ້ ມີທິດຖິແນວນີ້ວ່າ ບຸຣຸດບຸກຄົນນີ້ສະເຫວີຍສຸກ ທຸກ ຫຼື ອະທຸກຂະມະສຸກຂະແນວໃດແນວໜຶ່ງ

ສຸກ ທຸກ ຫຼື ອະທຸກຂະມະສຸກຂະທັງໝົດນັ້ນ ມີເຫດທີ່ໄດ້ເຮັດໄວ້ໃນປາງກ່ອນ ຍ່ອມແລ່ນໄປຫາສິ່ງທີ່ຕົນເອງຮູ້ ແລະ ແລ່ນໄປຫາສິ່ງທີ່ຊາວໂລກສົມມຸດວ່າເປັນຄວາມຈິງ ຍ້ອນແນວນັ້ນເຮົາຈຶ່ງກ່າວວ່າ ເປັນຄວາມຜິດຂອງສະມະນະພາມເຫຼົ່ານັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ປະຣິພາຊົກຊື່ໂມລິຍະສີວະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

ບີ ໑ ຂີ້ກະເທີ່ ໑ ລົມ ໑ ບີ ຂີ້ກະເທີ່ ແລະລົມ ລວມກັນ ໑
ລະດູ ໑ ການບໍລິຫານກາຍບໍ່ສະໝ່ຳສະເໝີ ໑ ການຖືກທຳຮ້າຍ ໑
ລວມກັບຜົນກຳອີກ ໑ ເປັນ ໘

**ສີວະກະສູດທີ ໑ ຈົບ**

# ໔. ອັດຖະສະຕະສູດ

## ວ່າດ້ວຍເວທະນາ ໑໐໘ ປະການ

[໔໗໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍ ເຊິ່ງມີບັນລະຍາຍເຖິງ ໑໐໘ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພິກຂຸທັງຫຼາຍ ທຳບັນລະຍາຍເຊິ່ງມີບັນລະຍາຍເຖິງ ໑໐໘ ປະການ ເປັນແນວໃດ?

ຄື ເຮົາກ່າວເວທະນາ ໒ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໕ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໘ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໓໖ ປະການໄວ້ໂດຍບັນລະຍາຍກໍມີ ກ່າວເວທະນາ ໑໐໘ ປະການໄວ້ໂດຍບັນລະຍາຍກໍມີ

ເວທະນາ ໒ ປະການ ມີອັນໃດແດ່ ຄື

໑. ເວທະນາທາງກາຍ ໒. ເວທະນາທາງໃຈ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໒ ປະການ

ເວທະນາ ໓ ປະການ ມີອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໓ ປະການ

ເວທະນາ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ (ອິນຊີຄືສຸກຂະເວທະນາ)
໒. ທຸກຂິນຊີ (ອິນຊີຄືທຸກຂະເວທະນາ)
໓. ໂສມະນັດສິນຊີ (ອິນຊີຄືໂສມະນັດສເວທະນາ)
໔. ໂທມະນັດສິນຊີ (ອິນຊີຄືໂທມະນັດສະເວທະນາ)
໕. ອຸເປກຂິນຊີ (ອິນຊີຄືອຸເປກຂາເວທະນາ)

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໕ ປະການ

ເວທະນາ ໖ ປະການ ອັນໃດແດ່ ຄື

໑. ເວທະນາທີ່ເກີດຈາກຈັກຂຸສຳຜັດ
ฯลฯ
໖. ເວທະນາທີ່ເກີດຈາກມະໂນສຳຜັດ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໖ ປະການ

ເວທະນາ ໑໘ ປະການ ອັນໃດແດ່ ຄື

໑. ເວທະນາທີ່ເກີດຮ່ວມກັບໂສມະນັດ ໖ ປະການ
໒. ເວທະນາທີ່ເກີດຮ່ວມກັບໂທມະນັດ ໖ ປະການ
໓. ເວທະນາທີ່ເກີດຮ່ວມກັບອຸເປກຂາ ໖ ປະການ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໑໘ ປະການ

ເວທະນາ ໓໖ ປະການ ອັນໃດແດ່ ຄື

໑. ເຄຫະສິຕະໂສມະນັດ (ໂສມະນັດອີງເຮືອນ) ໖ ປະການ

໔. ເນກຂຳມະສິຕະໂສມະນັດ (ໂສມະນັດອີງເນກຂຳມະ) ໖ ປະການ
໓. ເຄຫະສິຕະໂທມະນັດ (ໂທມະນັດອີງເຮືອນ) ໖ ປະການ
໔. ເນກຂຳມະສິຕະໂທມະນັດ (ໂທມະນັດອີງເນກຂຳມະ) ໖ ປະການ
໕. ເຄຫະສິຕະອຸເປກຂາ (ອຸເປກຂາອີງເຮືອນ) ໖ ປະການ
໖. ເນກຂຳມະສິຕະອຸເປກຂາ (ອຸເປກຂາອີງເນກຂຳມະ) ໖ ປະການ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໓໖ ປະການ

ເວທະນາ ໑໐໘ ປະການ ອັນໃດແດ່ ຄື

໑. ເວທະນາທີ່ເປັນອະດີດ ໓໖ ປະການ
໔. ເວທະນາທີ່ເປັນອະນາຄົດ ໓໖ ປະການ
໓. ເວທະນາທີ່ເປັນປັດຈຸບັນ ໓໖ ປະການ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ ໑໐໘ ປະການ

ພິກຂຸທັງຫຼາຍ ທຳບັນລະຍາຍເຊິ່ງມີບັນລະຍາຍເຖິງ ໑໐໘ ປະການ ເປັນແນວນີ້ແລ

**ອັດຖະສະຕະສູດທີ ໔ ຈົບ**

# ໓. ອັນຍະຕະຣະພິກຂຸສູດ

## ວ່າດ້ວຍພິກຂຸອົງໜຶ່ງ

[໔໗໑] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໗ລ໗ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເວທະນາມີທີ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ?

ປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາເປັນແນວໃດ? ຄວາມດັບແຫ່ງເວທະນາເປັນແນວໃດ?

ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາເປັນແນວໃດ? ອັນໃດ ເປັນຄຸນແຫ່ງເວທະນາ ອັນໃດ ເປັນໂທດແຫ່ງເວທະນາ ອັນໃດ ເປັນເຄື່ອງສະບັດອອກຈາກເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເວທະນາມີ ໓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດເວທະນາຈຶ່ງເກີດ ຕັນຫາເປັນປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາ

ຍ້ອນຜັດສະດັບເວທະນາຈຶ່ງດັບ ອະຣິຍະມັກມີອົງ ๘ ນີ້ແລ ເປັນປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຄື

໑. ສຳມາທິດຖິ ฯລฯ ๘. ສຳມາສະມາທິ

ສະພາບທີ່ສຸກໂສມະນັດອາໄສເວທະນາເກີດຂຶ້ນ ນີ້ເປັນຄຸນແຫ່ງເວທະນາ

ສະພາບທີ່ເວທະນາບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ນີ້ເປັນໂທດແຫ່ງເວທະນາ

ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

**ອັນຍະຕະຣະພິກຂຸສູດທີ ๓ ຈົບ**

# ๔. ປຸບພະສູດ

## ວ່າດ້ວຍພຣະດຳຣິກ່ອນຕັດສະຣູ້

[໔๓໔] ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດ ດັ່ງນີ້ວ່າ ເວທະນາມີທີ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາເປັນແນວໃດ? ຄວາມດັບແຫ່ງເວທະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາເປັນແນວໃດ? ອັນໃດ ເປັນຄຸນແຫ່ງເວທະນາ ອັນໃດ ເປັນໂທດແຫ່ງເວທະນາ ອັນໃດ ເປັນເຄື່ອງສະບັດອອກຈາກເວທະນາ

ເຮົານັ້ນ ໄດ້ຄິດຕໍ່ໄປວ່າ ເວທະນາມີ ๓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ

໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດເວທະນາຈຶ່ງເກີດ ຕັນຫາເປັນປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາ ຯລຯ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

**ປຸບພະສູດທີ ໔ ຈົບ**

# ໕. ຍານະສູດ

## ວ່າດ້ວຍຍານ

[໔໗໑] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ເວທະນາ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ຄວາມເກີດແຫ່ງເວທະນາ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ຄວາມດັບແຫ່ງເວທະນາ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ

ພິກຂຸທັງຫຼາຍ ຯລຯ ໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ຄຸນແຫ່ງເວທະນາ

ພິກຂຸທັງຫຼາຍ ຯລຯ ໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ໂທດແຫ່ງເວທະນາ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ເຄື່ອງສະບັດອອກຈາກເວທະນາ

**ຍານະສູດທີ ໕ ຈົບ**

# ໖. ສຳພະຫຸລະພິກຂຸສູດ

## ວ່າດ້ວຍພິກຂຸຫຼາຍອົງ

[໔໗໔] ຄັ້ງນັ້ນ ພິກຂຸຫຼາຍ ອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເວທະນາມີທີ່ໃດ ຄວາມເກີດແຫ່ງເວທະນາເປັນແນວໃດ?

ປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາເປັນແນວໃດ? ຯລຯ ອັນໃດ ເປັນຄຸນແຫ່ງເວທະນາ ອັນໃດ ເປັນໂທດແຫ່ງເວທະນາ ອັນໃດ ເປັນເຄື່ອງສະບັດອອກຈາກເວທະນາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ເວທະນາມີ ໓ ປະການນີ້ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເຫຼົ່ານີ້ເຮົາຮຽກວ່າ ເວທະນາ

ຍ້ອນຜັດສະເກີດເວທະນາຈຶ່ງເກີດ ຕັນຫາເປັນປະຕິປະທາທີ່ໃຫ້ເຖິງຄວາມເກີດແຫ່ງເວທະນາ ຍ້ອນຜັດສະດັບເວທະນາຈຶ່ງດັບ ຯລຯ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນເວທະນາ ນີ້ເປັນເຄື່ອງສະບັດອອກຈາກເວທະນາ

**ສຳພະຫຸລະພິກຂຸສູດທີ ໖ ຈົບ**

# ໗. ປະຖົມສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໔໗໕] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດ ເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກເວທະນາ ໓ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດຂອງຄວາມເປັນສະມະນະ ຫຼື ປະໂຫຍດຂອງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກເວທະນາ ໓ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະນະໃນໝູ່ສະມະນະ ແລະ ຈັດວ່າ ເປັນພາມໃນໝູ່ພາມທັງທ່ານເຫຼົ່ານັ້ນ ກໍເຮັດໃຫ້ແຈ້ງເຊິ່ງປະໂຫຍດຂອງຄວາມເປັນສະມະນະ ແລະ ປະໂຫຍດຂອງຄວາມເປັນ ພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ປະຖົມສະມະນະພາມມະນະສູດທີ ໑ ຈົບ**

# ໒. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໔

[໔໑໖] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ
໔. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ພິກຂຸທັງຫຼາຍ ສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກເວທະນາ ໓ ປະການນີ້ຕາມຄວາມເປັນຈິງ ຯລຯ ເຮັດໃຫ້ແຈ້ງ ຯລຯ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ ໒ ຈົບ**

## ໙. ຕະຕິຍະສະມະນະພາມມະນະສູດ

### ວ່າດ້ວຍສະມະນະພາມ ສູດທີ ໓

[໘໗໗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງເວທະນາ ຄວາມເກີດແຫ່ງເວທະນາ ຄວາມດັບແຫ່ງເວທະນາ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ ຯລຯ ຮູ້ແຈ້ງເວທະນາ ຯລຯ ເຮັດໃຫ້ແຈ້ງ ຯລຯ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ຕະຕິຍະສະມະນະພາມມະນະສູດທີ ໙ ຈົບ**

## ໑໐. ສຸດທິກະສູດ

### ວ່າດ້ວຍເວທະນາລ້ວນ ໆ

[໘໗໘] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ
໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເວທະນາ ໓ ປະການນີ້ແລ

**ສຸດທິກະສູດທີ ໑໐ ຈົບ**

## ໑໑. ນິຣາມິດສູດ

### ວ່າດ້ວຍປີຕິແລະສຸກທີ່ມີອາມິດແລະບໍ່ມີອາມິດ

[໘໗໙] ພິກຂຸທັງຫຼາຍ ປີຕິມີອາມິດກໍມີ ປີຕິບໍ່ມີອາມິດກໍມີ ປີຕິບໍ່ມີອາມິດຍິ່ງກວ່າປີຕິບໍ່ມີອາມິດກໍມີ

ສຸກມີອາມິດກໍມີ ສຸກບໍ່ມີອາມິດກໍມີ ສຸກບໍ່ມີອາມິດ ຍິ່ງກວ່າສຸກບໍ່ມີອາມິດກໍມີ

ອຸເປກຂາມີອາມິດກໍມີ ອຸເປກຂາບໍ່ມີອາມິດກໍມີ ອຸເປກຂາບໍ່ມີອາມິດ ຍິ່ງກວ່າອຸເປກຂາ ບໍ່ມີອາມິດກໍມີ

ວິໂມກມີອາມິດກໍມີ ວິໂມກບໍ່ມີອາມິດກໍມີ ວິໂມກບໍ່ມີອາມິດຍິ່ງກວ່າວິໂມກບໍ່ມີອາມິດກໍມີ

ປີຕິມີອາມິດ ເປັນແນວໃດ?

ຄື ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ໄດ້ແກ່

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກໍາໜັດ

ฯລฯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກໍາໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ປີຕິທີ່ອາໄສກາມມະຄຸນ ໕ ປະການນີ້ເກີດຂຶ້ນ ນີ້ເຮົາຮຽກວ່າ ປີຕິມີອາມິດ

ປີຕິບໍ່ມີອາມິດ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ ສະຫງັດຈາກກາມ ແລະ ອະກຸສົນທໍາທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານລະງັບໄປ ທ່ານບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະ ສຸກອັນເກີດຈາກສະມາທິຢູ່ ນີ້ເຮົາຮຽກວ່າ ປີຕິບໍ່ມີອາມິດ

ປີຕິບໍ່ມີອາມິດ ຍິ່ງກວ່າປີຕິບໍ່ມີອາມິດ ເປັນແນວໃດ?

ຄື ປີຕິທີ່ເກີດຂຶ້ນແກ່ພຣະຂີນາສົບ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກຣາຄະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂທສະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂມຫະ ນີ້ເຮົາຮຽກວ່າ ປີຕິບໍ່ມີອາມິດຍິ່ງກວ່າປີຕິບໍ່ມີອາມິດ

ສຸກມີອາມິດ ເປັນແນວໃດ?

ຄື ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ມີອັນໃດແດ່? ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ຯລຯ

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ສຸກໂສມະນັດທີ່ອາໄສກາມມະຄຸນ ໕ ປະການນີ້ເກີດຂຶ້ນ ນີ້ເຮົາຮຽກວ່າ ສຸກມີອາມິດ

ສຸກບໍ່ມີອາມິດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານລະງັບໄປ ທ່ານບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ທ່ານມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ມີອຸເປກຂາ ມີສະຕິຢູ່ເປັນສຸກ ນີ້ເຮົາຮຽກວ່າ ສຸກບໍ່ມີອາມິດ

ສຸກບໍ່ມີອາມິດ ຍິ່ງກວ່າສຸກບໍ່ມີອາມິດ ເປັນແນວໃດ?

ຄື ສຸກໂສມະນັດທີ່ເກີດຂຶ້ນ ແກ່ພຣະຂີນາສົບຜູ້ພິຈາລະນາຈິດທີ່ລຸດພົ້ນຈາກຣາຄະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂທສະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂມຫະ ນີ້ເຮົາຮຽກວ່າ ສຸກບໍ່ມີອາມິດຍິ່ງກວ່າສຸກບໍ່ມີອາມິດ

ອຸເປກຂາມີອາມິດ ເປັນແນວໃດ?

ຄື ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່? ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້

ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

໗໘໗

໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້ ອຸເປກຂາທີ່ອາໄສກາມມະຄຸນ ໕ ປະການ ນີ້ ເກີດຂຶ້ນ ນີ້ເຮົາຮຽກວ່າ ອຸເປກຂາມີອາມິດ

ອຸເປກຂາບໍ່ມີອາມິດ ເປັນແນວໃດ?

ຄື ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸໃນທຳວິໄນນີ້ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່ ນີ້ເຮົາຮຽກວ່າອຸເປກຂາບໍ່ມີອາມິດ

ອຸເປກຂາບໍ່ມີອາມິດ ຍິ່ງກວ່າອຸເປກຂາບໍ່ມີອາມິດ ເປັນແນວໃດ?

ຄື ອຸເປກຂາທີ່ເກີດຂຶ້ນແກ່ພຣະຂີນາສົບຜູ້ພິຈາລະນາຈິດທີ່ລຸດພົ້ນຈາກຣາຄະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂທສະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂມຫະ ນີ້ເຮົາຮຽກວ່າອຸເປກຂາບໍ່ມີອາມິດຍິ່ງກວ່າ ອຸເປກຂາບໍ່ມີອາມິດ

ວິໂມກມີອາມິດ ເປັນແນວໃດ?
ຄື ວິໂມກທີ່ປະກອບດ້ວຍຮູບ ຊື່ວ່າ ວິໂມກມີອາມິດ

ວິໂມກບໍ່ມີອາມິດ ເປັນແນວໃດ?
ຄື ວິໂມກທີ່ບໍ່ປະກອບດ້ວຍຮູບ ຊື່ວ່າ ວິໂມກບໍ່ມີອາມິດ

ພິກຂຸທັງຫຼາຍ ວິໂມກບໍ່ມີອາມິດຍິ່ງກວ່າວິໂມກບໍ່ມີອາມິດ ເປັນແນວໃດ?

ຄື ວິໂມກທີ່ເກີດຂຶ້ນແກ່ພຣະຂີນາສົບ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກຣາຄະ ຜູ້ພິ ຈາລະນາຈິດທີ່ລຸດພົ້ນຈາກໂທສະ ຜູ້ພິຈາລະນາຈິດທີ່ລຸດພົ້ນຈາກໂມຫະ ນີ້ເຮົາຮຽກວ່າ ວິໂມກບໍ່ມີອາມິດຍິ່ງກວ່າວິໂມກບໍ່ມີອາມິດ

**ນິຣາມິດສູດທີ ໑໑ ຈົບ**

**ອັດຖະສະຕະປະຣິຍາຍະວັກທີ ໓ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ເວທະນາສັງຍຸດ ຈົບບໍລິບູນ**

# ໓. ມາຕຸຄາມສັງຍຸດ

## ໑. ປະຖົມເປີຍຍາລະວັກ

### ໝວດວ່າດ້ວຍເປີຍຍາລະ ໝວດທີ ໑

### ໑. ມາຕຸຄາມະສູດ

### ວ່າດ້ວຍມາຕຸຄາມທີ່ບໍ່ໜ້າພໍໃຈແລະໜ້າພໍໃຈຂອງບຸຣຸດ

[໔໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ມາຕຸຄາມ (ສະຕີ) ປະກອບດ້ວຍອົງ ໕ ຍ່ອມບໍ່ໜ້າພໍໃຈຢ່າງຍິ່ງສຳລັບບຸຣຸດ

ອົງ ໕ ອັນໃດແດ່ ຄື

໑. ຮູບບໍ່ງາມ
໒. ບໍ່ມີສິນ
໓. ບໍ່ມີໂພຄະສົມບັດ
໔. ຂີ້ຄ້ານ
໕. ໃຫ້ບຸດແກ່ເຂົາບໍ່ໄດ້

ມາຕຸຄາມປະກອບດ້ວຍອົງ ໕ ນີ້ ຍ່ອມບໍ່ໜ້າພໍໃຈຢ່າງຍິ່ງສຳລັບບຸຣຸດ ມາຕຸຄາມປະກອບດ້ວຍອົງ ໕ ຍ່ອມໜ້າພໍໃຈຢ່າງຍິ່ງສຳລັບບຸຣຸດ

ອົງ ໕ ອັນໃດແດ່ ຄື

໑. ຮູບງາມ
໒. ມີສິນ
໓. ມີໂພຄະສົມບັດ
໔. ດຸໝັ່ນ ບໍ່ຂີ້ຄ້ານ
໕. ໃຫ້ບຸດແກ່ເຂົາໄດ້

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍອົງ ໕ ນີ້ ຍ່ອມໜ້າພໍໃຈຢ່າງຍິ່ງສຳລັບບຸຣຸດ

**ມາຕຸຄາມະສູດທີ ໑ ຈົບ**

# ໘. ປຸຣິສະສູດ

## ວ່າດ້ວຍບຸຣຸດທີ່ບໍ່ໜ້າພໍໃຈແລະໜ້າພໍໃຈຂອງມາຕຸຄາມ

[໔໗໑] ພິກຂຸທັງຫຼາຍ ບຸຣຸດປະກອບດ້ວຍອົງ ໕ ຍ່ອມບໍ່ໜ້າພໍໃຈຢ່າງຍິ່ງ ສຳລັບມາຕຸຄາມອົງ ໕ ອັນໃດແດ່ ຄື

໑. ຮູບບໍ່ງາມ
໒. ບໍ່ມີສິນ
໕. ໃຫ້ບຸດແກ່ນາງບໍ່ໄດ້

໓. ບໍ່ມີໂພຄະສົມບັດ
໔. ຂີ້ຄ້ານ

ບຸຣຸດຜູ້ປະກອບດ້ວຍອົງ ໕ ນີ້ ຍ່ອມບໍ່ໜ້າພໍໃຈຢ່າງຍິ່ງສຳລັບມາຕຸຄາມ

ບຸຣຸດປະກອບດ້ວຍອົງ ໕ ຍ່ອມໜ້າພໍໃຈຢ່າງຍິ່ງສຳລັບມາຕຸຄາມ

ອົງ ໕ ອັນໃດແດ່ ຄື

໑. ຮູບງາມ
໒. ມີສິນ
໕. ໃຫ້ບຸດແກ່ນາງໄດ້

໓. ມີໂພຄະສົມບັດ
໔. ດຸໝັ່ນ ບໍ່ຂີ້ຄ້ານ

ພິກຂຸທັງຫຼາຍ ບຸຣຸດປະກອບດ້ວຍອົງ ໕ ນີ້ຍ່ອມໜ້າພໍໃຈຢ່າງຍິ່ງສຳລັບມາຕຸຄາມ

**ປຸຣິສະສູດທີ ໘ ຈົບ**

# ໙. ອາເວນິກະທຸກຂະສູດ

## ວ່າດ້ວຍຄວາມທຸກສ່ວນໂຕຂອງມາຕຸຄາມ

[໔໗໘] ພິກຂຸທັງຫຼາຍ ຄວາມທຸກສ່ວນໂຕຂອງມາຕຸຄາມ ໕ ປະການນີ້ ທີ່ມາຕຸຄາມຈະໄດ້ຮັບ ຍົກເວັ້ນບຸຣຸດ

ຄວາມທຸກສ່ວນໂຕ ໕ ປະການ ອັນໃດແດ່ ຄື

໑. ມາຕຸຄາມໃນໂລກນີ້ ເຖິງແມ່ນວ່າຍັງເປັນໄວລຸ້ນ ແຕ່ຕ້ອງໄປສູ່ຕະກູນສາມີທ່າງ

ຈາກໝູ່ຍາດ ນີ້ເປັນຄວາມທຸກສ່ວນໂຕຂອງມາຕຸຄາມ ຂໍ້ທີ ໑ ທີ່ມາຕຸຄາມຈະ ຕ້ອງໄດ້ຮັບ ຍົກເວັ້ນ ບຸຣຸດ

໒. ມາຕຸຄາມ ຕ້ອງມີຣະດູ ນີ້ເປັນຄວາມທຸກສ່ວນໂຕຂອງມາຕຸຄາມຂໍ້ທີ ໒ ທີ່ມາ ຕຸຄາມຈະໄດ້ຮັບ ຍົກເວັ້ນບຸຣຸດ

໓. ມາຕຸ ຄາມຕ້ອງຖືພາ ນີ້ເປັນຄວາມທຸກສ່ວນໂຕຂອງມາຕຸຄາມ ຂໍ້ທີ ໓ ທີ່ມາ ຕຸຄາມຈະໄດ້ຮັບ ຍົກເວັ້ນບຸຣຸດ

໔. ມາຕຸ ຄາມຕ້ອງເກີດລູກ ນີ້ເປັນຄວາມທຸກສ່ວນໂຕຂອງມາຕຸຄາມ ຂໍ້ທີ ໔ ທີ່ ມາຕຸຄາມຈະໄດ້ຮັບ ຍົກເວັ້ນບຸຣຸດ

໕. ມາຕຸຄາມ ຕ້ອງປົນເປີບຸຣຸດ ນີ້ເປັນຄວາມທຸກສ່ວນໂຕຂອງມາຕຸຄາມ ຂໍ້ທີ ໕ ທີ່ມາຕຸຄາມຈະໄດ້ຮັບ ຍົກເວັ້ນບຸຣຸດ

ພິກຂຸທັງຫຼາຍ ຄວາມທຸກສ່ວນໂຕຂອງມາຕຸຄາມ ໕ ປະການນີ້ ທີ່ມາຕຸຄາມຈະຕ້ອງໄດ້ ຮັບ ຍົກເວັ້ນບຸຣຸດ

**ອາເວນິກະທຸກຂະສູດທີ ໓ ຈົບ**

# ໔. ຕີຫິທຳເມຫິສູດ

## ວ່າດ້ວຍທຳ ໓ ປະການ

[໔໗໓] ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໓ ປະການ ສ່ວນຫຼາຍຫຼັງຈາກຕາຍ ແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໓ ປະການ ອັນໃດແດ່ ຄື ມາຕຸຄາມໃນໂລກນີ້

໑. ໃນເວລາເຊົ້າ ຖືກມົນທິນຄືຄວາມຂີ້ຖີ່ຕຸ້ມສຸມຈິດຢູ່ຄອງເຮືອນ
໒. ໃນເວລາທ່ຽງ ຖືກຄວາມຣິດສະຫຍາຕຸ້ມສຸມຈິດຢູ່ຄອງເຮືອນ
໓. ໃນເວລາຄ່ຳ ຖືກກາມຣາຄະຕຸ້ມສຸມຈິດຢູ່ຄອງເຮືອນ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໓ ປະການນີ້ແລ ສ່ວນຫຼາຍຫຼັງຈາກຕາຍ ແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

**ຕີຫິທຳເມຫິສູດທີ ໔ ຈົບ**

# ໕. ໂກທະນະສູດ

## ວ່າດ້ວຍມາຕຸຄາມຜູ້ມັກໂກດ

[໘໗໔] ຄັ້ງນັ້ນ ທ່ານພຣະອະນຸຣຸດທະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຂ້າພຣະອົງເຫັນແຕ່ມາຕຸຄາມສ່ວນຫຼາຍຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ຂ້າແດ່ ພຣະອົງຜູ້ຈະເລີນ ມາຕຸຄາມປະກອບດ້ວຍທຳທີ່ໃດນໍ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີຫິຣິ (ຄວາມລະອາຍບາບ)
໓. ບໍ່ມີໂອດຕັບປະ (ຄວາມຢ້ານບາບ)
໔. ມັກໂກດ
໕. ມີປັນຍາຊາມ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ໂກທະນະສູດທີ ໕ ຈົບ**

# ໖. ອຸປະນາຮີສູດ

## ວ່າດ້ວຍມາຕຸຄາມຜູ້ມັກຜູກໂກດ

[໘໗໕] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໕. ມີປັນຍາຊາມ
໔. ບໍ່ມີຫິຣິ
໔. ມັກຜູກໂກດ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ອຸປະນາຮີສູດທີ ໒ ຈົບ**

# ໗. ອິດສຸກີສູດ

## ວ່າດ້ວຍມາຕຸຄາມຜູ້ມັກຣິດສະຫຍາ

[໔໗໖] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໕. ມີປັນຍາຊາມ
໔. ບໍ່ມີຫິຣິ
໔. ມັກຣິດສະຫຍາ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ອິດສຸກີສູດທີ ໗ ຈົບ**

# ໘. ມັດສະຣີສູດ

## ວ່າດ້ວຍມາຕຸຄາມຜູ້ມັກຂີ້ຖີ່

[໔໘໗] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍ ແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໓. ມີປັນຍາຊາມ
໔. ບໍ່ມີຫິຣິ
໕. ມັກຂີ້ຖີ່

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຯລຯ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

**ມັດສະຣິສູດທີ ໘ ຈົບ**

# ໙. ອະຕິຈາຣີສູດ

## ວ່າດ້ວຍມາຕຸຄາມຜູ້ມັກປະພຶດນອກໃຈ

[໔໘໘] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໓. ມີປັນຍາຊາມ
໔. ບໍ່ມີຫິຣິ
໕. ມັກປະພຶດນອກໃຈ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຯລຯ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

**ອະຕິຈາຣີສູດທີ ໙ ຈົບ**

# ໑໐. ທຸດສີລະສູດ

## ວ່າດ້ວຍມາຕຸຄາມຜູ້ທຸສີນ

[໔໘໙] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໓. ມີປັນຍາຊາມ
໔. ບໍ່ມີຫິຣິ
໕. ທຸສີນ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫລັງ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

**ທຸດສີລະສູດທີ ໑໐ ຈົບ**

# ໑໑. ອັບປັດສຸຕະສູດ

## ວ່າດ້ວຍມາຕຸຄາມຜູ້ມີການຟັງໜ້ອຍ

[໔໙໐] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
໓. ມີປັນຍາຊາມ
໔. ບໍ່ມີຫິຣິ
໕. ມີການຟັງໜ້ອຍ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫລັງ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

**ອັບປັດສຸຕະສູດທີ ໑໑ ຈົບ**

# ໑໒. ກຸສີຕະສູດ

## ວ່າດ້ວຍມາຕຸຄາມຜູ້ຂີ້ຄ້ານ

[໔໙໑] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ๕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
๕. ມີປັນຍາຊາມ
๓. ບໍ່ມີຫິຣິ
๔. ຂີ້ຄ້ານ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ๕ ປະການນີ້ແລ ຯລຯ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ກຸສິຕະສູດທີ ໑๓ ຈົບ**

## ໑๔. ມຸດຖັດສະຕິສູດ

### ວ່າດ້ວຍມາຕຸຄາມຜູ້ມີສະຕິຫຼົງລືມ

[๔๒๘] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ๕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ๕ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ
໒. ບໍ່ມີໂອດຕັບປະ
๕. ມີປັນຍາຊາມ
๓. ບໍ່ມີຫິຣິ
๔. ມີສະຕິຫຼົງລືມ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ๕ ປະການນີ້ແລ ຯລຯ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ມຸດຖັດສະຕິສູດທີ ໑๔ ຈົບ**

## ໑๕. ປັນຈະເວຣະສູດ

### ວ່າດ້ວຍມາຕຸຄາມຜູ້ປະກອບດ້ວຍເວນ ๕ ປະການ

[๔๒๙] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ๕ ປະການ ຫຼັງຈາກຕາຍແລ້ວຈະໄປ ເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໕ ປະການ ອັນໃດແດ່ ຄື

໑. ຂ້າສັດ ໒. ລັກຊັບ

໓. ປະພຶດຜິດໃນກາມ ໔. ເວົ້າຕົວະ

໕. ເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

**ປັນຈະເວຣະສູດທີ ໑໔ ຈົບ**

**ປະຖົມເປີຍຍາລະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ๘. ທຸຕິຍະເປີຍຍາລະວັກ

## ໝວດວ່າດ້ວຍເປີຍຍາລະ ໝວດທີ ໘

## ໑. ອັກໂກທະນະສູດ

### ວ່າດ້ວຍມາຕຸຄາມຜູ້ບໍ່ໂກດ

[໘໙໔] ຄັ້ງນັ້ນ ທ່ານພຣະອະນຸຣຸດທະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໆລໆ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຂ້າພຣະອົງເຫັນແຕ່ມາຕຸຄາມສ່ວນຫຼາຍຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຂ້າແດ່ ພຣະອົງຜູ້ຈະເລີນ ມາຕຸຄາມ ປະກອບດ້ວຍທຳທໍ່ໃດນໍ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໕ ປະການ ອັນໃດແດ່ ຄື

໑. ມີສັດທາ
໒. ມີໂອດຕັບປະ
໓. ບໍ່ໂກດ
໔. ມີຫິຣິ
໕. ມີປັນຍາ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

**ອັກໂກທະນະສູດທີ ໑ ຈົບ**

## ໒. ອະນຸປະນາຮີສູດ

### ວ່າດ້ວຍມາຕຸຄາມຜູ້ບໍ່ຜູກໂກດ

[໘໙໕] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໕ ປະການ ອັນໃດແດ່ ຄື

໑. ມີສັດທາ
໒. ມີໂອດຕັບປະ
໓. ມີຫິຣິ
໔. ບໍ່ຜູກໂກດ
໕. ມີປັນຍາ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

**ອະນຸປະນາຮີສູດທີ ໔ ຈົບ**

# ໒. ອະນິດສຸກີສູດ

## ວ່າດ້ວຍມາຕຸຄາມຜູ້ບໍ່ຣິດສະຫຍາ

[໔໙໒] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໕ ປະການ ອັນໃດແດ່ ຄື

໑. ມີສັດທາ
໒. ມີໂອດຕັບປະ
໓. ມີຫິຣິ
໔. ບໍ່ຣິດສະຫຍາ
໕. ມີປັນຍາ ຯລຯ

**ອະນິດສຸກີສູດທີ ໒ ຈົບ**

# ໔. ອະມັດສະຣີສູດ

## ວ່າດ້ວຍມາຕຸຄາມຜູ້ບໍ່ຂີ້ຖີ່

[໔໙໓] ຯລຯ

໔. ບໍ່ຂີ້ຖີ່
໕. ມີປັນຍາ

ຯລຯ

**ອະມັດສະຣີສູດທີ ໔ ຈົບ**

## ໕. ອະນະຕິຈາຣີສູດ

### ວ່າດ້ວຍມາຕຸຄາມຜູ້ບໍ່ປະພຶດນອກໃຈ

[໔໙໗] ຯລຯ

໔. ບໍ່ປະພຶດນອກໃຈ ໕. ມີປັນຍາ

ຯລຯ

**ອະນະຕິຈາຣີສູດທີ ໕ ຈົບ**

## ໖. ສຸສີລະສູດ

### ວ່າດ້ວຍມາຕຸຄາມຜູ້ມີສີນດີ

[໔໙໙] ຯລຯ

໔. ມີສີນ ໕. ມີປັນຍາ

ຯລຯ

**ສຸສີລະສູດທີ ໖ ຈົບ**

## ໗. ພະຫຸດສຸຕະສູດ

### ວ່າດ້ວຍມາຕຸຄາມຜູ້ມີການຟັງຫຼາຍ

[໓໐໐] ຯລຯ

໔. ມີການຟັງຫຼາຍ ໕. ມີປັນຍາ

ຯລຯ໓

**ພະຫຸດສຸຕະສູດທີ ໗ ຈົບ**

## ໗. ອາຣັດທະວິຣິຍະສູດ

### ວ່າດ້ວຍມາຕຸຄາມຜູ້ຜາຣົບຄວາມພຽນ

[໓໐໑] ຯລຯ

໔. ຜາຣົບຄວາມພຽນ ໕. ມີປັນຍາ

ຯລຯ

**ອາຣັດທະວິຣິຍະສູດທີ ໗ ຈົບ**

## ໘. ອຸປັດຖິຕັດສະຕິສູດ

### ວ່າດ້ວຍມາຕຸຄາມຜູ້ມີສະຕິຕັ້ງໝັ້ນ

[໓໐໘] ຯລຯ

໔. ມີສະຕິຕັ້ງໝັ້ນ ໕. ມີປັນຍາ

ຯລຯ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

**ອຸປັດຖິຕັດສະຕິສູດທີ ໘ ຈົບ**

ທັງ ໗ ສູດນີ້ກ່າວໄວ້ຫຍໍ້ ໆ

## ໑໐. ປັນຈະສີລະສູດ

### ວ່າດ້ວຍມາຕຸຄາມຜູ້ມີສີນ ໕

[໓໐໓] ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໕ ປະການ ອັນໃດແດ່ ຄື

໑. ເວັ້ນຂາດຈາກການຂ້າສັດ
໒. ເວັ້ນຂາດຈາກການລັກຊັບ
໓. ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເວັ້ນຂາດຈາກການເວົ້າຕົວະ
໕. ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງ ຄວາມຜະໝາດ

ອະນຸຣຸດທະ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

**ປັນຈະສີລະສູດທີ ໑໐ ຈົບ**

**ທຸຕິຍະເປີຍຍາລະວັກ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ພະລະວັກ

## ໝວດວ່າດ້ວຍກຳລັງ

## ໑. ວິສາຣະທະສູດ

### ວ່າດ້ວຍມາຕຸຄາມຜູ້ແກ່ກ້າ

[໓໐໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້ ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຍາດ
໓. ກຳລັງສິນ
໔. ກຳລັງຊັບ
໕. ກຳລັງບຸດ

ກຳລັງຂອງມາຕຸຄາມ ໕ ປະການນີ້

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍກຳລັງ ໕ ປະການນີ້ແລ ຍ່ອມແກ່ກ້າຢູ່ຄອງເຮືອນ

**ວິສາຣະທະສູດທີ ໑ ຈົບ**

## ໒. ປະໄສຫະສູດ

### ວ່າດ້ວຍມາຕຸຄາມທີ່ຄອບງຳສາມີ

[໓໐໕] ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້

ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຍາດ
໓. ກຳລັງສິນ
໔. ກຳລັງຊັບ
໕. ກຳລັງບຸດ

ກຳລັງຂອງມາຕຸຄາມ ໕ ປະການນີ້

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍກຳລັງ ໕ ປະການນີ້ແລ ຍ່ອມຄອບງຳສາມີຢູ່ຄອງເຮືອນ

**ປະໄສຫະສູດທີ ໔ ຈົບ**

# ໓. ອະພິພຸຍຍະສູດ

## ວ່າດ້ວຍມາຕຸຄາມທີ່ຄອງໃຈສາມີ

[໓໐໖] ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້

ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຍາດ
໕. ກຳລັງສີນ
໔. ກຳລັງຊັບ
໔. ກຳລັງບຸດ

ກຳລັງຂອງມາຕຸຄາມ ໕ ປະການນີ້

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍກຳລັງ ໕ ປະການນີ້ແລ ຍ່ອມຄອງໃຈສາມີ

**ອະພິພຸຍຍະສູດທີ ໓ ຈົບ**

# ໔. ເອກະສູດ

## ວ່າດ້ວຍກຳລັງທີ່ເປັນເອກ

[໓໐໗] ພິກຂຸທັງຫຼາຍ ບຸຣຸດປະກອບດ້ວຍກຳລັງທີ່ເປັນເອກ ຍ່ອມຄອງໃຈມາຕຸຄາມໄດ້

ກຳລັງທີ່ເປັນເອກ ຄື ອັນໃດ?

ຄື ກຳລັງຄືຄວາມເປັນໃຫຍ່

ມາຕຸຄາມຖືກກຳລັງຄືຄວາມເປັນໃຫຍ່ຄອບງຳແລ້ວ ກຳລັງຮູບກໍຕ້ານທານບໍ່ໄດ້ ກຳລັງ

ຊັບກໍຕ້ານທານບໍ່ໄດ້ ກຳລັງຍາດກໍຕ້ານທານບໍ່ໄດ້ ກຳລັງບຸດກໍຕ້ານທານບໍ່ໄດ້ ກຳລັງສີນກໍຕ້ານທານບໍ່ໄດ້

**ເອກະສູດທີ ໔ ຈົບ**

# ໕. ອັງຄະສູດ

## ວ່າດ້ວຍອົງປະກອບຂອງມາຕຸຄາມ

[໓໐໗] ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້

ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຊັບ
໓. ກຳລັງຍາດ
໔. ກຳລັງບຸດ
໕. ກຳລັງສີນ

ມາຕຸຄາມປະກອບດ້ວຍກຳລັງຮູບ ແຕ່ບໍ່ປະກອບດ້ວຍກຳລັງຊັບ ມາຕຸຄາມນັ້ນ ຊື່ວ່າຍັງບໍ່ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ແຕ່ເມື່ອມາຕຸຄາມປະກອບດ້ວຍກຳລັງຮູບ ແລະກຳລັງຊັບ ມາຕຸຄາມນັ້ນຊື່ວ່າບໍລິບູນດ້ວຍອົງປະກອບນັ້ນແນວນີ້

ມາຕຸຄາມປະກອບດ້ວຍກຳລັງຮູບ ແລະກຳລັງຊັບ ແຕ່ບໍ່ປະກອບດ້ວຍກຳລັງຍາດ ມາຕຸຄາມນັ້ນຊື່ວ່າຍັງບໍ່ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ແຕ່ເມື່ອມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບແລະກຳລັງຍາດ ມາຕຸຄາມນັ້ນ ຊື່ວ່າບໍລິບູນດ້ວຍອົງປະກອບນັ້ນແນວນີ້ ມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ແລະກຳລັງຍາດ ແຕ່ບໍ່ປະກອບດ້ວຍກຳລັງບຸດ ມາຕຸຄາມນັ້ນຊື່ວ່າ ຍັງບໍ່ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ແຕ່ເມື່ອມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ກຳລັງຍາດ ແລະ ກຳລັງບຸດ ມາຕຸຄາມນັ້ນ ຊື່ວ່າ ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ກຳລັງຍາດ ແລະກຳລັງບຸດ ແຕ່ບໍ່ປະກອບດ້ວຍກຳລັງສີນ ມາຕຸຄາມນັ້ນຊື່ວ່າຍັງບໍ່ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ແຕ່ເມື່ອມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ກຳລັງຍາດ ກຳລັງບຸດ ແລະ ກຳລັງສິນ ມາຕຸຄາມນັ້ນຊື່ວ່າເປັນຜູ້ບໍລິບູນດ້ວຍອົງປະກອບນັ້ນແນວນີ້

ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້ແລ

**ອັງຄະສູດທີ ໕ ຈົບ**

# ໖. ນາເສນຕິສູດ

## ວ່າດ້ວຍມາຕຸຄາມທີ່ຈະຖືກຍາດເຮັດໃຫ້ພິນາດ

[໓໐໙] ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້

ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຊັບ
໓. ກຳລັງຍາດ
໔. ກຳລັງບຸດ
໕. ກຳລັງສິນ

ມາຕຸຄາມປະກອບດ້ວຍກຳລັງຮູບ ແຕ່ບໍ່ປະກອບດ້ວຍກຳລັງສິນ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນພິນາດໄປ ຄື ບໍ່ໃຫ້ຢູ່ໃນຕະກູນ

ມາຕຸຄາມປະກອບດ້ວຍກຳລັງຮູບ ແລະກຳລັງຊັບ ແຕ່ບໍ່ປະກອບດ້ວຍກຳລັງສິນ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນພິນາດໄປ ຄື ບໍ່ໃຫ້ຢູ່ໃນຕະກູນ

ມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ແລະກຳລັງຍາດ ແຕ່ບໍ່ປະກອບດ້ວຍກຳລັງສິນ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນພິນາດໄປ ຄື ບໍ່ໃຫ້ຢູ່ໃນຕະກູນ

ມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ກຳລັງຍາດ ແລະກຳລັງບຸດ ແຕ່ບໍ່ປະກອບດ້ວຍກຳລັງສິນ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນພິນາດໄປ ຄື ບໍ່ໃຫ້ຢູ່ໃນຕະກູນ

ພິກຂຸທັງຫຼາຍ ແຕ່ມາຕຸຄາມປະກອບດ້ວຍກຳລັງຮູບ ກຳລັງຊັບ ກຳລັງຍາດ ກຳລັງບຸດ ແລະກຳລັງສິນ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນຢູ່ໃນຕະກູນ ຄື ບໍ່ໃຫ້ພິນາດໄປ

ພິກຂຸທັງຫຼາຍ ສ່ວນມາຕຸຄາມປະກອບດ້ວຍກຳລັງສິນ ແຕ່ບໍ່ປະກອບດ້ວຍກຳລັງຮູບ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນຢູ່ໃນຕະກູນ ຄື ບໍ່ໃຫ້ພິນາດໄປ

ມາຕຸຄາມປະກອບດ້ວຍກຳລັງສີນ ແຕ່ບໍ່ປະກອບດ້ວຍກຳລັງຊັບ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນຢູ່ໃນຕະກູນ ຄື ບໍ່ໃຫ້ພິນາດໄປ

ມາຕຸຄາມປະກອບດ້ວຍກຳລັງສີນ ແຕ່ບໍ່ປະກອບດ້ວຍກຳລັງຍາດ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນຢູ່ໃນຕະກູນ ຄື ບໍ່ໃຫ້ພິນາດໄປ

ມາຕຸຄາມປະກອບດ້ວຍກຳລັງສີນ ແຕ່ບໍ່ປະກອບດ້ວຍກຳລັງບຸດ ພວກຍາດຍ່ອມໃຫ້ມາຕຸຄາມນັ້ນຢູ່ໃນຕະກູນ ຄື ບໍ່ໃຫ້ພິນາດໄປ

ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້ແລ

**ນາເສນຕິສູດທີ ໖ ຈົບ**

# ໗. ເຫຕຸສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ມາຕຸຄາມໄປເກີດໃນສຸກຄະຕິ

[໓໑໐] ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້

ກຳລັງ ໕ ປະການ ອັນໃດແດ່ ຄື

໑. ກຳລັງຮູບ
໒. ກຳລັງຊັບ
໓. ກຳລັງຍາດ
໔. ກຳລັງບຸດ
໕. ກຳລັງສີນ

ພິກຂຸທັງຫຼາຍ ມາຕຸຄາມຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນຍ້ອນກຳລັງຮູບເປັນເຫດ ຫຼື ຍ້ອນກຳລັງຊັບເປັນເຫດ ຍ້ອນກຳລັງຍາດເປັນເຫດ ຫຼື ຍ້ອນກຳລັງບຸດເປັນເຫດກໍເປັນໄປບໍ່ໄດ້ ແຕ່ມາຕຸຄາມຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນໄດ້ ກໍຍ້ອນກຳລັງສີນເປັນເຫດ

ພິກຂຸທັງຫຼາຍ ກຳລັງຂອງມາຕຸຄາມ ໕ ປະການນີ້ແລ

**ເຫຕຸສູດທີ ໗ ຈົບ**

# ໗. ຖານະສູດ

## ວ່າດ້ວຍຖານະທີ່ມາຕຸຄາມໄດ້ຍາກແລະໄດ້ງ່າຍ

[໓໑໑] ພິກຂຸທັງຫຼາຍ ຖານະ ໕ ປະການນີ້ ທີ່ມາຕຸຄາມຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ ຖານະ ໕ ປະການ ອັນໃດແດ່ ຄື

໑. ຂໍເຮົາເພິ່ງເກີດໃນຕະກູນທີ່ເໝາະສົມ ນີ້ເປັນຖານະຂໍ້ທີ ໑ ທີ່ມາຕຸຄາມ ຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ
໒. ເມື່ອເກີດໃນຕະກູນທີ່ເໝາະສົມແລ້ວ ຂໍເຮົາເພິ່ງໄປສູ່ຕະກູນທີ່ເໝາະສົມນີ້ ເປັນຖານະຂໍ້ທີ ໒ ທີ່ມາຕຸຄາມ ຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ
໓. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຂໍເຮົາເພິ່ງຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ນີ້ເປັນຖານະຂໍ້ທີ ໓ ທີ່ມາຕຸຄາມ ຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ
໔. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ຂໍເຮົາເພິ່ງມີບຸດ ນີ້ເປັນຖານະຂໍ້ທີ ໔ ທີ່ມາຕຸຄາມຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ
໕. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ມີບຸດ ຂໍເຮົາເພິ່ງຄອງໃຈສາມີ ນີ້ເປັນຖານະຂໍ້ທີ ໕ ທີ່ມາຕຸຄາມຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ

ພິກຂຸທັງຫຼາຍ ຖານະ ໕ ປະການນີ້ແລ ທີ່ມາຕຸຄາມຜູ້ບໍ່ໄດ້ທຳບຸນໄວ້ໄດ້ໂດຍຍາກ

ພິກຂຸທັງຫຼາຍ ຖານະ ໕ ປະການນີ້ ມາຕຸຄາມຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ

ຖານະ ໕ ປະການ ອັນໃດແດ່ ຄື

໑. ຂໍເຮົາເພິ່ງເກີດໃນຕະກູນທີ່ເໝາະສົມ ນີ້ເປັນຖານະຂໍ້ທີ ໑ ທີ່ມາຕຸຄາມ ຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ
໒. ເມື່ອເກີດໃນຕະກູນທີ່ເໝາະສົມແລ້ວ ຂໍເຮົາເພິ່ງໄປສູ່ຕະກູນທີ່ເໝາະສົມ ນີ້ເປັນຖານະຂໍ້ທີ ໒ ທີ່ມາຕຸຄາມຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ
໓. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຂໍເຮົາເພິ່ງຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ນີ້ເປັນຖານະຂໍ້ທີ ໓ ທີ່ມາຕຸຄາມ ຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ

໔. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ຂໍເຮົາເພິ່ງມີບຸດ ນີ້ເປັນຖານະຂໍ້ທີ ໔ ທີ່ມາຕຸຄາມຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ
໕. ເມື່ອເກີດໃນຕະກູນທີ່ເໝາະສົມ ໄປສູ່ຕະກູນທີ່ເໝາະສົມແລ້ວ ຢູ່ຄອງເຮືອນບໍ່ມີຍິງຮ່ວມສາມີ ມີບຸດ ຂໍເຮົາເພິ່ງຄອງໃຈສາມີ ນີ້ເປັນຖານະຂໍ້ທີ ໕ ທີ່ມາຕຸຄາມຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ

ພິກຂຸທັງຫຼາຍ ຖານະ ໕ ປະການນີ້ແລ ທີ່ມາຕຸຄາມຜູ້ໄດ້ທຳບຸນໄວ້ໄດ້ໂດຍງ່າຍ

**ຖານະສູດທີ ໘ ຈົບ**

# ໙. ປັນຈະສີລະວິສາຣະທະສູດ

## ວ່າດ້ວຍມາຕຸຄາມມີສິນ ໕ ເປັນຜູ້ແກ່ກ້າ

[໓໑໘] ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໕ ປະການ ຍ່ອມເປັນຜູ້ແກ່ກ້າຢູ່ຄອງເຮືອນ

ທຳ ໕ ປະການ ອັນໃດແດ່ ຄື

໑. ເວັ້ນຂາດຈາກການຂ້າສັດ
໒. ເວັ້ນຂາດຈາກການລັກຊັບ
໓. ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເວັ້ນຂາດຈາກການເວົ້າຕົວະ
໕. ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາ ແລະ ເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໕ ປະການນີ້ແລ ຍ່ອມເປັນຜູ້ແກ່ກ້າຢູ່ຄອງເຮືອນ

**ປັນຈະສີລະວິສາຣະທະສູດທີ ໙ ຈົບ**

# ໑໐. ວັດທິສູດ

## ວ່າດ້ວຍອະຣິຍະສາວິກາຜູ້ຈະເລີນດ້ວຍວັດຖຸທຳ

[໓໑໓] ພິກຂຸທັງຫຼາຍ ອະຣິຍະສາວິກາເມື່ອຈະເລີນດ້ວຍວັດຖຸທຳ (ຫຼັກຄວາມຈະເລີນ)

໕ ປະການ ຍ່ອມຈະເລີນດ້ວຍວັດຖຸທຳອັນປະເສີດ ເປັນຜູ້ຖືເອົາສິ່ງທີ່ເປັນສາລະ ແລະ ຖືເອົາສິ່ງທີ່ປະເສີດແຫ່ງກາຍໄວ້ໄດ້

ວັດຖຸທຳ ໕ ປະການ ອັນໃດແດ່ ຄື

໑. ຈະເລີນດ້ວຍສັດທາ

໒. ຈະເລີນດ້ວຍສີນ

໓. ຈະເລີນດ້ວຍສຸຕະ (ການຟັງ)

໔. ຈະເລີນດ້ວຍຈາຄະ (ຄວາມເສຍສະລະ)

໕. ຈະເລີນດ້ວຍປັນຍາ

ພິກຂຸທັງຫຼາຍ ອະຣິຍະສາວິກາເມື່ອຈະເລີນຢູ່ດ້ວຍວັດຖຸທຳ ໕ ປະການນີ້ແລ ຊື່ວ່າຈະເລີນດ້ວຍວັດຖຸທຳອັນປະເສີດ ເປັນຜູ້ຖືເອົາສິ່ງທີ່ເປັນສາລະ ແລະ ຖືເອົາສິ່ງທີ່ປະເສີດແຫ່ງກາຍໄວ້ໄດ້

ອຸປາສິກາໃດຈະເລີນດ້ວຍສັດທາ
ສີນ ສຸຕະ ຈາຄະ ແລະປັນຍາ
ອຸປາສິກາຜູ້ມີສີນຈັ່ງຊັ້ນ
ຍ່ອມຖືເອົາສິ່ງທີ່ເປັນສາລະທັງສອງຂອງຕົນໃນໂລກນີ້ໄວ້ໄດ້

**ວັດທິສູດທີ ໑໐ ຈົບ**

**ພະລະວັກທີ ໓ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ວິສາຣະທະສູດ | ໒. ປະໄສທະສູດ |
| ໓. ອະພິພຸຍຍະສູດ | ໔. ເອກະສູດ |
| ໕. ອັງຄະສູດ | ໖. ນາເສນຕິສູດ |
| ໗. ເຫຕຸສູດ | ໘. ຖານະສູດ |
| ໙. ປັນຈະສີລະວິສາຣະທະສູດ | ໑໐. ວັດທິສູດ |

**ມາຕຸຄາມສັງຍຸດ ຈົບບໍລິບູນ**

# ໔. ຊຳພຸຂາທະກະສັງຍຸດ

## ໑. ນິບພານປັນຫາສູດ

### ວ່າດ້ວຍບັນຫາເລື້ອງນິບພານ

[໓໑໔] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ໝູ່ບ້ານນາລະກະຄາມ ແຄວ້ນມະຄົດ ຄັ້ງນັ້ນ ຊຳພຸຂາທະກະປະຣິພາຊົກເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ນິບພານ ນິບພານ ນິບພານເປັນແນວໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະຄວາມສິ້ນໂມຫະ ນີ້ຮຽກວ່າ ນິບພານ

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນຢູ່ແມ່ນບໍ?

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນຢູ່

ມັກເປັນແນວໃດ? ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອເຮັດໃຫ້ແຈ້ງນິບພານນັ້ນ ໄດ້ແກ່

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນດີແທ້ນໍ ແລະ ຄວນທີ່ຈະບໍ່ຜະໝາດ

**ນິບພານປັນຫາສູດທີ ໑ ຈົບ**

# ໘. ອະຣະຫັດຕະປັນຫາສູດ

## ວ່າດ້ວຍບັນຫາເລື້ອງອະຣະຫັດ

[໓໑໕] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ອະຣະຫັດ ອະຣະຫັດ ອະຣະຫັດເປັນແນວໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະຄວາມສິ້ນໂມຫະ ນີ້ຮຽກວ່າ ອະຣະຫັດ

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນ ໄດ້ແກ່

໑. ສຳມາທິດຖິ ฯລฯ ໘. ສຳມາສະມາທິ

ນີ້ແລຄືມັກ ນີ້ຄື ປະຕິປະທາເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອເຮັດໃຫ້ແຈ້ງອະຣະຫັດນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ອະຣະຫັດຕະປັນຫາສູດທີ ໘ ຈົບ**

# ໙. ທຳມະວາທີປັນຫາສູດ

## ວ່າດ້ວຍບັນຫາເລື້ອງຜູ້ເປັນທຳວາທີ

[໓໑໖] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ໃຜນໍ? ເປັນທຳວາທີໃນໂລກ ໃຜເປັນຜູ້ປະຕິບັດດີໃນໂລກ ໃຜເປັນຜູ້ໄປດີແລ້ວໃນໂລກ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຄົນພວກໃດສະແດງທຳເພື່ອລະຣາຄະ ສະແດງທຳເພື່ອລະໂທສະ ແລະສະແດງທຳເພື່ອລະໂມຫະ ຄົນພວກນັ້ນເປັນທຳວາທີໃນໂລກ

ຄົນພວກໃດປະຕິບັດເພື່ອລະຣາຄະ ປະຕິບັດເພື່ອລະໂທສະ ແລະປະຕິບັດເພື່ອລະໂມຫະ ຄົນພວກນັ້ນ ເປັນຜູ້ປະຕິບັດດີໃນໂລກ ແລະ ຄົນພວກໃດລະຣາຄະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກຖອນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ລະໂທສະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ແລະລະໂມຫະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຄົນພວກນັ້ນເປັນຜູ້ໄປດີແລ້ວໃນໂລກ

ມີມັກ ມີປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະຣາຄະ ໂທສະ ແລະໂມຫະນັ້ນ ໄດ້ແກ່

໑. ສຳມາທິດຖິ ໗ລ໗ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄືປະຕິປະທາເພື່ອລະຣາຄະ ໂທສະ ແລະ ໂມຫະນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະຣາຄະ ໂທສະ ແລະໂມຫະນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ທຳມະວາທີປັນຫາສູດທີ ໓ ຈົບ**

# ໔. ກິມັດຖິຍະສູດ

## ວ່າດ້ວຍຄຳຖາມກ່ຽວກັບປະໂຫຍດຂອງການປະພຶດພົມມະຈັນ

[໓໑໗] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທ່ານປະພຶດພົມມະຈັນ ໃນພຣະສະມະນະໂຄດົມ ເພື່ອຕ້ອງການອັນໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ທຸກ

ມີມັກ ມີປະຕິປະທາເພື່ອກຳນົດຮູ້ທຸກນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອກຳນົດຮູ້ທຸກນັ້ນຢູ່

ມັກເປັນແນວໃດ? ປະຕິປະທາເພື່ອກຳນົດຮູ້ທຸກນັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອກຳນົດຮູ້ທຸກນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄືປະຕິປະທາເພື່ອກຳນົດຮູ້ທຸກນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອກຳນົດຮູ້ທຸກນັ້ນດີແທ້ນໍ ແລະ ຄວນທີ່ຈະບໍ່ຜະໝາດ

**ກິມັດຖິຍະສູດທີ ໔ ຈົບ**

# ໕. ອັດສາສັບປັດຕະສູດ

## ວ່າດ້ວຍຜູ້ເຖິງຄວາມໂລ່ງໃຈ

[໓໑໘] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ເຖິງຄວາມໂລ່ງໃຈ ເຖິງຄວາມໂລ່ງໃຈ ດ້ວຍເຫດພຽງທໍ່ໃດນໍ ພິກຂຸ ຈຶ່ງເປັນຜູ້ເຖິງຄວາມໂລ່ງໃຈ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງ ດ້ວຍເຫດພຽງທໍ່ນີ້ແລ ທ່ານຈຶ່ງເປັນຜູ້ເຖິງຄວາມໂລ່ງໃຈ

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈນັ້ນດີແທ້ນໍ ແລະ ຄວນທີ່ຈະບໍ່ຜະໝາດ

**ອັດສາສັບປັດຕະສູດທີ ໕ ຈົບ**

# ໒. ປະຣະມັດສາສັບປັດຕະສູດ

## ວ່າດ້ວຍຜູ້ເຖິງຄວາມໂລ່ງໃຈຢ່າງຍິ່ງ

[໓໑໙] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ເຖິງຄວາມໂລ່ງໃຈຢ່າງຍິ່ງ ເຖິງຄວາມໂລ່ງໃຈຢ່າງຍິ່ງ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງເປັນຜູ້ເຖິງຄວາມໂລ່ງໃຈຢ່າງຍິ່ງ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກຜັດສາຍະຕະນະ ໖ ປະການຕາມຄວາມເປັນຈິງແລ້ວ ລຸດພົ້ນຍ້ອນບໍ່ຖືໝັ້ນ ດ້ວຍເຫດພຽງທໍ່ນີ້ແລ ທ່ານຈຶ່ງເປັນຜູ້ເຖິງຄວາມໂລ່ງໃຈຢ່າງຍິ່ງ

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອເຮັດໃຫ້ແຈ້ງຄວາມໂລ່ງໃຈຢ່າງຍິ່ງນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ປະຣະມັດສາສັບປັດຕະສູດທີ ໒ ຈົບ**

# ໗. ເວທະນາປັນຫາສູດ

## ວ່າດ້ວຍບັນຫາເລື້ອງເວທະນາ

[໓໒໐] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ກ່າວກັນວ່າ ເວທະນາ ເວທະນາ ເວທະນາມີທໍ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ເວທະນາມີ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ ໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເວທະນາມີ ໓ ປະການນີ້ແລ

ມີມັກ ມີປະຕິປະທາເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອກຳນົດຮູ້ເວທະນາ ໓ ປະການນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ເວທະນາປັນຫາສູດທີ ໗ ຈົບ**

# ໘. ອາສະວະປັນຫາສູດ

## ວ່າດ້ວຍບັນຫາເລື້ອງອາສະວະ

[໓໒໑] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ອາສະວະ ອາສະວະ ອາສະວະມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ອາສະວະມີ ໓ ປະການນີ້ ຄື

໑. ກາມາສະຫວະ (ອາສະວະຄືກາມ)
໒. ພະວາສະວະ (ອາສະວະຄືພົບ)
໓. ອະວິດຊາສະຫວະ (ອາສະວະຄືອະວິດຊາ)

ອາສະວະມີ ໓ ປະການນີ້ແລ

ມີມັກ ມີປະຕິປະທາເພື່ອລະອາສະວະເຫຼົ່ານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອລະອາສະວະເຫຼົ່ານັ້ນຢູ່

ມັກເປັນແນວໃດ? ປະຕິປະທາເພື່ອລະອາສະວະເຫຼົ່ານັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະອາສະວະເຫຼົ່ານັ້ນ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ຄືມັກ ນີ້ຄືປະຕິປະທາເພື່ອລະອາສະວະເຫຼົ່ານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະອາສະວະເຫຼົ່ານັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ອາສະວະປັນຫາສູດທີ ໘ ຈົບ**

# ໙. ອະວິດຊາປັນຫາສູດ

## ວ່າດ້ວຍບັນຫາເລື້ອງອະວິດຊາ

[໓໔໔] ຊໍາພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ອະວິດຊາ ອະວິດຊາ ອະວິດຊາຄືອັນໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຄື ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ (ເຫດເກີດທຸກ) ຄວາມບໍ່ຮູ້ໃນທຸກຂະນິໂຣທະ (ຄວາມດັບທຸກ) ແລະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ນີ້ຮຽກວ່າ ອະວິດຊາ

ມີມັກ ມີປະຕິປະທາເພື່ອລະອະວິດຊານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອລະອະວິດຊານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອລະອະວິດຊານັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະອະວິດຊານັ້ນ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລຄືມັກ ນີ້ຄືປະຕິປະທາເພື່ອລະອະວິດຊານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະອະວິດຊານັ້ນດີແທ້ນໍ ແລະ ຄວນທີ່ຈະບໍ່ຜະໝາດ

**ອະວິດຊາປັນຫາສູດທີ ໙ ຈົບ**

# ໑໐. ຕັນຫາປັນຫາສູດ

## ວ່າດ້ວຍບັນຫາເລື້ອງຕັນຫາ

[໓໔໓] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ຕັນຫາ ຕັນຫາ ຕັນຫາມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຕັນຫາມີ ໓ ປະການນີ້ ຄື

໑. ກາມຕັນຫາ (ຄວາມທະຍານຢາກໃນກາມ)
໔. ພະວະຕັນຫາ (ຄວາມທະຍານຢາກໃນພົບ)
໓. ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ຕັນຫາມີ ໓ ປະການນີ້ແລ
ມີມັກ ມີປະຕິປະທາເພື່ອລະຕັນຫາເຫຼົ່ານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອລະຕັນຫາເຫຼົ່ານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອລະຕັນຫາເຫຼົ່ານັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະຕັນຫາເຫຼົ່ານັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລຄືມັກ ນີ້ຄືປະຕິປະທາເພື່ອລະຕັນຫາເຫຼົ່ານັ້ນ
ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະຕັນຫາເຫຼົ່ານັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ຕັນຫາປັນຫາສູດທີ ໑໐ ຈົບ**

# ໑໑. ໂອຄະປັນຫາສູດ

## ວ່າດ້ວຍບັນຫາເລື້ອງໂອຄະ

[໓໔໔] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ໂອຄະ ໂອຄະ ໂອຄະມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ໂອຄະມີ ໔ ປະການນີ້ ຄື

໑. ກາໂມຄະ (ໂອຄະຄືກາມ) ໔. ພະໂວຄະ (ໂອຄະຄືພົບ)
໓. ທິດໂຖຄະ (ໂອຄະຄືທິດຖິ) ໔. ອະວິດໂຊຄະ (ໂອຄະຄືອະວິດຊາ)

ໂອຄະມີ ໔ ປະການນີ້ແລ

ມີມັກ ມີປະຕິປະທາເພື່ອລະໂອຄະເຫຼົ່ານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອລະໂອຄະເຫຼົ່ານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອລະໂອຄະເຫຼົ່ານັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະໂອຄະເຫຼົ່ານັ້ນ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອລະໂອຄະເຫຼົ່ານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະໂອຄະເຫຼົ່ານັ້ນດີແທ້ນໍ ແລະ ຄວນທີ່ຈະບໍ່ຜະໝາດ

**ໂອຄະປັນຫາສູດທີ ໑໑ ຈົບ**

# ໑໔. ອຸປາທານປັນຫາສູດ

## ວ່າດ້ວຍບັນຫາເລື້ອງອຸປາທານ

[໓໔໕] ຊໍາພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ອຸປາທານ ອຸປາທານ ອຸປາທານມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ອຸປາທານມີ ໔ ປະການນີ້ ຄື

໑. ກາມຸປາທານ (ຄວາມຍຶດໝັ້ນໃນກາມ)
໔. ທິດຖຸປາທານ (ຄວາມຍຶດໝັ້ນໃນທິດຖິຫຼືທິດສະດີ)
໓. ສີລັບພະຕຸປາທານ (ຄວາມຍຶດໝັ້ນໃນສີນແລະພິດ)
໔. ອັດຕະວາທຸປາທານ (ຄວາມຍຶດໝັ້ນໃນວາທະວ່າອັດຕາ)

ອຸປາທານມີ ໔ ປະການນີ້ແລ

ມີມັກ ມີປະຕິປະທາເພື່ອລະອຸປາທານເຫຼົ່ານັ້ນຢູ່ແມ່ນບໍ?

ມີມັກ ມີປະຕິປະທາເພື່ອລະອຸປາທານເຫຼົ່ານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອລະອຸປາທານເຫຼົ່ານັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອລະອຸປາທານເຫຼົ່ານັ້ນ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລຄືມັກ ນີ້ຄືປະຕິປະທາເພື່ອລະອຸປາທານເຫຼົ່ານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອລະອຸປາທານເຫຼົ່ານັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ອຸປາທານປັນຫາສູດທີ ໑໘ ຈົບ**

# ໑໓. ພະວະປັນຫາສູດ

## ວ່າດ້ວຍບັນຫາເລື້ອງພົບ

[໓໘໒] ຊໍາພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ພົບ ພົບ ພົບມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ພົບມີ ໓ ປະການນີ້ ຄື

໑. ກາມະພົບ (ພົບທີ່ເປັນກາມາວະຈອນ)
໒. ຣູບພົບ (ພົບທີ່ເປັນຣູປາວະຈອນ)
໓. ອະຣູບພົບ (ພົບທີ່ເປັນອະຣູປະວະຈອນ)

ພົບມີ ໓ ປະການນີ້ແລ

ມີມັກ ມີປະຕິປະທາເພື່ອກໍານົດຮູ້ພົບເຫຼົ່ານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອກໍານົດຮູ້ພົບເຫຼົ່ານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອກໍານົດຮູ້ພົບເຫຼົ່ານັ້ນ ເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອກໍານົດຮູ້ພົບເຫຼົ່ານັ້ນ ໄດ້ແກ່

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອກໍານົດຮູ້ພົບເຫຼົ່ານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອກຳນົດຮູ້ພົບເຫຼົ່ານັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ພະວະປັນຫາສູດທີ ໑໓ ຈົບ**

# ໑໔. ທຸກຂະປັນຫາສູດ

## ວ່າດ້ວຍປັນຫາເລື້ອງທຸກ

[໓໔໗] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ທຸກ ທຸກ ທຸກມີທີ່ໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ສະພາວະທຸກມີ ໓ ປະການນີ້ ຄື

໑. ສະພາວະທຸກຄືທຸກ
໒. ສະພາວະທຸກຄືສັງຂານ
໓. ສະພາວະທຸກຄືຄວາມຜັນແປໄປ

ສະພາວະທຸກມີ ໓ ແນວເຫຼົ່ານີ້

ມີມັກ ມີປະຕິປະທາເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນຢູ່ແມ່ນບໍ?
ມີມັກ ມີປະຕິປະທາເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນ ໄດ້ແກ່

໑. ສຳມາທິດຖິ ។ລ។ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄືປະຕິປະທາເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອກຳນົດຮູ້ສະພາວະທຸກເຫຼົ່ານັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ທຸກຂະປັນຫາສູດທີ ໑໔ ຈົບ**

# ໑໕. ສັກກາຍະປັນຫາສູດ

## ວ່າດ້ວຍປັນຫາເລື້ອງຈັກກາຍະ

[໓໔໗] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ທີ່ຮຽກກັນວ່າ ຈັກກາຍະ (ກາຍຂອງຕົນ) ຈັກກາຍະ ຈັກກາຍະຄືອັນໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ອຸປາທານຂັນ ໕ ນີ້ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຈັກກາຍະ ໄດ້ແກ່

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
໔. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ອຸປາທານຂັນ ໕ ນີ້ແລ ພຣະຜູ້ມີພຣະພາກເຈົ້າຕັດຮຽກວ່າ ຈັກກາຍະມີມັກ ມີປະຕິປະທາເພື່ອກຳນົດຮູ້ຈັກກາຍະນັ້ນຢູ່ແມ່ນບໍ?

ມີມັກ ມີປະຕິປະທາ ເພື່ອກຳນົດຮູ້ຈັກກາຍະນັ້ນຢູ່
ມັກເປັນແນວໃດ? ປະຕິປະທາເພື່ອກຳນົດຮູ້ຈັກກາຍະນັ້ນເປັນແນວໃດ?
ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອກຳນົດຮູ້ຈັກກາຍະນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອກຳນົດຮູ້ຈັກກາຍະນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອກຳນົດຮູ້ຈັກກາຍະນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ສັກກາຍະປັນຫາສູດທີ ໑໕ ຈົບ**

# ໑໖. ທຸກກະຣະປັນຫາສູດ

## ວ່າດ້ວຍບັນຫາເລື້ອງສິ່ງທີ່ເຮັດໄດ້ຍາກ

[໓໔໙] ຊຳພຸຂາທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ອັນໃດນໍ ທີ່ເຮັດໄດ້ຍາກໃນພຣະທຳວິໄນນີ້

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ການບັນພະຊາເຮັດໄດ້ຍາກໃນພຣະທຳວິໄນນີ້ອັນໃດທີ່ບັນພະຊິດເຮັດໄດ້ຍາກ?

ຄວາມຍິນດີຍິ່ງ ບັນພະຊິດເຮັດໄດ້ຍາກ
ອັນໃດ ທີ່ບັນພະຊິດຜູ້ຍິນດີຍິ່ງ ເຮັດໄດ້ຍາກ?
ການປະຕິບັດທຳສົມຄວນແກ່ທຳ ທີ່ບັນພະຊິດຜູ້ຍິນດີຍິ່ງ ເຮັດໄດ້ຍາກ?
ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳ ດົນທໍ່ໃດຈຶ່ງຈະເປັນພຣະອະຣະຫັນໄດ້?
ບໍ່ດົນດອກ ຜູ້ມີອາຍຸ

**ທຸກກະຣະປັນຫາສູດທີ ໑໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

| | |
|---|---|
| ໑. ນິບພານປັນຫາສູດ | ໒. ອະຣະຫັດຕະປັນຫາສູດ |
| ໓. ທຳມະວາທີປັນຫາສູດ | ໔. ກິມັດຖິຍະສູດ |
| ໕. ອັດສາສັບປັດຕະສູດ | ໖. ປະຣະມັດສາສັບປັດຕະສູດ |
| ໗. ເວທະນາປັນຫາສູດ | ໘. ອາສະວະປັນຫາສູດ |
| ໙. ອະວິດຊາປັນຫາສູດ | ໑໐. ຕັນຫາປັນຫາສູດ |
| ໑໑. ໂອຄະປັນຫາສູດ | ໑໒. ອຸປາທານປັນຫາສູດ |
| ໑໓. ພະວະປັນຫາສູດ | ໑໔. ທຸກຂະປັນຫາສູດ |
| ໑໕. ສັກກາຍະປັນຫາສູດ | ໑໖. ທຸກກະຣະປັນຫາສູດ |

**ຊຳພຸຂາທະກະສັງຍຸດ ຈົບບໍລິບູນ**

# ๔. ສາມັນທະກະສັງຍຸດ

## ໑. ສາມັນທະກະສູດ

### ວ່າດ້ວຍສາມັນທະກະປະຣິພາຊົກ

[໓໓໐] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ຝັ່ງແມ່ນ້ຳຄົງຄາ ເຂດອຸກກະເຈລະນະຄອນ ແຄວ້ນ ວັດຊີ ຄັ້ງນັ້ນ ສາມັນທະກະປະຣິພາຊົກ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

ທ່ານສາຣີບຸດ ທີ່ຮຽກກັນວ່າ ນິບພານ ນິບພານ ນິບພານຄືອັນໃດ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະຄວາມສິ້ນໂມຫະ ນີ້ຮຽກວ່ານິບພານ

ມີມັກ ມີປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນຢູ່ແມ່ນບໍ?

ມີມັກ ມີປະຕິປະທາເພື່ອຮູ້ແຈ້ງນິບພານນັ້ນຢູ່

ມັກເປັນແນວໃດ? ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນເປັນແນວໃດ?

ຜູ້ມີອາຍຸ ຄື ອະຣິຍະມັກມີອົງ ໘ ນີ້ແລ ເພື່ອເຮັດໃຫ້ແຈ້ງນິບພານນັ້ນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ແລ ຄືມັກ ນີ້ຄື ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນ

ທ່ານສາຣີບຸດ ມັກດີແທ້ນໍ ປະຕິປະທາເພື່ອເຮັດໃຫ້ແຈ້ງນິບພານນັ້ນດີແທ້ນໍ ແລະຄວນທີ່ຈະບໍ່ຜະໝາດ

**ສາມັນທະກະສູດທີ ໑ ຈົບ**

## ໔. ທຸກກະຣະສູດ

### ວ່າດ້ວຍສິ່ງທີ່ເຮັດໄດ້ຍາກ

[໓໓໑] ສາມັນທະກະປະຣິພາຊົກຖາມວ່າ ທ່ານສາຣີບຸດ ອັນໃດນໍ ທີ່ເຮັດໄດ້ຍາກໃນພຣະທຳວິໄນນີ້?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ການບັນພະຊາເຮັດໄດ້ຍາກໃນພຣະທຳວິໄນນີ້
ອັນໃດ? ທີ່ບັນພະຊິດເຮັດໄດ້ຍາກ
ຄວາມຍິນດີຍິ່ງ ທີ່ບັນພະຊິດເຮັດໄດ້ຍາກ
ອັນໃດ? ທີ່ບັນພະຊິດຜູ້ຍິນດີຍິ່ງເຮັດໄດ້ຍາກ
ການປະຕິບັດທຳສົມຄວນແກ່ທຳທີ່ບັນພະຊິດຜູ້ຍິນດີຍິ່ງເຮັດໄດ້ຍາກ
ຜູ້ມີອາຍຸ ພິກຂຸຜູ້ປະຕິບັດທຳສົມຄວນແກ່ທຳດົນທໍ່ໃດ? ຈຶ່ງຈະເປັນພຣະອະຣະຫັນໄດ້
ບໍ່ດົນດອກ ຜູ້ມີອາຍຸ

**ທຸກກະຣະສູດທີ ໘ ຈົບ**

## ລວມພຣະສູດໃນສັງຍຸດນີ້ຄືກັນກັບສັງຍຸດກ່ອນ

**ສາມັນທະກະສັງຍຸດ ຈົບບໍລິບູນ**

# ໕. ໂມຄຄັລລານະສັງຍຸດ

## ໑. ປະຖະມັດຊານະປັນຫາສູດ

### ວ່າດ້ວຍປັນຫາເລື້ອງປະຖົມຊານ

[໓໓໔] ສະໄໝໜຶ່ງ ທ່ານພຣະມະຫາໂມຄຄັລລານະຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ທ່ານພຣະມະຫາໂມຄຄັລລານະຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນ ຮັບຄຳທ່ານພຣະມະຫາໂມຄຄັລລານະແລ້ວ ທ່ານພຣະມະຫາໂມຄຄັລລານະໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ເມື່ອຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດໃນບ່ອນນີ້ໄດ້ເກີດຄວາມຄິດຄຳນຶງຂຶ້ນມາວ່າ ທີ່ຮຽກກັນວ່າ ປະຖົມຊານ ປະຖົມຊານ ປະຖົມຊານເປັນແນວໃດ? ຂ້ານ້ອຍນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ ສະງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ນີ້ຮຽກວ່າ ປະຖົມຊານ ຂ້ານ້ອຍນັ້ນ ສະງັດຈາກກາມ ແລະ ອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການ (ການໃສ່ໃຈສັນຍາ) ປະກອບດ້ວຍການກໍຜາກົດຂຶ້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດມາຫາຂ້ານ້ອຍ ດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມຄຄັລລານະຜູ້ເປັນພາມ ໂມຄຄັລລານະຜູ້ເປັນພາມ ທ່ານຢ່າຜະໝາດປະຖົມຊານ ຈົ່ງດຳລົງຈິດໄວ້ໃນປະຖົມຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນປະຖົມຊານ ຈົ່ງຕັ້ງຈິດໄວ້ໃຫ້ໝັ້ນໃນປະຖົມຊານ ຕໍ່ມາ ຂ້ານ້ອຍນັ້ນສະງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ພຣະສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່ ບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າເຖິງຂ້ານ້ອຍວ່າ ພຣະສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ປະຖະມັດຊານະປັນຫາສູດທີ ໑ ຈົບ**

# ໘. ທຸຕິຍັດຊານະປັນຫາສູດ

## ວ່າດ້ວຍບັນຫາເລື້ອງທຸຕິຍະຊານ

[໓໖໖] ທີ່ຮຽກກັນວ່າ ທຸຕິຍະຊານ ທຸຕິຍະຊານ ທຸຕິຍະຊານເປັນແນວໃດ? ຂ້ານ້ອຍນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸໃນທຳວິໄນນີ້ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ນີ້ຮຽກວ່າ ທຸຕິຍະຊານ ຂ້ານ້ອຍນັ້ນ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິ ແລະສຸກອັນເກີດຈາກສະມາທິຢູ່ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍວິຕົກກໍຜາກົດຂຶ້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດມາຫາຂ້ານ້ອຍ ດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ທຸຕິຍະຊານ ຈົ່ງດຳລົງຈິດໄວ້ໃນທຸຕິຍະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນທຸຕິຍະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນທຸຕິຍະຊານ ຕໍ່ມາ ຍ້ອນວິຕົກວິຈານສະງົບລະງັບໄປ ຂ້ານ້ອຍນັ້ນ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປິຕິແລະສຸກອັນເກີດຈາກສະມາທິຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ພຣະສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່ ບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າ ເຖິງຂ້ານ້ອຍວ່າ ພຣະສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ທຸຕິຍັດຊານະປັນຫາສູດທີ ໘ ຈົບ**

# ໙. ຕະຕິຍັດຊານະປັນຫາສູດ

## ວ່າດ້ວຍບັນຫາເລື້ອງຕະຕິຍະຊານ

[໓໖໘] ທີ່ຮຽກວ່າ ຕະຕິຍະຊານ ຕະຕິຍະຊານ ຕະຕິຍະຊານເປັນແນວໃດ? ຂ້ານ້ອຍນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ຍ້ອນປິຕິຈາງຄາຍອອກ ພິກຂຸໃນທຳວິໄນນີ້ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ ນີ້ຮຽກວ່າ ຕະຕິຍະຊານ ຍ້ອນປິຕິຈາງຄາຍອອກ ຂ້ານ້ອຍນັ້ນ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະ

ທັງຫຼາຍ ສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍປີຕິກໍຜາກົດຂຶ້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວ ໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ຕະຕິຍະຊານ ຈົ່ງດຳລົງຈິດໄວ້ໃນຕະຕິຍະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນຕະຕິຍະຊານ ຈົ່ງຕັ້ງຈິດ ໃຫ້ໝັ້ນໃນຕະຕິຍະຊານ ຕໍ່ມາ ຍ້ອນປີຕິຈາງຄາຍອອກ ຂ້ານ້ອຍນັ້ນມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິຢູ່ເປັນສຸກ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ຯລຯ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ຕະຕິຍັດດຊານະປັນຫາສູດທີ ໓ ຈົບ**

# ໔. ຈະຕຸດຖັດຊານະປັນຫາສູດ

## ວ່າດ້ວຍບັນຫາເລື້ອງຈະຕຸດຖະຊານ

[໓໓໕] ທີ່ຮຽກວ່າ ຈະຕຸດຖະຊານ ຈະຕຸດຖະຊານ ຈະຕຸດຖະຊານເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ພິກຂຸໃນທຳວິໄນນີ້ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ຈະຕຸດຖະຊານ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ຂ້ານ້ອຍນັ້ນບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ຈະຕຸດຖະຊານ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍສຸກກໍຜາກົດຂຶ້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ຈະຕຸດຖະຊານ ຈົ່ງດຳລົງຈິດໄວ້ໃນຈະຕຸດຖະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນຈະຕຸດຖະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນຈະຕຸດຖະຊານ ຕໍ່ມາ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ຂ້ານ້ອຍນັ້ນ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ຯລຯ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ຈະຕຸດຖັດຊານະປັນຫາສູດທີ ໔ ຈົບ**

# ໕. ອາກາສານັນຈາຍະຕະນະຊານປັນຫາສູດ

## ວ່າດ້ວຍປັນຫາເລື້ອງອາກາສານັນຈາຍະຕະນະຊານ

[໓໓໖] ທີ່ຮຽກວ່າ ອາກາສານັນຈາຍະຕະນະຊານ ອາກາສານັນຈາຍະຕະນະຊານ ອາກາສານັນຈາຍະຕະນະຊານເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ ບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງຢູ່ ນີ້ຮຽກວ່າ ອາກາສານັນຈາຍະຕະນະຊານ ຂ້ານ້ອຍນັ້ນບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງຢູ່ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການ ປະກອບດ້ວຍຮູບຊານກໍຜາກົດຂື້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ອາກາສານັນຈາຍະຕະນະຊານ ຈົ່ງດຳລົງຈິດໄວ້ໃນອາກາສານັນຈາຍະຕະນະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂື້ນໃນອາກາສານັນຈາຍະຕະນະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນອາກາສານັນຈາຍະຕະນະຊານ

ຕໍ່ມາ ຂ້ານ້ອຍນັ້ນບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ຯລຯ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ອາກາສານັນຈາຍະຕະນະຊານປັນຫາສູດທີ ໕ ຈົບ**

# ໖. ວິນຍານັນຈາຍະຕະນະຊານປັນຫາສູດ

## ວ່າດ້ວຍປັນຫາເລື້ອງວິນຍານັນຈາຍະຕະນະຊານ

[໓໓໗] ທີ່ຮຽກກັນວ່າ ວິນຍານັນຈາຍະຕະນະຊານ ວິນຍານັນຈາຍະຕະນະຊານ ວິນຍານັນຈາຍະຕະນະຊານເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ນີ້ຮຽກວ່າ ວິນຍານັນຈາຍະຕະນະຊານ ຂ້ານ້ອຍນັ້ນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍ

ກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍອາກາສານັນຈາຍະຕະນະຊານກໍຜາກົດຂື້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດ ດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ວິນຍານັນຈາຍະຕະນະຊານ ຈົ່ງດຳລົງຈິດໄວ້ໃນວິນຍານັນຈາຍະຕະນະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງ ຜຸດຂຶ້ນໃນວິນຍານັນຈາຍະຕະນະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນວິນຍານັນຈາຍະຕະນະຊານ ຕໍ່ມາ ຂ້ານ້ອຍນັ້ນ ລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານ ໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ໗ລ໗ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ວິນຍານັນຈາຍະຕະນະຊານປັນຫາສູດທີ ໖ ຈົບ**

# ໗. ອາກິນຈັນຍາຍະຕະນະຊານປັນຫາສູດ

## ວ່າດ້ວຍບັນຫາເລື້ອງອາກິນຈັນຍາຍະຕະນະຊານ

[໓໖໙] ທີ່ຮຽກກັນວ່າ ອາກິນຈັນຍາຍະຕະນະຊານ ອາກິນຈັນຍາຍະຕະນະຊານ ອາກິນຈັນຍາຍະຕະນະຊານເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດ ນີ້ຮຽກວ່າ ອາກິນຈັນຍາຍະຕະນະຊານ ຂ້ານ້ອຍນັ້ນ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍວິນຍານັນຈາຍະຕະນະຊານກໍຜາກົດຂື້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດ ດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດອາກິນຈັນຍາຍະຕະນະຊານ ຈົ່ງດຳລົງຈິດໄວ້ໃນອາກິນຈັນຍາຍະຕະນະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງ ຜຸດຂຶ້ນໃນອາກິນຈັນຍາຍະຕະນະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນອາກິນຈັນຍາຍະຕະນະຊານ ຕໍ່ມາ ຂ້ານ້ອຍນັ້ນ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ໗ລ໗ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ອາກິນຈັນຍາຍະຕະນະຊານປັນຫາສູດທີ ໗ ຈົບ**

# ໗. ເນວະສັນຍານາສັນຍາຍະຕະນະຊານປັນຫາສູດ

## ວ່າດ້ວຍປັນຫາເລື້ອງເນວະສັນຍານາສັນຍາຍະຕະນະຊານ

[໓໓໙] ທີ່ຮຽກກັນວ່າ ເນວະສັນຍານາສັນຍາຍະຕະນະຊານ ເນວະສັນຍານາສັນຍາຍະຕະນະຊານ ເນວະສັນຍານາສັນຍາຍະຕະນະຊານເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ນີ້ຮຽກວ່າ ເນວະສັນຍານາສັນຍາຍະຕະນະຊານ ຂ້ານ້ອຍນັ້ນ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ສັນຍາມະນະສິການປະກອບດ້ວຍອາກິນຈັນຍາຍະຕະນະຊານກໍຜາກົດຂຶ້ນ

ຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້ເປັນພາມ ທ່ານຢ່າຜະໝາດ ເນວະສັນຍານາສັນຍາຍະຕະນະຊານ ຈົ່ງດຳລົງຈິດໄວ້ໃນເນວະສັນຍານາສັນຍາຍະຕະນະຊານ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນເນວະສັນຍານາສັນຍາຍະຕະນະຊານ ຈົ່ງຕັ້ງຈິດໃຫ້ໝັ້ນໃນເນວະສັນຍານາສັນຍາຍະຕະນະຊານ ຕໍ່ມາ ຂ້ານ້ອຍນັ້ນ ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ຯລຯ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ເນວະສັນຍານາສັນຍາຍະຕະນະຊານປັນຫາສູດທີ ໗ ຈົບ**

# ໘. ອະນິມິດຕະປັນຫາສູດ

## ວ່າດ້ວຍປັນຫາເລື້ອງອະນິມິດຕະເຈໂຕສະມາທິ

[໓໔໐] ທີ່ຮຽກກັນວ່າ ອະນິມິດຕະເຈໂຕສະມາທິ ອະນິມິດຕະເຈໂຕສະມາທິ ອະນິມິດຕະເຈໂຕສະມາທິເປັນແນວໃດ? ຂ້ານ້ອຍນັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້ບັນລຸອະນິມິດຕະເຈໂຕສະມາທິ ຍ້ອນບໍ່ກຳນົດນິມິດທັງປວງຢູ່ ນີ້ຮຽກວ່າ ອະນິມິດຕະເຈໂຕສະມາທິ ຂ້ານ້ອຍນັ້ນ ບັນລຸອະນິມິດຕະເຈໂຕສະມາທິ ຍ້ອນບໍ່ກຳນົດນິມິດທັງປວງຢູ່ ເມື່ອຂ້ານ້ອຍຢູ່ດ້ວຍວິຫານທຳນີ້ ວິນຍານຍ່ອມແລ່ນໄປຕາມນິມິດຜູ້ມີອາຍຸທັງຫຼາຍ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດມາຫາຂ້ານ້ອຍດ້ວຍລິດແລ້ວໄດ້ຕັດດັ່ງນີ້ວ່າ ໂມກຄັນລານະຜູ້ເປັນພາມ ໂມກຄັນລານະຜູ້

ເປັນພານ ທ່ານຢ່າຜະໝາດ ອະນິມິດຕະເຈໂຕສະມາທິ ຈົ່ງດຳລົງຈິດໄວ້ໃນອະນິມິດຕະເຈໂຕສະມາທິ ຈົ່ງເຮັດຈິດໃຫ້ເປັນໜຶ່ງຜຸດຂຶ້ນໃນອະນິມິດຕະເຈໂຕສະມາທິ ຈົ່ງຕັ້ງຈິດໃຫ້ໝັ້ນໃນອະນິມິດຕະເຈໂຕສະມາທິ ຕໍ່ມາ ຂ້ານ້ອຍນັ້ນ ບັນລຸອະນິມິດຕະເຈໂຕສະມາທິຍ້ອນບໍ່ກຳນົດນິມິດທັງປວງຢູ່ ກໍບຸກຄົນເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າວ່າ ພຣະສາວົກຜູ້ທີ່ພຣະສາດສະດາ ຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່ ບຸກຄົນ ເມື່ອຈະເວົ້າໃຫ້ຖືກ ເພິ່ງເວົ້າເຖິງຂ້ານ້ອຍວ່າ ພຣະສາວົກຜູ້ທີ່ພຣະສາດສະດາຊົງອະນຸເຄາະແລ້ວ ເຖິງຄວາມເປັນຜູ້ຮູ້ທີ່ຍິ່ງໃຫຍ່

**ອະນິມິດຕະປັນຫາສູດທີ ໙ ຈົບ**

# ໑໐. ສັກກະສູດ

## ວ່າດ້ວຍທ້າວສັກກະ

[໓໔໑] ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະຫາຍໂຕຈາກພຣະເຊຕະວັນໄປຜາກົດໃນເທວະໂລກຊັ້ນຕາວະຕິງສາ ປຽບຄື ບຸຣຸດແຂງແຮງຢຽດແຂນອອກຫຼືຄູ້ແຂນເຂົ້າສັນນັ້ນ ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ໄດ້ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ ວ່າ

ທ່ານຈອມເທບ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າ ເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະທຳເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະທຳເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະທຳເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະທຳເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຯລຯ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໖໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໗໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໘໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໘໐,໐໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບ ດັ່ງນີ້ ວ່າ

ທ່ານຈອມເທບ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າ ເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະທຳເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະທຳເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພຣະທຳເປັນສະຣະນະດີຫຼາຍ ຯລຯ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ ວ່າ

ທ່ານຈອມເທບ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມ

ໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍສີນທີ່ພຣະອະຣິຍະຍິນດີ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ພອງ ເປັນໄທຍ່ແກ່ໂຕ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາ ແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍສີນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ฯລฯ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກ ໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ບໍ່ຂາດ ฯລฯ ເປັນໄປເພື່ອສະມາທິ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ฯລฯ ພ້ອມດ້ວຍເທວະດາ ໖໐໐ ອົງ ฯລฯ ພ້ອມດ້ວຍເທວະດາ ໘໐໐ ອົງ ฯລฯ ພ້ອມດ້ວຍເທວະດາ ໘໐,໐໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບ ດັ່ງນີ້ວ່າ

ທ່ານຈອມເທບ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ฯລฯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ฯລฯ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ບໍ່ຂາດ ฯລฯ ເປັນໄປເພື່ອສະມາທິດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະ ພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຯລຯ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ ວ່າ

ທ່ານຈອມເທບ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າ ເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |
| ໓. ສຸກທິບ | ໔. ຍົດທິບ |
| ໕. ຄວາມເປັນໃຫຍ່ທິບ | ໖. ຮູບທິບ |
| ໗. ສຽງທິບ | ໘. ກິ່ນທິບ |
| ໙. ຣົດທິບ | ໑໐. ໂຜດຖັບພະທິບ |

ການເຖິງພຣະທຳເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະທຳເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມ ຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |
| ໓. ສຸກທິບ | ໔. ຍົດທິບ |
| ໕. ຄວາມເປັນໃຫຍ່ທິບ | ໖. ຮູບທິບ |
| ໗. ສຽງທິບ | ໘. ກິ່ນທິບ |
| ໙. ຣົດທິບ | ໑໐. ໂຜດຖັບພະທິບ |

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |
| ໓. ສຸກທິບ | ໔. ຍົດທິບ |
| ໕. ຄວາມເປັນໃຫຍ່ທິບ | ໖. ຮູບທິບ |
| ໗. ສຽງທິບ | ໘. ກິ່ນທິບ |
| ໙. ຣົດທິບ | ໑໐. ໂຜດຖັບພະທິບ |

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູມີຣະທຸກ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທ ວະດາເຫຼົ່າ

ອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພຣະທຳເປັນສະຣະນະດີຫຼາຍ ຯລຯ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດ ລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ໒. ສຸກທິບ ໓. ຄວາມເປັນໃຫຍ່ທິບ ໗. ສຽງທິບ ໕. ຣົດທິບ ໖. ວັນນະທິບ ໔. ຍົດທິບ ໘. ຮູບທິບ ໙. ກິ່ນທິບ ໑໐. ໂຜດຖັບພະທິບ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໘໐໐ ອົງ ໆລໆ ພ້ອມດ້ວຍເທວະດາ ໗໐໐ ອົງ ໆລໆ ພ້ອມດ້ວຍເທວະດາ ໙໐໐ ອົງ ໆລໆ ພ້ອມດ້ວຍເທວະດາ ໙໐,໐໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບ ດັ່ງນີ້ວ່າ

ທ່ານຈອມເທບ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະພຸດທະເຈົ້າ ເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ໆລໆ ໑໐. ໂຜດຖັບພະທິບ

ການເຖິງພຣະທຳເປັນສະຣະນະດີຫຼາຍ ໆລໆ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດ ລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ໒. ສຸກທິບ ໓. ຄວາມເປັນໃຫຍ່ທິບ ໗. ສຽງທິບ ໕. ຣົດທິບ ໖. ວັນນະທິບ ໔. ຍົດທິບ ໘. ຮູບທິບ ໙. ກິ່ນທິບ ໑໐. ໂຜດຖັບພະທິບ

ທ້າວສັກກະຈອມເທບຕັດ ວ່າ

ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພຣະພຸດທະເຈົ້າເປັນສະຣະນະດີຫຼາຍ ໆລໆ

ການເຖິງພຣະທຳເປັນສະຣະນະດີຫຼາຍ ໆລໆ

ການເຖິງພຣະສົງເປັນສະຣະນະດີຫຼາຍ ຍ້ອນການເຖິງພຣະສົງເປັນສະຣະນະເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |
| ໓. ສຸກທິບ | ໔. ຍົດທິບ |
| ໕. ຄວາມເປັນໃຫຍ່ທິບ | ໖. ຮູບທິບ |
| ໗. ສຽງທິບ | ໘. ກິ່ນທິບ |
| ໙. ຣົດທິບ | ໑໐. ໂຜດຖັບພະທິບ |

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບດັ່ງນີ້ວ່າ

ທ່ານຈອມເທບ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມ ດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳດີຫຼາຍ ຯລຯ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງດີຫຼາຍ ຯລຯ

ການເຖິງພ້ອມດ້ວຍສີນທີ່ພຣະອະຣິຍະຍິນດີ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິດີຫຼາຍ ຍ້ອນການເຖິງພ້ອມດ້ວຍສີນທີ່ພຣະອະຣິຍະຍິນດີ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ທ້າວສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ນິຣະທຸກ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກ ໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ລຳດັບນັ້ນ ທ້າວສັກກະຈອມເທບພ້ອມດ້ວຍເທວະດາ ໕໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໆ໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໗໐໐ ອົງ ຯລຯ ພ້ອມດ້ວຍເທວະດາ ໗໐,໐໐໐ ອົງ ໄດ້ສະເດັດເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບທ້າວສັກກະຈອມເທບ ດັ່ງນີ້ ວ່າ

ທ່ານຈອມເທບ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງ ໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນ ເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່

ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |
| ໓. ສຸກທິບ | ໔. ຍົດທິບ |
| ໕. ຄວາມເປັນໃຫຍ່ທິບ | ໖. ຮູບທິບ |
| ໗. ສຽງທິບ | ໘. ກິ່ນທິບ |
| ໙. ຣົດທິບ | ໑໐. ໂຜດຖັບພະທິບ |

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາ ເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກະຕິ ໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

໑. ອາຍຸທິບ ຯລຯ ໑໐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນໃຫຍ່ແກ່ຕົນ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ໑໐ ປະການ ຄື

| | |
|---|---|
| ໑. ອາຍຸທິບ | ໒. ວັນນະທິບ |

| | |
|---|---|
| ๓. สุกทิบ | ๔. ยิดทิบ |
| ๕. ถวามเป็นใຫย่ทิบ | ๖. ธูบทิบ |
| ๗. สຽງทิบ | ๘. ກິ່ນทิบ |
| ๙. ธົດทิบ | ๑๐. โผดถับพะทิบ |

ท้าวສັກກະຈອມເທບຕັດວ່າ ທ່ານໂມກຄັນລານະຜູ້ບໍລິທຸກ ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯลฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ๑๐ ປະການ ຄື

๑. ອາຍຸທິບ ฯลฯ ๑๐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ฯลฯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳເປັນເຫດ ສັດລາງພວກໃນໂລກນີ້

ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ๑๐ ປະການ ຄື

๑. ອາຍຸທິບ ฯลฯ ๑๐. ໂຜດຖັບພະທິບ

ການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ฯลฯ ເປັນນາບຸນອັນປະເສີດຂອງໂລກ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນ ຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ๑๐ ປະການ ຄື

๑. ອາຍຸທິບ ฯลฯ ๑๐. ໂຜດຖັບພະທິບ

ທ່ານໂມກຄັນລານະຜູ້ບໍລິທຸກ ການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີ ບໍ່ຂາດ ฯลฯ ເປັນໄປເພື່ອສະມາທິ ດີຫຼາຍ ຍ້ອນການເຖິງພ້ອມດ້ວຍສິນທີ່ພຣະອະຣິຍະຍິນດີເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫຼົ່ານັ້ນຍ່ອມຄອບງຳເທວະດາເຫຼົ່າອື່ນດ້ວຍຖານະ ๑๐ ປະການ ຄື

໑. ອາຍຸທິບ
໒. ສຸກທິບ
໓. ຄວາມເປັນໃຫຍ່ທິບ
໔. ສຽງທິບ
໕. ຣົດທິບ
໖. ວັນນະທິບ
໗. ຍົດທິບ
໘. ຮູບທິບ
໙. ກິ່ນທິບ
໑໐. ໂຜດຖັບພະທິບ

**ສັກກະສູດທີ ໑໐ ຈົບ**

# ໑໑. ຈັນທະນະສູດ

## ວ່າດ້ວຍຈັນທະນະເທບພະບຸດ

[໓໔໒] ຄັ້ງນັ້ນ ຈັນທະນະເທບພະບຸດ ຯລຯ
ຄັ້ງນັ້ນ ສຸຍາມະເທບພະບຸດ ຯລຯ
ຄັ້ງນັ້ນ ສັນດຸສິດເທບພະບຸດ ຯລຯ
ຄັ້ງນັ້ນ ສຸນິມມິດເທບພະບຸດ ຯລຯ
ຄັ້ງນັ້ນ ວະສະວັດຕິເທບພະບຸດ ຯລຯ

(ເປີຍຍາລະທັງ ໕ ນີ້ເພິ່ງຄະຫຍາຍໃຫ້ພິດສະດານຄືສັກກະສູດ)

**ຈັນທະນະສູດທີ ໑໑ ຈົບ**

# ລວມພຣະສູດທີ່ມີໃນສັງຍຸດນີ້ ຄື

໑. ປະຖະມັດຊານະປັນຫາສູດ
໒. ຕະຕິຍັດຊານະປັນຫາສູດ
໓. ອາກາສານັນຈາຍະຕະນະປັນຫາສູດ
໔. ອາກິນຈັນຍາຍະຕະນະປັນຫາສູດ
໕. ອະນິມິດຕະປັນຫາສູດ
໖. ທຸຕິຍັດຊານະປັນຫາສູດ
໗. ຈະຕຸດຖັດຊານະປັນຫາສູດ
໘. ວິນຍານັນຈາຍະຕະນະປັນຫາສູດ
໙. ເນວະສັນຍານາສັນຍາຍະຕະນະປັນຫາສູດ
໑໐. ສັກກະສູດ
໑໑. ຈັນທະນະສູດ

**ໂມກຄັນລານະສັງຍຸດ ຈົບບໍລິບູນ**

# ໗. ຈິດຕະສັງຍຸດ

## ໑. ສັນໂຍຊະນະສູດ

### ວ່າດ້ວຍສັງໂຍດ

[໓໔໓] ສະໄໝໜຶ່ງ ພິກຂຸຜູ້ເປັນເຖຣະຫຼາຍອົງຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາ ສັນສະໄໝນັ້ນ ພິກຂຸຜູ້ເປັນເຖຣະຫຼາຍອົງກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນຢູ່ຜາມໄດ້ສົນທະນາກັນຂຶ້ນວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີ ພະຍັນຊະນະຕ່າງກັນ ຫຼື ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ

ບັນດາພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີ ພະຍັນຊະນະຕ່າງກັນລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ

ສະໄໝນັ້ນ ຈິດຕະຄະຫະບໍດີ ໄດ້ໄປສູ່ບ້ານສ່ວຍຊື່ ມິຄະປະຖະກະດ້ວຍກິດທີ່ຄວນເຮັດບາງຢ່າງ

ທ່ານຈິດຕະຄະຫະບໍດີໄດ້ຍິນຂ່າວວ່າ ພິກຂຸຜູ້ເປັນເຖຣະຫຼາຍອົງກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນຢູ່ຜາມໄດ້ສົນທະນາກັນຂຶ້ນ ວ່າ

ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີ ພະຍັນຊະນະຕ່າງກັນ ຫຼື ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ

ບັນດາພິກຂຸຜູ້ເປັນເຖຣະເຫຼົ່ານັ້ນ ລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ

ລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ

ຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມພິກຂຸຜູ້ເປັນເຖຣະດັ່ງນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ຂ້ານ້ອຍໄດ້ຍິນຂ່າວວ່າ ພິກຂຸຜູ້ເປັນເຖຣະຫຼາຍອົງກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດ

ແລ້ວ ນັ່ງປະຊຸມກັນຢູ່ຫາມໄດ້ສົນທະນາກັນຂຶ້ນວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີ ພະຍັນຊະນະ ຕ່າງກັນ ຫຼື ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ

ລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີ ພະຍັນຊະນະຕ່າງກັນ

ລາງພວກຕອບວ່າ ຜູ້ມີອາຍຸທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນແມ່ນບໍ?

ພິກຂຸຜູ້ເປັນເຖຣະເຫຼົ່ານັ້ນຕອບວ່າ ຈະເລີນພອນ ຄະຫະບໍດີ ຈິດຕະຄະຫະບໍດີກ່າວວ່າ ທ່ານຜູ້ຈະເລີນທັງຫຼາຍ ທຳເຫຼົ່ານີ້ ຄື ສັງໂຍດກໍດີ ທຳທີ່ເກື້ອກູນແກ່ສັງໂຍດກໍດີ ມີ ອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ທ່ານຜູ້ຈະເລີນທັງຫຼາຍ ຖ້າຈັ່ງຊັ້ນ ຂ້ານ້ອຍຈັກຍົກອຸປະມາໃຫ້ທ່ານທັງຫຼາຍຟັງ ຍ້ອນວິນຍູຊົນລາງພວກໃນໂລກນີ້ ຍ່ອມເຂົ້າໃຈເນື້ອຄວາມແຫ່ງພາສິດໄດ້ແມ່ນດ້ວຍການອຸປະມາ

ປຽບຄື ງົວດຳກັບງົວຂາວເຂົາມັດຕິດກັນດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ຜູ້ໃດເພິ່ງກ່າວແນວນີ້ວ່າ ງົວດຳກ່ຽວເນື່ອງກັບງົວຂາວ ງົວຂາວກ່ຽວເນື່ອງກັບງົວດຳ ຜູ້ນັ້ນເມື່ອກ່າວເພິ່ງກ່າວຖືກຕ້ອງບໍ?

ບໍ່ຖືກຕ້ອງ ຄະຫະບໍດີ ງົວດຳບໍ່ກ່ຽວເນື່ອງກັບງົວຂາວ ແມ່ນງົວຂາວກໍບໍ່ກ່ຽວເນື່ອງກັບງົວດຳ ແຕ່ງົວທັງສອງນັ້ນ ຖືກເຂົາມັດດ້ວຍເຊືອກຄ່າວ ຫຼື ດ້ວຍເຊືອກເສັ້ນດຽວກັນ ເຊືອກຄ່າວ ຫຼື ເຊືອກນັ້ນ ຈຶ່ງກ່ຽວເນື່ອງໃນງົວທັງສອງນັ້ນ

ທ່ານຜູ້ຈະເລີນທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ຕາບໍ່ກ່ຽວຂ້ອງກັບຮູບ ຮູບກໍບໍ່ກ່ຽວຂ້ອງກັບຕາ ແຕ່ຍ້ອນອາໄສຕາ ແລະ ຮູບທັງສອງນັ້ນສັນທະຣາຄະ ຈຶ່ງເກີດຂຶ້ນ ຕາ ແລະຮູບນັ້ນ ຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ຫູ ບໍ່ກ່ຽວຂ້ອງກັບ ສຽງ ຯລຯ
ດັງ ບໍ່ກ່ຽວຂ້ອງກັບ ກິ່ນ ຯລຯ
ລີ້ນ ບໍ່ກ່ຽວຂ້ອງກັບ ຣົດ ຯລຯ

ກາຍ ບໍ່ກ່ຽວຂ້ອງກັບ ໂຜດຖັບພະ ໂຜດຖັບພະກໍບໍ່ກ່ຽວຂ້ອງກັບກາຍ ແຕ່ຍ້ອນອາໄສກາຍແລະໂຜດຖັບພະທັງສອງນັ້ນ ສັນທະຣາຄະຈຶ່ງເກີດຂຶ້ນ ກາຍແລະໂຜດຖັບພະນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ໃຈບໍ່ກ່ຽວຂ້ອງກັບທຳມາຣົມ ທຳມາຣົມກໍບໍ່ກ່ຽວຂ້ອງກັບໃຈ ແຕ່ຍ້ອນອາໄສໃຈແລະທຳມາຣົມທັງສອງນັ້ນສັນທະຣາຄະຈຶ່ງເກີດຂຶ້ນ ໃຈ ແລະ ທຳມາຣົມນັ້ນຈຶ່ງກ່ຽວຂ້ອງໃນສັນທະຣາຄະນັ້ນ

ຄະຫະບໍດີ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ທີ່ປັນຍາຈັກຂຸຂອງທ່ານຢັ່ງລົງໃນພຣະພຸດທະພົດທີ່ເລິກເຊິ່ງ

**ສັນໂຍຊະນະສູດທີ ໑ ຈົບ**

# ໔. ປະຖົມອິສິທັດຕະສູດ

## ວ່າດ້ວຍພຣະອິສິທັດຕະ ສູດທີ ໑

[໓໔໔] ສະໄໝໜຶ່ງ ພິກຂຸຜູ້ເປັນເຖຣະຫຼາຍອົງ ຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາສັນຄຣັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບພິກຂຸຜູ້ເປັນເຖຣະເຫຼົ່ານັ້ນດັ່ງນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ຂໍພຣະເຖຣະທັງຫຼາຍ ໂຜດຮັບພັດຕາຫານຂອງຂ້ານ້ອຍໃນມື້ອື່ນນີ້ເທີ້ນ

ພິກຂຸຜູ້ເປັນເຖຣະທັງຫຼາຍ ໄດ້ຮັບອາຣາດທະນາໂດຍດຸດສະນີພາບ ລຳດັບນັ້ນ ຈິດຕະຄະຫະບໍດີ ຮູ້ວ່າພິກຂຸຜູ້ເປັນເຖຣະທັງຫຼາຍ ຮັບອາຣາດທະນາແລ້ວຈຶ່ງລຸກຈາກບ່ອນນັ່ງ ໄຫວ້ແລ້ວ ທຳປະທັກຂິນແລ້ວຈາກໄປ

ເມື່ອຄືນນັ້ນຜ່ານໄປ ຕອນເຊົ້າພິກຂຸຜູ້ເປັນເຖຣະທັງຫຼາຍ ຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ທີ່ຢູ່ຂອງຈິດຕະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະເຖຣະວ່າ ທ່ານຜູ້ຈະເລີນ ທີ່ກ່າວກັນວ່າ ທາດຕ່າງ ໆ ທາດຕ່າງ ໆ ດ້ວຍເຫດພຽງທໍ່ໃດນໍ? ພຣະຜູ້ມີພຣະພາກເຈົ້າ ຈຶ່ງຕັດວ່າທາດຕ່າງ ໆ ເມື່ອຈິດຕະຄະຫະບໍດີຖາມແນວນີ້ແລ້ວ ທ່ານພຣະເຖຣະໄດ້ມິດຢູ່

ແມ່ນເທື່ອທີ ໒ ຈິດຕະຄະຫະບໍດີ ກໍໄດ້ຮຽນຖາມວ່າ ທ່ານຜູ້ຈະເລີນ ທີ່ກ່າວກັນວ່າ ທາດຕ່າງ ໆ ທາດຕ່າງ ໆ ດ້ວຍເຫດພຽງທໍ່ໃດນໍ? ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າທາດຕ່າງ ໆ ແມ່ນເທື່ອທີ ໒ ທ່ານພຣະເຖຣະກໍໄດ້ມິດຢູ່

ແມ່ນເທື່ອທີ ໓ ຈິດຕະຄະຫະບໍດີ ກໍໄດ້ຮຽນຖາມວ່າ ທ່ານຜູ້ຈະເລີນ ທີ່ກ່າວກັນວ່າ ທາດ

ຕ່າງ ໆ ທາດຕ່າງ ໆ ດ້ວຍເຫດພຽງທໍ່ໃດບໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າທາດຕ່າງ ໆ ແມ່ນເທື່ອທີ ໓ ທ່ານພຣະເຖຣະກໍໄດ້ມິດຢູ່

ສະໄໝນັ້ນ ທ່ານພຣະອິສິທັດຕະເປັນຜູ້ໃໝ່ກວ່າ ພິກຂຸທຸກອົງໃນໝູ່ພິກຂຸນັ້ນ ຂະນະນັ້ນ ທ່ານພຣະອິສິທັດຕະໄດ້ກ່າວກັບທ່ານພຣະເຖຣະດັ່ງນີ້ວ່າ ຂ້ານ້ອຍ ຂໍຕອບບັນຫາຂໍ້ນີ້ຂອງຈິດຕະ ຄະຫະບໍດີເອງ

ພຣະເຖຣະກ່າວວ່າ ອິສິທັດຕະ ທ່ານຈົ່ງຕອບບັນຫາຂໍ້ນີ້ຂອງຈິດຕະຄະຫະບໍດີເທີ້ນ

ທ່ານພຣະອິສິທັດຕະໄດ້ຖາມວ່າ ຄະຫະບໍດີ ທ່ານຖາມວ່າ ທ່ານຜູ້ຈະເລີນ ທີ່ກ່າວກັນວ່າ ທາດຕ່າງ ໆ ທາດຕ່າງ ໆ ດ້ວຍເຫດພຽງທໍ່ໃດບໍ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າທາດຕ່າງ ໆ ແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າຕັດທາດຕ່າງ ໆ ໄວ້ດັ່ງນີ້ວ່າ ຈັກຂຸທາດ ຣູບທາດ ຈັກຂຸວິນຍານທາດ ฯລฯ ມະໂນທາດ ທຳມະທາດ ມະໂນວິນຍານທາດ ດ້ວຍເຫດພຽງທໍ່ນີ້ແລ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດວ່າທາດຕ່າງ ໆ

ລຳດັບນັ້ນ ຈິດຕະຄະຫະບໍດີ ຊົມຊື່ນ ຍິນດີພາສິດຂອງທ່ານອິສິທັດຕະ ໄດ້ນຳຂອງຂົບ ສັນອັນປະນີດປະເຄນພິກຂຸຜູ້ເປັນເຖຣະທັງຫຼາຍ ໃຫ້ອີ່ມໜຳດ້ວຍຕົນເອງ ຂະນະນັ້ນ ພິກຂຸຜູ້ ເປັນເຖຣະທັງຫຼາຍສັນສຳເລັດແລ້ວວາງມືຈາກບາດ ລຸກຈາກອາສະນະແລ້ວຈາກໄປ

ຕໍ່ມາ ທ່ານພຣະເຖຣະໄດ້ກ່າວກັບທ່ານພຣະອິສິທັດຕະດັ່ງນີ້ວ່າ ດີແລ້ວ ທ່ານອິສິທັດຕະ ບັນຫາຂໍ້ນີ້ແຈ່ມແຈ້ງແກ່ທ່ານ ບໍ່ແຈ່ມແຈ້ງແກ່ຂ້ານ້ອຍ ຖ້າຈັ່ງຊັ້ນ ເມື່ອບັນຫາແນວນີ້ມາເຖິງແມ່ນ ໂດຍປະການອື່ນ ທ່ານເພິ່ງຕອບບັນຫານັ້ນເທີ້ນ

**ປະຖົມອິສິທັດຕະສູດທີ ๘ ຈົບ**

# ๓. ທຸຕິຍະອິສິທັດຕະສູດ

## ວ່າດ້ວຍພຣະອິສິທັດຕະ ສູດທີ ๘

[๓๔๕] ສະໄໝໜຶ່ງ ພິກຂຸຜູ້ເປັນເຖຣະຫຼາຍອົງຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາ ສັນຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່

ບ່ອນທີ່ສົມຄວນ ໄດ້ອາຣາດທະນາວ່າ ທ່ານຜູ້ຈະເລີນທັງຫຼາຍ ຂໍພຣະເຖຣະທັງຫຼາຍໂຜດຮັບພັດຕາຫານຂອງຂ້ານ້ອຍໃນມື້ອື່ນນີ້ເທີ້ນ

ພິກຂຸຜູ້ເປັນເຖຣະທັງຫຼາຍ ຮັບອາຣາດທະນາໂດຍດຸດສະນີພາບ ລຳດັບນັ້ນ ຈິດຕະຄະຫະບໍດີຮູ້ວ່າພິກຂຸຜູ້ເປັນເຖຣະທັງຫຼາຍ ຮັບອາຣາດທະນາແລ້ວຈຶ່ງລຸກຈາກບ່ອນນັ່ງ ໄຫວ້ແລ້ວກະທຳປະທັກຂິນແລ້ວຈາກໄປ

ເມື່ອຄືນນັ້ນຜ່ານໄປ ຕອນເຊົ້າພິກຂຸທັງຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ທີ່ຢູ່ຂອງຈິດຕະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະເຖຣະດັ່ງນີ້ວ່າ ທ່ານຜູ້ຈະເລີນ ທິດຖິຫຼາຍຢ່າງເກີດຂຶ້ນໃນໂລກວ່າ ໂລກທ່ຽງ ຫຼືໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດ ເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ທິດຖິ ໖໒ ແນວນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວໃນພຣົມຊາລະສູດ ທ່ານຜູ້ຈະເລີນ ເມື່ອອັນໃດມີ ທິດຖິເຫຼົ່ານີ້ຈຶ່ງມີ ເມື່ອອັນໃດບໍ່ມີ ທິດຖິເຫຼົ່ານີ້ຈຶ່ງບໍ່ມີ ເມື່ອຈິດຕະຄະຫະບໍດີຖາມແນວນີ້ແລ້ວ ທ່ານພຣະເຖຣະໄດ້ມິດຢູ່

ແມ່ນເທື່ອທີ ໒ ຈິດຕະຄະຫະບໍດີ ฯລฯ

ແມ່ນເທື່ອທີ ໓ ຈິດຕະຄະຫະບໍດີກໍໄດ້ຮຽນຖາມວ່າ ທ່ານຜູ້ຈະເລີນ ທິດຖິຫຼາຍຢ່າງເກີດຂຶ້ນໃນໂລກວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ແລະ ບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດ ອີກກໍບໍ່ແມ່ນ ທິດຖິ ໖໒ ແນວນີ້ພຣະຜູ້ມີພຣະພາກເຈົ້າ ຕັດໄວ້ແລ້ວໃນພຣົມຊາລະສູດທ່ານຜູ້ຈະເລີນ ເມື່ອອັນໃດມີ ທິດຖິເຫຼົ່ານີ້ຈຶ່ງມີ ເມື່ອອັນໃດບໍ່ມີ ທິດຖິເຫຼົ່ານີ້ຈຶ່ງບໍ່ມີ ແມ່ນເທື່ອທີ ໓ ທ່ານພຣະເຖຣະກໍໄດ້ມິດຢູ່

ສະໄໝນັ້ນ ທ່ານພຣະອິສິທັດຕະເປັນຜູ້ໃໝ່ກວ່າພິກຂຸທຸກອົງໃນໝູ່ພິກຂຸນັ້ນ ຂະນະນັ້ນທ່ານພຣະອິສິທັດຕະໄດ້ກ່າວກັບທ່ານພຣະເຖຣະດັ່ງນີ້ວ່າ ຂ້ານ້ອຍ ຂໍຕອບບັນຫາຂໍ້ນີ້ຂອງຈິດຕະຄະຫະບໍດີເອງ

ພຣະເຖຣະກ່າວວ່າ ອິສິທັດຕະ ທ່ານຈົ່ງຕອບບັນຫາຂໍ້ນີ້ຂອງຈິດຕະຄະຫະບໍດີເທີ້ນ

ທ່ານພຣະອິສິທັດຕະໄດ້ຖາມວ່າ ຄະຫະບໍດີ ທ່ານຖາມວ່າ ທ່ານຜູ້ຈະເລີນ ທິດຖິຫຼາຍຢ່າງເກີດຂຶ້ນໃນໂລກວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຯລຯ ທ່ານຜູ້ຈະເລີນ ເມື່ອອັນໃດມີ ທິດຖິເຫຼົ່ານີ້ຈຶ່ງມີ ເມື່ອອັນໃດບໍ່ມີ ທິດຖິເຫຼົ່ານີ້ຈຶ່ງບໍ່ມີ

ບໍເປັນແນວນັ້ນ ຂ້ານ້ອຍ

ຄະຫະບໍດີ ທິດຖິຫຼາຍຢ່າງເກີດຂຶ້ນໃນໂລກວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼືໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນຈະວ່າບໍ່ເກີດອີກກໍບໍ່ແມ່ນ ທິດຖິ ໖໔ ແນວນີ້ພຣະຜູ້ມີພຣະພາກເຈົ້າໄດ້ ຕັດໄວ້ແລ້ວໃນພຣົມຊາລະສູດຄະຫະບໍດີ ເມື່ອສັກກາຍະທິດຖິ (ຄວາມເຫັນວ່າເປັນກາຍຂອງຕົນ) ມີ ທິດຖິເຫຼົ່ານີ້ຈຶ່ງມີ ເມື່ອສັກກາຍະທິດຖິບໍ່ມີ ທິດຖິເຫຼົ່ານີ້ຈຶ່ງບໍ່ມີ

ທ່ານຜູ້ຈະເລີນ ສັກກາຍະທິດຖິຍ່ອມມີໄດ້ແນວໃດ?

ຄະຫະບໍດີ ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ

ຄະຫະບໍດີ ສັກກາຍະທິດຖິຍ່ອມມີໄດ້ຢ່າງນີ້ແລ

ທ່ານຜູ້ຈະເລີນ ສັກກາຍະທິດຖິຍ່ອມມີບໍ່ໄດ້ແນວໃດ?

ຄະຫະບໍດີ ອະຣິຍະສາວົກໃນສາດສະໜານີ້ຜູ້ໄດ້ສະດັບ ໄດ້ເຫັນພຣະອະຣິຍະ ສະຫຼາດໃນທຳຂອງພຣະອະຣິຍະ ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ໄດ້ເຫັນສັດຕະບຸຣຸດ ສະຫຼາດໃນທຳຂອງສັດຕະບຸຣຸດ ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ບໍ່ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ ບໍ່ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ

ບໍ່ພິຈາລະນາ ເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ ຄະຫະບໍດີ ສັກກາຍະທິດຖິຍ່ອມມີບໍ່ໄດ້ຢ່າງນີ້ແລ

ທ່ານຜູ້ຈະເລີນ ພຣະຜູ້ເປັນເຈົ້າອິສິທັດຕະມາຈາກໄສ

ຄະຫະບໍດີ ອາຕະມາພາບມາຈາກອະວັນຕີຊົນນະບົດ

ທ່ານຜູ້ຈະເລີນ ກຸນລະບຸດຊື່ ອິສິທັດຕະ ໃນອະວັນຕີຊົນນະບົດ ເຊິ່ງເປັນສະຫາຍທີ່ບໍ່ເຄີຍເຫັນຂອງຂ້ານ້ອຍ ອອກບັນພະຊາມີຢູ່ ພຣະຜູ້ເປັນເຈົ້າເຄີຍເຫັນທ່ານບໍ?

ຈະເລີນພອນ ຄະຫະບໍດີ

ທ່ານຜູ້ຈະເລີນ ດຽວນີ້ທ່ານຢູ່ບ່ອນໃດ?

ເມື່ອຈິດຕະຄະຫະບໍດີຖາມແນວນີ້ແລ້ວ ທ່ານພຣະອິສິທັດຕະໄດ້ມິດຢູ່

ທ່ານຜູ້ຈະເລີນ ທ່ານພຣະອິສິທັດຕະຂອງຂ້ານ້ອຍຄືພຣະຜູ້ເປັນເຈົ້າບໍ?

ຈະເລີນພອນ ຄະຫະບໍດີ

ທ່ານຜູ້ຈະເລີນ ຂໍພຣະຜູ້ເປັນເຈົ້າອິສິທັດຕະ ຈົ່ງຍິນດີອຳພາຕະກະວັນອັນໜ້າອອນຊອນເຂດເມືອງມັດສິກາສັນເທີ້ນ ຂ້ານ້ອຍຈັກບຳລຸງພຣະຜູ້ເປັນເຈົ້າດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ

ພໍ່ອອກເວົ້າໄດ້ດີຫຼາຍ

ລຳດັບນັ້ນ ຈິດຕະຄະຫະບໍດີຊົມຊື່ນ ຍິນດີພາສິດຂອງທ່ານອິສິທັດຕະແລ້ວ ໄດ້ນຳຂອງຂົບສັນ ອັນປະນີດປະເຄນພິກຂຸຜູ້ເປັນເຖຣະທັງຫຼາຍ ໃຫ້ອີ່ມໜຳດ້ວຍຕົນເອງ ຂະນະນັ້ນພິກຂຸຜູ້ເປັນເຖຣະທັງຫຼາຍສັນສຳເລັດແລ້ວ ວາງມືຈາກບາດ ລຸກຈາກອາສະນະແລ້ວຈາກໄປ

ຕໍ່ມາ ທ່ານພຣະເຖຣະໄດ້ກ່າວກັບທ່ານພຣະອິສິທັດຕະດັ່ງນີ້ວ່າ ດີແລ້ວ ທ່ານອິສິທັດຕະບັນຫາຂໍ້ນີ້ແຈ່ມແຈ້ງແກ່ທ່ານ ບໍ່ແຈ່ມແຈ້ງແກ່ຂ້ານ້ອຍ ຖ້າຈັ່ງຊັ້ນ ເມື່ອບັນຫາແນວນີ້ມາເຖິງແມ່ນໂດຍປະການອື່ນ ທ່ານເພິ່ງຕອບບັນຫານັ້ນແລ

ລຳດັບນັ້ນ ທ່ານພຣະອິສິທັດຕະເກັບມ້ຽນເສນາສະນະແລ້ວ ຖືບາດແລະຈີວອນຈາກໄປຈາກເມືອງມັດສິກາສັນໄດ້ຈາກໄປແລ້ວ ບໍ່ກັບມາອີກ

**ທຸຕິຍະອິສິທັດຕະສູດທີ ໓ ຈົບ**

# ໔. ມະຫະກະປາຕິຫາຣິຍະສູດ

## ວ່າດ້ວຍພຣະມະຫະກະສະແດງປາຕິຫານ

[໓໔໗] ສະໄໝໜຶ່ງ ພິກຂຸຜູ້ເປັນເຖຣະຫຼາຍອົງຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາ ສັນຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ອາຣາດທະນາວ່າ ທ່ານຜູ້ຈະເລີນທັງຫຼາຍ ຂໍພຣະເຖຣະທັງຫຼາຍ ໂຜດຮັບພັດຕາຫານຢູ່ໂຮງງົວຂອງຂ້ານ້ອຍໃນມື້ອື່ນນີ້ເທີ້ນ

ພິກຂຸຜູ້ເປັນເຖຣະທັງຫຼາຍ ໄດ້ຮັບອາຣາດທະນາໂດຍດຸດສະນີພາບ ລຳດັບນັ້ນ ຈິດຕະຄະຫະບໍດີ ຮູ້ວ່າພິກຂຸຜູ້ເປັນເຖຣະທັງຫຼາຍ ຮັບອາຣາດທະນາແລ້ວຈຶ່ງລຸກຈາກບ່ອນນັ່ງ ໄຫວ້ແລ້ວ ກະທຳປະທັກຂິນແລ້ວຈາກໄປ

ເມື່ອຄືນນັ້ນຜ່ານໄປ ຕອນເຊົ້າພິກຂຸຜູ້ເປັນເຖຣະທັງຫຼາຍຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ທີ່ຢູ່ຂອງຈິດຕະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ

ລຳດັບນັ້ນ ຈິດຕະຄະຫະບໍດີໄດ້ນຳເຂົ້າປາຍາດປຸງດ້ວຍເນີຍໃສແນວປະນີດປະເຄນພິກຂຸຜູ້ເປັນເຖຣະທັງຫຼາຍ ໃຫ້ອີ່ມໜຳດ້ວຍຕົນເອງ ຂະນະນັ້ນ ພິກຂຸຜູ້ເປັນເຖຣະທັງຫຼາຍ ສັນສຳເລັດແລ້ວວາງມືຈາກບາດ ລຸກຈາກອາສະນະແລ້ວຈາກໄປ

ຝ່າຍຈິດຕະຄະຫະບໍດີໄດ້ກ່າວວ່າ ພວກທ່ານຈົ່ງຖິ້ມເສດອາຫານທີ່ເຫຼືອ ແລ້ວຍ່າງຕາມຫຼັງພິກຂຸຜູ້ເປັນເຖຣະທັງຫຼາຍໄປ ເວລານັ້ນ ອາກາດຮ້ອນຫຼາຍ ພິກຂຸຜູ້ເປັນເຖຣະທັງຫຼາຍມີກາຍຄ້າຍກັບກະປົກກະເປ້ຍຍ່າງໄປ ທັງທີ່ສັນອາຫານແລ້ວ

ສະໄໝນັ້ນ ທ່ານພຣະມະຫະກະເປັນຜູ້ໃໝ່ກວ່າພິກຂຸທຸກອົງໃນໝູ່ພິກຂຸນັ້ນ ຂະນະນັ້ນ ທ່ານໄດ້ຮຽນກັບທ່ານພຣະເຖຣະດັ່ງນີ້ວ່າ ທ່ານຜູ້ຈະເລີນ ດີແທ້ນໍ ຖ້າມີລົມເຢັນພັດໂຊຍມາ ມີສຽງຟ້າຮ້ອງ ແລະຝົນໂຮຍລົງມາເທື່ອລະເມັດ

ພຣະເຖຣະກ່າວວ່າ ທ່ານພຣະມະຫະກະ ດີແທ້ນໍ ຖ້າມີລົມເຢັນພັດໂຊຍມາ ມີສຽງຟ້າຮ້ອງ ແລະຝົນໂຮຍລົງມາເທື່ອລະເມັດ

ລຳດັບນັ້ນ ທ່ານພຣະມະຫະກະໄດ້ບັນດານລິດ ໃຫ້ມີລົມເຢັນພັດໂຊຍມາ ມີສຽງຟ້າຮ້ອງ ແລະຝົນໂຮຍລົງມາເທື່ອລະເມັດ

ລຳດັບນັ້ນ ຈິດຕະຄະຫະບໍດີໄດ້ຄິດວ່າ ພິກຂຸຜູ້ໃໝ່ກວ່າພິກຂຸທຸກອົງໃນໝູ່ພິກຂຸນີ້ເປັນຜູ້ມີຣິດທານຸພາບປານນີ້

ໃນຂະນະນັ້ນ ທ່ານພຣະມະຫະກະໄປເຖິງອາຣາມແລ້ວ ໄດ້ກ່າວກັບທ່ານພຣະເຖຣະວ່າ ທ່ານພຣະເຖຣະຜູ້ຈະເລີນ ການບັນດານລົດພຽງທໍ່ນີ້ພໍແລ້ວບໍ?

ທ່ານພຣະເຖຣະກ່າວວ່າ ທ່ານມະຫະກະ ພໍແລ້ວ ທ່ານເຮັດໄດ້ແລ້ວ ບູຊາແລ້ວຕໍ່ມາພິກຂຸຜູ້ເປັນເຖຣະທັງຫຼາຍ ໄດ້ໄປສູ່ບ່ອນຢູ່ຄືເກົ່າ ແມ່ນທ່ານພຣະມະຫະກະກໍໄປສູ່ບ່ອນຢູ່ຂອງຕົນ

ລຳດັບນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາທ່ານພຣະມະຫະກະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂໍຮ້ອງວ່າ ທ່ານຜູ້ຈະເລີນ ຂໍໂອກາດ ຂໍພຣະຜູ້ເປັນເຈົ້າມະຫະກໍໄດ້ໂຜດສະແດງອິດທິປາຕິຫານ ທີ່ເປັນທຳອັນຍິ່ງກວ່າທຳຂອງມະນຸດແກ່ຂ້ານ້ອຍແດ່ເທີ້ນ

ທ່ານພຣະມະຫະກະກ່າວວ່າ ຄະຫະບໍດີ ຖ້າຈັ່ງຊັ້ນ ທ່ານຈົ່ງປູຜ້າຫົ່ມຢູ່ລະບຽງແລ້ວເຂ່ຍຟ່ອນຫຍ້າໃສ່ໄວ້

ຈິດຕະຄະຫະບໍດີຮັບຄຳຂອງທ່ານພຣະມະຫະກະແລ້ວ ປູຜ້າຫົ່ມທີ່ລະບຽງເຂ່ຍຟ່ອນຫຍ້າໃສ່ໄວ້ ຂະນະນັ້ນ ທ່ານພຣະມະຫະກະເຂົ້າໄປສູ່ວິຫານສອດຫຼິ່ມແລ້ວ ໄດ້ບັນດານລົດໃຫ້ນ້ຳໄຟອອກທາງ ປ່ອງລູກກະແຈ ແລະ ລະຫວ່າງກອນປະຕູ ໃຫ້ໄໝ້ຫຍ້າ ແຕ່ບໍ່ໃຫ້ໄໝ້ຜ້າຫົ່ມ ຈິດຕະຄະຫະບໍດີຕົກໃຈກຳຈັດຜ້າຫົ່ມ ໄດ້ຢືນຂົນລຸກຢູ່ທີ່ສ່ວນຂ້າງໜຶ່ງ

ທ່ານພຣະມະຫະກະອອກຈາກບ່ອນຢູ່ແລ້ວ ໄດ້ຖາມຈິດຕະຄະຫະບໍດີດັ່ງນີ້ວ່າ ຈິດຕະຄະຫະບໍດີ ການບັນດານລົດພຽງທໍ່ນີ້ພໍແລ້ວບໍ?

ຈິດຕະຄະຫະບໍດີກ່າວວ່າ ທ່ານມະຫະກະ ພໍແລ້ວ ທ່ານເຮັດໄດ້ດີແລ້ວ ບູຊາດີແລ້ວ ຂໍອັນຍາເຈົ້າມະຫະກະ ຈົ່ງຍິນດີອຳພາຕະກະວັນອັນໜ້າອອນຊອນ ເຂດເມືອງມັດສິກາຢູ່ເທີ້ນ ຂ້ານ້ອຍ ຈັກບຳລຸງພຣະຜູ້ເປັນເຈົ້າດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານ

ພໍ່ອອກເວົ້າໄດ້ດີ

ຕໍ່ມາ ທ່ານພຣະມະຫະກະເກັບມ້ຽນເສນາສະນະແລ້ວ ຖືບາດ ແລະຈີວອນຈາກໄປຈາກເມືອງມັດສິກາສັນໄດ້ຈາກໄປແລ້ວ ບໍ່ກັບມາອີກ

**ມະຫະກະປາຕິຫາຣິຍະສູດທີ ໔ ຈົບ**

# ໕. ປະຖົມກາມະພູສູດ

## ວ່າດ້ວຍພຣະກາມະພູ ສູດທີ ໑

[໓໔໗] ສະໄໝໜຶ່ງ ທ່ານພຣະກາມະພູຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາສັນຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາທ່ານພຣະກາມະພູຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະກາມະພູໄດ້ກ່າວ ວ່າ

ຈິດຕະຄະຫະບໍດີ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ດັ່ງນີ້ ວ່າ
ທ່ານຈົ່ງເບິ່ງລົດ ເຊິ່ງມີສ່ວນປະກອບອັນບໍ່ມີໂທດ
ມີຫຼັງຄາຂາວ ມີເພົາດຽວ ບໍ່ມີທຸກ
ແລ່ນໄປເຖິງທີ່ໝາຍ ຕັດກະແສ ບໍ່ມີເຄື່ອງມັດ

ທ່ານຈະເພິ່ງເຫັນເນື້ອຄວາມແຫ່ງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ຫຍໍ້ນີ້ໂດຍພິດສະດານໄດ້ແນວໃດ?

ທ່ານຜູ້ຈະເລີນ ທຳນີ້ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແມ່ນບໍ?

ຈະເລີນພອນ ຄະຫະບໍດີ

ທ່ານຜູ້ຈະເລີນ ຖ້າຈັ່ງຊັ້ນ ຂໍທ່ານໂຜດຖ້າຈັກໜ້ອຍ ຈົນກວ່າກະຂ້ານ້ອຍຈັກພິຈາລະນາເນື້ອຄວາມແຫ່ງທຳນັ້ນໄດ້

ລຳດັບນັ້ນ ຈິດຕະຄະຫະບໍດີມິດຢູ່ບຶດໜຶ່ງ ແລ້ວໄດ້ຕອບທ່ານພຣະກາມະພູດັ່ງນີ້ວ່າ

ທ່ານຜູ້ຈະເລີນ ຄຳວ່າ ສ່ວນປະກອບອັນບໍ່ມີໂທດ ເປັນຊື່ຂອງ ສິນ

ຄຳວ່າ ຫຼັງຄາຂາວ ເປັນຊື່ຂອງ ວິມຸດຕິ
ຄຳວ່າ ເພົາດຽວ ເປັນຊື່ຂອງ ສະຕິ
ຄຳວ່າ ແລ່ນໄປ ເປັນຊື່ຂອງການກ້າວໄປ ແລະ ການຖອຍກັບ

ຄຳວ່າ ລົດ ເປັນຊື່ຂອງກາຍນີ້ ເຊິ່ງປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນໄວຍ້ອນເຂົ້າສຸກ ແລະ ເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບຕ້ອງນວດເຟັ້ນ ມີອັນແຕກ ກະຈັດກະຈາຍໄປເປັນທຳມະດາ ທ່ານຜູ້ຈະເລີນ ຣາຄະເປັນທຸກ ໂທສະເປັນທຸກ ໂມຫະເປັນທຸກ ທຸກເຫຼົ່ານັ້ນ ພິກຂຸຂີນາສົບລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກ

ກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ພິກຂຸຂີນາສົບ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ຜູ້ບໍ່ມີທຸກ

ຄຳວ່າ ແລ່ນໄປເຖິງທີ່ໝາຍ ນັ້ນ ເປັນຊື່ຂອງພຣະອະຣະຫັນ

ຄຳວ່າ ກະແສ ເປັນຊື່ຂອງຕັນຫາ ຕັນຫານັ້ນພິກຂຸຂີນາສົບລະໄດ້ແລ້ວ ຕັດຮາກ ກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ພິກຂຸຂີນາສົບພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ຜູ້ຕັດກະແສ ຣາຄະເປັນເຄື່ອງມັດ ໂທສະເປັນເຄື່ອງມັດ ໂມຫະເປັນເຄື່ອງມັດ ເຄື່ອງມັດເຫຼົ່ານັ້ນ ພິກຂຸຂີນາສົບລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າ ໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຍ້ອນແນວນັ້ນ ພິກຂຸຂີນາສົບ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກວ່າ ຜູ້ບໍ່ມີເຄື່ອງມັດ

ທ່ານຜູ້ຈະເລີນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດໄວ້ດັ່ງນີ້ ວ່າ
ທ່ານຈົ່ງເບິ່ງລົດ ເຊິ່ງມີສ່ວນປະກອບອັນບໍ່ມີໂທດ
ມີຫຼັງຄາຂາວ ມີເພົາດຽວ ບໍ່ມີທຸກ
ແລ່ນໄປເຖິງທີ່ໝາຍ ຕັດກະແສ ບໍ່ມີເຄື່ອງມັດ

ຂ້ານ້ອຍ ຮູ້ທົ່ວເຖິງເນື້ອຄວາມແຫ່ງທຳທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ຫຍໍ້ນີ້ ໂດຍພິດສະດານແນວນີ້ແລ

ຄະຫະບໍດີ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ທີ່ປັນຍາຈັກຂຸຂອງທ່ານຢັ່ງລົງໃນພຣະພຸດທະພົດທີ່ເລິກເຊິ່ງນີ້ໄດ້

**ປະຖົມກາມະພູສູດທີ ໕ ຈົບ**

# ໖. ທຸຕິຍະກາມະພູສູດ

## ວ່າດ້ວຍພຣະກາມະພູ ສູດທີ ໘

[໓໔໗] ສະໄໝໜຶ່ງ ທ່ານພຣະກາມະພູຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາສັນຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາທ່ານພຣະກາມະພູຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ຮຽນຖາມທ່ານພຣະກາມະພູດັ່ງນີ້ວ່າ ທ່ານຜູ້ຈະເລີນ ສັງຂານມີທີ່ໃດ?

ທ່ານພຣະກາມະພູຕອບວ່າ ຄະຫະບໍດີ ສັງຂານມີ ໓ ປະການ ຄື

໑. ກາຍສັງຂານ ໒. ວະຈີສັງຂານ

໓. ຈິດຕະສັງຂານ

ຈິດຕະຄະຫະບໍດີກ່າວວ່າ ດີແລ້ວ ທ່ານຜູ້ຈະເລີນ ຊົມຊື່ນ ຍິນດີພາສິດຂອງທ່ານພຣະກາມະພູ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປ ວ່າ

ທ່ານຜູ້ຈະເລີນ ກາຍສັງຂານເປັນແນວໃດ? ວະຈີສັງຂານເປັນແນວໃດ? ແລະຈິດຕະສັງຂານ ເປັນແນວໃດ?

ຄະຫະບໍດີ ລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກຊື່ວ່າ ກາຍສັງຂານ

ວິຕົກວິຈານຊື່ວ່າ ວະຈີສັງຂານ

ສັນຍາແລະເວທະນາຊື່ວ່າ ຈິດຕະສັງຂານ

ຈິດຕະຄະຫະບໍດີກ່າວວ່າ ດີແລ້ວ ທ່ານຜູ້ຈະເລີນ ຯລຯ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ

ທ່ານຜູ້ຈະເລີນ ຍ້ອນເຫດໃດ ລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກຈຶ່ງຊື່ວ່າກາຍສັງຂານ

ຍ້ອນເຫດໃດ ວິຕົກວິຈານຈຶ່ງຊື່ວ່າ ວະຈີສັງຂານ

ຍ້ອນເຫດໃດ ສັນຍາແລະເວທະນາຈຶ່ງຊື່ວ່າ ຈິດຕະສັງຂານ

ຄະຫະບໍດີ ລົມຫັນໃຈເຂົ້າແລະລົມຫັນໃຈອອກເປັນໄປໃນກາຍ ທຳເຫຼົ່ານີ້ກ່ຽວເນື່ອງດ້ວຍກາຍ ຍ້ອນແນວນັ້ນ ລົມຫັນໃຈເຂົ້າ ແລະ ລົມຫັນໃຈອອກຈຶ່ງຊື່ວ່າ ກາຍສັງຂານ

ຄະຫະບໍດີ ບຸກຄົນຮີ່ມຕອງກ່ອນແລ້ວ ຈຶ່ງເປ່ງວາຈາພາຍຫຼັງ ຍ້ອນແນວນັ້ນ ວິຕົກ ວິຈານຈຶ່ງຊື່ວ່າ ວະຈີສັງຂານ

ສັນຍາ ແລະ ເວທະນາເປັນໄປທາງຈິດ ທຳເຫຼົ່ານີ້ກ່ຽວເນື່ອງດ້ວຍຈິດ ຍ້ອນແນວນັ້ນສັນຍາ ແລະ ເວທະນາຈຶ່ງຊື່ວ່າຈິດຕະສັງຂານ

ດີແລ້ວ ທ່ານຜູ້ຈະເລີນ ຯລຯ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ ທ່ານຜູ້ຈະເລີນ ກໍສັນຍາເວທະຍິຕະນິໂຣດສະມາບັດມີໄດ້ແນວໃດ?

ຄະຫະບໍດີ ພິກຂຸຜູ້ກຳລັງເຂົ້າສັນຍາເວທະຍິຕະນິໂຣດສະມາບັດຍ່ອມບໍ່ຄິດວ່າ ເຮົາຈັກເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ຫຼື ເຮົາກຳລັງເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ຫຼື ເຮົາເຂົ້າສັນຍາເວທະຍິຕະນິໂຣດສະມາບັດແລ້ວ ແທ້ຈິງ ຈິດທີ່ນຳບຸກຄົນເຂົ້າໄປເພື່ອຄວາມເປັນແນວນັ້ນ ທ່ານໄດ້ອົບຮົມໄວ້ໃນການກ່ອນແລ້ວ

ຈິດຕະຄະຫະບໍດີກ່າວວ່າ ດີແລ້ວ ທ່ານຜູ້ຈະເລີນ ໆລໆ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປ ອີກວ່າ ທ່ານຜູ້ຈະເລີນ ກໍເມື່ອພິກຂຸເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ທຳເຫຼົ່າໃດດັບກ່ອນ ກາຍສັງຂານ ວະຈີສັງຂານ ຫຼື ຈິດຕະສັງຂານ

ຄະຫະບໍດີ ເມື່ອພິກຂຸເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ວະຈີສັງຂານດັບກ່ອນ ຕໍ່ ຈາກນັ້ນ ກາຍສັງຂານ ຈິດຕະສັງຂານຈຶ່ງດັບ

ດີແລ້ວ ທ່ານຜູ້ຈະເລີນ ໆລໆ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ ທ່ານຜູ້ຈະເລີນ ຄົນ ທີ່ຕາຍແລ້ວກັບພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ທັງສອງນີ້ຕ່າງກັນແນວໃດ?

ຄະຫະບໍດີ ຄົນທີ່ຕາຍແລ້ວ ກາຍສັງຂານກໍດັບລະງັບໄປ ວະຈີສັງຂານກໍດັບລະງັບໄປ ຈິດຕະສັງຂານຂອງເຂົາກໍດັບລະງັບໄປ ອາຍຸສິ້ນໄປ ອາຍອຸ່ນໝົດໄປ ອິນຊີແຕກສະຫຼາຍໄປ

ແມ່ນພິກຂຸ ຜູ້ເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ກາຍສັງຂານກໍດັບລະງັບໄປ ວະຈີ ສັງຂານກໍດັບລະງັບໄປ ຈິດຕະສັງຂານກໍດັບລະງັບໄປ (ແຕ່) ອາຍຸບໍ່ໝົດໄປ ອາຍອຸ່ນຍັງບໍ່ໝົດ ອິນຊີກໍຜ່ອງໃສ ຄະຫະບໍດີ ຄົນທີ່ຕາຍແລ້ວກັບພິກຂຸຜູ້ເຂົ້າສັນຍາເວທະຍິຕະນິໂຣດສະມາບັດ ທັງສອງນັ້ນ ຕ່າງກັນແນວນີ້

ດີແລ້ວ ທ່ານຜູ້ຈະເລີນ ໆລໆ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ ທ່ານຜູ້ຈະເລີນ ກໍ ການອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ມີໄດ້ແນວໃດ?

ພິກຂຸ ຜູ້ກຳລັງອອກຈາກສັນຍາເວທະຍິຕະນິໂຣດສະມາບັດຍ່ອມບໍ່ຄິດວ່າ ເຮົາຈັກອອກ ຈາກ ສັນຍາເວທະຍິຕະນິໂຣດສະມາບັດ ຫຼື ເຮົາກຳລັງອອກຈາກສັນຍາເວທະຍິຕະນິໂຣດສະມາ ບັດ ຫຼື ເຮົາອອກຈາກສັນຍາເວທະຍິຕະນິໂຣດສະມາບັດແລ້ວ ແທ້ທີ່ຈິງຈິດທີ່ນຳບຸກຄົນເຂົ້າໄປ ເພື່ອຄວາມເປັນແນວນັ້ນ ທ່ານໄດ້ອົບຮົມໄວ້ໃນການກ່ອນແລ້ວ

ຈິດຕະຄະຫະບໍດີກ່າວວ່າ ດີແລ້ວ ທ່ານຜູ້ຈະເລີນ ໆລໆ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປ ອີກວ່າ ທ່ານຜູ້ຈະເລີນ ກໍເມື່ອພິກຂຸອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ທຳເຫຼົ່າໃດ ເກີດຂຶ້ນກ່ອນ ກາຍສັງຂານ ວະຈີສັງຂານ ຫຼື ຈິດຕະສັງຂານ

ຄະຫະບໍດີ ເມື່ອພິກຂຸອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ຈິດຕະສັງຂານເກີດ ຂຶ້ນກ່ອນ ຕໍ່ຈາກນັ້ນ ກາຍສັງຂານ ວະຈີສັງຂານຈຶ່ງເກີດຂຶ້ນ

ດີແລ້ວ ທ່ານຜູ້ຈະເລີນ ໆລໆ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ ທ່ານຜູ້ຈະເລີນ ຜັດສະທໍໃດຍ່ອມຖືກຕ້ອງພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ

ຄະຫະບໍດີ ຜັດສະ ໓ ຄື (໑) ສູນຍະຜັດສະ (໒) ອະນິມິດຕະຜັດສະ (໓) ອັບປະນິຫິຕະຜັດສະ ຍ່ອມຖືກຕ້ອງພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ

ດີແລ້ວ ທ່ານຜູ້ຈະເລີນ ຯລຯ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ ທ່ານຜູ້ຈະເລີນ ພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດ ຈິດນ້ອມໄປ ອຽງໄປ ໂອນໄປສູ່ອັນໃດ?

ຄະຫະບໍດີ ພິກຂຸຜູ້ອອກຈາກສັນຍາເວທະຍິຕະນິໂຣດສະມາບັດແລ້ວ ຈິດຍ່ອມນ້ອມໄປ ອຽງໄປ ໂອນໄປສູ່ວິເວກ

ຈິດຕະຄະຫະບໍດີກ່າວວ່າ ດີແລ້ວ ທ່ານຜູ້ຈະເລີນ ແລ້ວໄດ້ຊົມຊື່ນຍິນດີພາສິດຂອງທ່ານພຣະກາມະພູ ແລ້ວໄດ້ຖາມບັນຫາຍິ່ງຂຶ້ນໄປອີກວ່າ

ທ່ານຜູ້ຈະເລີນ ທຳເຫຼົ່າໃດມີອຸປະກາຣະຫຼາຍ ແກ່ສັນຍາເວທະຍິຕະນິໂຣດສະມາບັດຄະຫະບໍດີ ບັນຫາທີ່ຄວນຈະຖາມກ່ອນທ່ານຖາມຊ້າໄປ ແຕ່ຖ້າຈັ່ງຊັ້ນ ອາຕະມາພາບຈັກຕອບແກ່ທ່ານ ທຳ ໒ ປະການ ຄື (໑) ສະມະຖະ (໒) ວິປັດສະນາ ມີອຸປະກາຣະຫຼາຍ ແກ່ສັນຍາເວທະຍິຕະນິໂຣດສະມາບັດ

**ທຸຕິຍະກາມະພູສູດທີ ໖ ຈົບ**

# ໗. ໂຄທັດຕະສູດ

## ວ່າດ້ວຍພຣະໂຄທັດຕະ

[໓໔໙] ສະໄໝໜຶ່ງ ທ່ານພຣະໂຄທັດຕະຢູ່ທີ່ອຳພາຕະກະວັນ ເຂດເມືອງມັດສິກາສັນ ຄັ້ງນັ້ນ ຈິດຕະຄະຫະບໍດີເຂົ້າໄປຫາທ່ານພຣະໂຄທັດຕະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມຈິດຕະຄະຫະບໍດີດັ່ງນີ້ວ່າ ຄະຫະບໍດີ ທຳເຫຼົ່ານີ້ ຄື (໑) ອັບປະມານາເຈໂຕວິມຸດຕິ (໒) ອາກິນຈັນຍາເຈໂຕວິມຸດຕິ (໓) ສູນຍະຕາເຈໂຕວິມຸດຕິ (໔) ອະນິມິດຕາເຈໂຕວິມຸດຕິ ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ຫຼື ມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ

ຈິດຕະຄະຫະບໍດີຕອບວ່າ ທ່ານຜູ້ຈະເລີນ ຍ້ອນອາໄສເຫດໃດ? ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນແລະມີພະຍັນຊະນະຕ່າງກັນ ເຫດນັ້ນມີຢູ່ ອັນໜຶ່ງ ຍ້ອນອາໄສເຫດໃດ? ທຳເຫຼົ່ານີ້ ຈຶ່ງມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທີ່ນັ້ນ ເຫດນັ້ນມີຢູ່

ທ່ານຜູ້ຈະເລີນ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນ ແລະ ມີພະຍັນຊະນະຕ່າງກັນ ເຫດນັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນ ນີ້ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຢູ່ ທິດທີ ໒ ຢູ່ ທິດ ທີ ໓ ຢູ່ ທິດທີ ໔ ຢູ່ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ມີກະລຸນາຈິດ ຢູ່

ມີມຸທິຕາຈິດ ຢູ່

ມີອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ຢູ່ ທິດທີ ໒ ຢູ່ ທິດທີ ໓ ຢູ່ ທິດທີ ໔ ຢູ່ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນບ່ອນທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ນີ້ຮຽກວ່າ ອັບປະມານາເຈໂຕວິມຸດຕິ

ອາກິນຈັນຍາເຈໂຕວິມຸດຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດຢູ່

ນີ້ຮຽກວ່າ ອາກິນຈັນຍາເຈໂຕວິມຸດຕິ

ສູນຍະຕາເຈໂຕວິມຸດຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າແດ່ ໄປສູ່ເຫງົ້າໄມ້ແດ່ ໄປສູ່ເຮືອນວ່າງແດ່ ຍ່ອມພິຈາລະນາເຫັນວິມຸດຕິວ່າ ສິ່ງນີ້ວ່າງຈາກອັດຕາ ຫຼື ສິ່ງທີ່ເນື່ອງດ້ວຍອັດຕາ

ນີ້ຮຽກວ່າ ສູນຍະຕາເຈໂຕວິມຸດຕິ

ອະນິມິດຕາເຈໂຕວິມຸດຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບັນລຸອະນິມິດຕະເຈໂຕສະມາທິ ຍ້ອນບໍ່ກຳນົດນິມິດທັງປວງຢູ່

ນີ້ຮຽກວ່າ ອະນິມິດຕາເຈໂຕວິມຸດຕິ

ທ່ານຜູ້ຈະເລີນ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະຕ່າງກັນ ແລະມີພະຍັນຊະນະຕ່າງກັນ ເຫດນັ້ນ ເປັນແນວນີ້ແລ

ທ່ານຜູ້ຈະເລີນ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະທໍ່ນັ້ນ ຄື ຣາຄະຊື່ວ່າ ກິເລດເປັນເຄື່ອງວັດແທກ ໂທສະຊື່ວ່າ ກິເລດເປັນເຄື່ອງວັດແທກ ໂມ ຫະຊື່ວ່າ ກິເລດເປັນເຄື່ອງວັດແທກ ກິເລດເຫຼົ່ານັ້ນ ພິກຂຸຂີນາສົບລະໄດ້ແລ້ວ

ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ອັບປະມານາເຈໂຕວິມຸດຕິມີປະມານທໍ່ໃດ?

ເຈໂຕວິມຸດຕິອັນບໍ່ກຳເຣີບບັນດິດກ່າວວ່າ ເລີດກວ່າອັບປະມານາເຈໂຕວິມຸດຕິເຫຼົ່ານັ້ນ ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຣາຄະຊື່ວ່າກິເລດເປັນເຄື່ອງກັງວົນ ໂທສະຊື່ວ່າ ກິເລດເປັນເຄື່ອງກັງວົນ ໂມຫະຊື່ວ່າກິເລດເປັນເຄື່ອງກັງວົນ ກິເລດເຫຼົ່ານັ້ນ ພິກຂຸຂີນາສົບລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ອາກິນຈັນຍາເຈໂຕວິມຸດຕິມີປະມານທໍ່ໃດ?

ເຈໂຕວິມຸດຕິອັນບໍ່ກຳເຣີບບັນດິດກ່າວ ວ່າ ເລີດກວ່າອາກິນຈັນຍາເຈໂຕວິມຸດຕິເຫຼົ່ານັ້ນ ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຣາຄະຊື່ວ່າກິເລດເປັນເຄື່ອງກະທຳນິມິຕ ໂທສະຊື່ວ່າ ກິເລດເປັນເຄື່ອງກະທຳນິມິດ ໂມຫະຊື່ວ່າ ກິເລດເປັນເຄື່ອງກະທຳນິມິດ ກິເລດເຫຼົ່ານັ້ນ ພິກຂຸຂີນາສົບລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ອະນິມິດຕາເຈໂຕວິມຸດຕິມີປະມານທໍ່ໃດ ເຈໂຕວິມຸດຕິອັນບໍ່ກຳເຣີບບັນດິດກ່າວວ່າ ເລີດກວ່າອະນິມິດຕາເຈໂຕວິມຸດຕິເຫຼົ່ານັ້ນ ເຈໂຕວິມຸດຕິອັນບໍ່ກຳເຣີບນັ້ນ ວ່າງຈາກຣາຄະ ວ່າງຈາກໂທສະ ວ່າງຈາກໂມຫະ ຯລຯ ທ່ານຜູ້ຈະເລີນ ຍ້ອນອາໄສເຫດໃດ ທຳເຫຼົ່ານີ້ ຈຶ່ງມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະ ເຫດນັ້ນ ເປັນແນວນີ້ແລ

ທ່ານພຣະໂຄທັດຕະກ່າວວ່າ ຄະຫະບໍດີ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວທີ່ປັນຍາຈັກຂຸຂອງທ່ານຢັ່ງລົງໃນພຣະພຸດທະພົດທີ່ເລິກເຊິ່ງ

**ໂຄທັດຕະສູດທີ ໗ ຈົບ**

## ໘. ນິຄັນຖະນາຕະປຸດຕະສູດ

### ວ່າດ້ວຍນິຄົນ ນາຕະບຸດ

[໓໕໐] ສະໄໝນັ້ນ ນິຄົນ ນາຕະບຸດໄປເຖິງ ເມືອງມັດສິກາສັນພ້ອມດ້ວຍນິຄົນບໍລິສັດຈຳນວນຫຼາຍ ຈິດຕະຄະຫະບໍດີໄດ້ຍິນຂ່າວວ່າ ນິຄົນ ນາຕະບຸດມາເຖິງເມືອງມັດສິກາສັນພ້ອມດ້ວຍນິຄົນບໍລິສັດຫຼາຍຄົນ

ຄັ້ງນັ້ນ ຈິດຕະຄະຫະບໍດີພ້ອມດ້ວຍອຸປາສົກຫຼາຍຄົນເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່ ແລ້ວໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ນິຄົນ ນາຕະບຸດໄດ້ຖາມຈິດຕະຄະຫະບໍດີດັ່ງນີ້ວ່າ ຄະຫະບໍດີ ທ່ານເຊື່ອບໍວ່າ ພຣະສະມະນະໂຄດົມ ມີສະມາທິທີ່ບໍ່ມີວິຕົກວິຈານ ມີຄວາມດັບວິຕົກວິຈານ

ຈິດຕະຄະຫະບໍດີຕອບວ່າ ທ່ານຜູ້ຈະເລີນ ຂ້ານ້ອຍ ບໍ່ເຊື່ອພຣະຜູ້ມີພຣະພາກເຈົ້າໃນຂໍ້ນີ້ວ່າ ມີສະມາທິທີ່ບໍ່ມີວິຕົກວິຈານ ມີຄວາມດັບວິຕົກວິຈານ

ເມື່ອຈິດຕະຄະຫະບໍດີກ່າວແນວນີ້ແລ້ວ ນິຄົນ ນາຕະບຸດແລເບິ່ງບໍລິສັດຂອງຕົນແລ້ວໄດ້ກ່າວວ່າ ຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງພິຈາລະນາເລື້ອງນີ້ ຕາບທໍ່ທີ່ຈິດຕະຄະຫະບໍດີນີ້ ຍັງເປັນຄົນຊື່ ບໍ່ໂອ້ອວດ ບໍ່ມີມານຍາ ເຂົາເຂົ້າໃຈວິຕົກວິຈານວ່າ ດັບໄດ້ ກໍທໍ່ກັນກັບເຂົ້າໃຈວ່າ ໃຊ້ຕາໜ່າງອັດກັ້ນລົມໄດ້ ຫຼື ເຂົາເຂົ້າໃຈວິຕົກວິຈານວ່າ ດັບໄດ້ ກໍທໍ່ກັນກັບແເຂົ້າໃຈວ່າ ກະແສແມ່ນ້ຳຄົງຄາສາມາດໃຊ້ກຳມືຂອງຕົນອັດກັ້ນໄວ້ໄດ້

ຈິດຕະຄະຫະບໍດີກ່າວວ່າ ທ່ານຜູ້ຈະເລີນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຍານກັບສັດທາ ແນວໃດປະນີດກວ່າກັນ

ຄະຫະບໍດີ ຍານນັ້ນເອງປະນີດກວ່າສັດທາ

ທ່ານຜູ້ຈະເລີນ ຂ້ານ້ອຍສະງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກຢູ່ຕາບທໍ່ທີ່ຕ້ອງການ ຍ້ອນວິຕົກວິຈານສະງົບລະງັບໄປ ຯລຯ ຂ້ານ້ອຍ ບັນລຸທຸຕິຍະຊານຕາບທໍ່ທີ່ຕ້ອງການ ຍ້ອນປີຕິຈາງຄາຍອອກ ຯລຯ ຂ້ານ້ອຍບັນລຸຕະຕິຍະຊານຕາບທໍ່ທີ່ຕ້ອງການ ຍ້ອນລະສຸກໄດ້ ຯລຯ ຂ້ານ້ອຍບັນລຸຈະຕຸດຖະຊານຕາບທໍ່ທີ່ຕ້ອງການ

ທ່ານຜູ້ຈະເລີນ ເມື່ອຮູ້ເຫັນແນວນີ້ ຂ້ານ້ອຍບໍ່ຕ້ອງເຊື່ອໃຜອື່ນອີກ ບໍ່ວ່າສະມະນະຫຼືພາມວ່າ ມີສະມາທິທີ່ບໍ່ມີວິຕົກ ບໍ່ມີວິຈານ ມີຄວາມດັບວິຕົກວິຈານ

ເມື່ອຈິດຕະຄະຫະບໍດີກ່າວແນວນີ້ແລ້ວ ນິຄົນ ນາຕະບຸດແລເບິ່ງບໍລິສັດຂອງຕົນແລ້ວໄດ້ກ່າວດັ່ງນີ້ວ່າ ຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງພິຈາລະນາຄວາມຂໍ້ນີ້ ຕາບທໍ່ທີ່ຈິດຕະຄະຫະບໍດີນີ້ເປັນຄົນບໍ່ຊື່ ໂອ້ອວດ ມີມານຍາ

ຈິດຕະຄະຫະບໍດີກ່າວວ່າ ທ່ານຜູ້ຈະເລີນ ຂ້ານ້ອຍ ຮູ້ຄຳທີ່ທ່ານກ່າວດຽວນີ້ເອງວ່າຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງພິຈາລະນາເລື້ອງນີ້ ຕາບທໍ່ທີ່ຈິດຕະຄະຫະບໍດີນີ້ຍັງເປັນຄົນຊື່ ບໍ່ໂອ້ອວດ ບໍ່ມີມານຍາ ແລະ ຂ້ານ້ອຍກໍຮູ້ຄຳທີ່ທ່ານກ່າວດຽວນີ້ເອງວ່າ ຂໍທ່ານຜູ້ຈະເລີນທັງຫຼາຍ ຈົ່ງ

ພິຈາລະນາເລື້ອງນີ້ ຕາບທໍ່ທີ່ຈິດຕະຄະຫະບໍດີນີ້ເປັນຄົນບໍ່ຊື່ ໂອ້ອວດ ມີມານຍາ

ທ່ານຜູ້ຈະເລີນ ຖ້າຄໍາເວົ້າຄັ້ງທໍາອິດຂອງທ່ານຖືກ ຄໍາເວົ້າຄັ້ງຫຼັງຂອງທ່ານກໍຜິດ ແຕ່ຖ້າຄໍາເວົ້າຄັ້ງຫຼັງຂອງທ່ານຖືກ ຄໍາເວົ້າຄັ້ງທໍາອິດຂອງທ່ານກໍຜິດ ບັນຫາທີ່ປະກອບດ້ວຍເຫດ ໑໐ ຂໍ້ນີ້ມາເຖິງທ່ານ ເມື່ອທ່ານຮູ້ເນື້ອຄວາມຂອງບັນຫາເຫຼົ່ານັ້ນ ກໍເພິ່ງບອກຂ້ານ້ອຍກັບນິຄົນບໍລິສັດ

ບັນຫາ ໑໐ ຂໍ້ ນີ້ຄື

| | | | |
|---|---|---|---|
| ໑. | ບັນຫາ ໑ | ອຸດເຫດ ໑ | ໄວຍາກອນ ໑ |
| ໒. | ບັນຫາ ໒ | ອຸດເຫດ ໒ | ໄວຍາກອນ ໒ |
| ໓. | ບັນຫາ ໓ | ອຸດເຫດ ໓ | ໄວຍາກອນ ໓ |
| ໔. | ບັນຫາ ໔ | ອຸດເຫດ ໔ | ໄວຍາກອນ ໔ |
| ໕. | ບັນຫາ ໕ | ອຸດເຫດ ໕ | ໄວຍາກອນ ໕ |
| ໖. | ບັນຫາ ໖ | ອຸດເຫດ ໖ | ໄວຍາກອນ ໖ |
| ໗. | ບັນຫາ ໗ | ອຸດເຫດ ໗ | ໄວຍາກອນ ໗ |
| ໘. | ບັນຫາ ໘ | ອຸດເຫດ ໘ | ໄວຍາກອນ ໘ |
| ໙. | ບັນຫາ ໙ | ອຸດເຫດ ໙ | ໄວຍາກອນ ໙ |
| ໑໐. | ບັນຫາ ໑໐ | ອຸດເຫດ ໑໐ | ໄວຍາກອນ ໑໐ |

ເມື່ອຈິດຕະຄະຫະບໍດີ ຖາມບັນຫາທີ່ປະກອບດ້ວຍເຫດ ໑໐ ຂໍ້ນີ້ກັບນິຄົນນາຕະບຸດ ແລ້ວກໍລຸກຂຶ້ນຈາກອາສະນະແລ້ວຈາກໄປ

**ນິຄົນນາຕະປຸດຕະສູດທີ ໘ ຈົບ**

## ໙. ອະເຈລະກັດສະປະສູດ

### ວ່າດ້ວຍອະເຈລະກັດສະປະ

[໓໕໑] ສະໄໝນັ້ນ ອະເຈລະກັດສະປະຜູ້ເຄີຍເປັນສະຫາຍເກົ່າ ເມື່ອຄັ້ງເປັນຄະລິຫັດຂອງຈິດຕະຄະຫະບໍດີ ໄປເຖິງເມືອງມັດສິກາ ສັນຈິດຕະຄະຫະບໍດີ ໄດ້ຍິນຂ່າວວ່າອະເຈລະກັດສະປະ ຜູ້ເຄີຍເປັນສະຫາຍເກົ່າ ເມື່ອຄັ້ງເປັນຄະລິຫັດຂອງເຮົາ ໄດ້ມາເຖິງເມືອງມັດສິກາສັນ ຈຶ່ງເຂົ້າໄປຫາອະເຈລະກັດສະປະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມດັ່ງນີ້ ວ່າ

ກັດສະປະຜູ້ຈະເລີນ ທ່ານບວດມາດົນທໍ່ໃດ?

ອະເຈລະກັດສະປະຕອບວ່າ ທ່ານຄະຫະບໍດີ ເຮົາບວດໄດ້ປະມານ ໓໐ ປີແລ້ວ

ຜູ້ຈະເລີນ ຕະຫຼອດເວລາປະມານ ໓໐ ປີນີ້ ຍານທັດສະນະທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດ ເປັນທຳເຄື່ອງຢູ່ຜາສຸກທີ່ທ່ານບັນລຸແລ້ວມີຢູ່ບໍ?

ຄະຫະບໍດີ ຕະຫຼອດເວລາປະມານ ໓໐ ປີນີ້ ຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ເປັນທຳເຄື່ອງຢູ່ຜາສຸກທີ່ເຮົາບັນລຸແລ້ວບໍ່ມີ ນອກຈາກຄວາມເປັນຄົນເປືອຍ ຄວາມເປັນຄົນໂລ້ນ ແລະ ການກຳຈັດຝຸ່ນທຸລີດ້ວຍຂົນຫາງນົກຍູງ

ເມື່ອອະເຈລະກັດສະປະກ່າວແນວນີ້ແລ້ວ ຈິດຕະຄະຫະບໍດີໄດ້ກ່າວວ່າ ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ແຕ່ມີຜູ້ບວດຕະຫຼອດເວລາປະມານ ໓໐ ປີ ຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າ ທຳຂອງມະນຸດ ເປັນທຳເຄື່ອງຢູ່ຜາສຸກ ທີ່ທ່ານບັນລຸແລ້ວບໍ່ມີ ນອກຈາກຄວາມເປັນຄົນເປືອຍ ຄວາມເປັນຄົນໂລ້ນ ແລະ ການກຳຈັດຝຸ່ນທຸລີດ້ວຍຂົນຫາງນົກຍູງ

ຄະຫະບໍດີ ທ່ານເຂົ້າເຖິງຄວາມເປັນອຸປາສົກມາດົນທໍ່ໃດແລ້ວ

ທ່ານຜູ້ຈະເລີນ ຂ້ານ້ອຍເຂົ້າເຖິງຄວາມເປັນອຸປາສົກໄດ້ປະມານ ໓໐ ປີແລ້ວ

ຄະຫະບໍດີ ຕະຫຼອດເວລາປະມານ ໓໐ ປີນີ້ ຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ເປັນທຳເຄື່ອງຢູ່ຜາສຸກທີ່ທ່ານບັນລຸແລ້ວມີຢູ່ບໍ?

ທ່ານຜູ້ຈະເລີນ ແມ່ນແຕ່ຄະລຶຫັດກໍເພິ່ງມີທຳຈັ່ງຊັ້ນໄດ້ ຍ້ອນຂ້ານ້ອຍສະງັດຈາກການ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິ ແລະ ສຸກອັນເກີດຈາກວິເວກ ຢູ່ຕາບທໍ່ທີ່ຕ້ອງການ ຍ້ອນວິຕົກວິຈານສະງົບລະງັບໄປ ຂ້ານ້ອຍບັນລຸທຸຕິຍຊານຕາບທໍ່ທີ່ຕ້ອງການ ຍ້ອນປີຕິຈາງຄາຍອອກ ຯລຯ ຂ້ານ້ອຍ ບັນລຸຕະຕິຍະຊານຕາບທໍ່ທີ່ຕ້ອງການ ຍ້ອນລະສຸກໄດ້ ຯລຯ ຂ້ານ້ອຍ ບັນລຸຈະຕຸດຖະຊານຕາບທໍ່ທີ່ຕ້ອງການ ຖ້າຂ້ານ້ອຍເພິ່ງພະຍາກອນກ່ອນພຣະຜູ້ມີພຣະພາກເຈົ້າ ບໍ່ໜ້າອັດສະຈັນເລີຍ ທີ່ພຣະຜູ້ມີພຣະພາກເຈົ້າຊິງພະຍາກອນເຮົາວ່າ ຈິດຕະຄະຫະບໍດີປະກອບດ້ວຍສັງໂຍດໃດເພິ່ງກັບມາຍັງໂລກນີ້ອີກ ສັງໂຍດນັ້ນບໍ່ມີແລ້ວ

ເມື່ອຈິດຕະຄະຫະບໍດີກ່າວແນວນີ້ແລ້ວ ອະເຈລະກັດສະປະໄດ້ກ່າວກັບຈິດຕະຄະຫະບໍດີດັ່ງນີ້ວ່າ ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຍ້ອນໃນການເຂົ້າເຖິງຄວາມເປັນອຸປາສົກ ຄະລຶຫັດຜູ້ນຸ່ງຂາວຫົ່ມຂາວຈັກບັນລຸຍານທັດສະນະທີ່ປະເສີດ ອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດ ເປັນທຳເຄື່ອງຢູ່ຜາສຸກໄດ້ ຄະຫະບໍດີ ເຮົາເພິ່ງໄດ້ບັນພະຊາອຸປະສົມບົດໃນພຣະທຳວິໄນນີ້

ຕໍ່ມາ ຈິດຕະຄະຫະບໍດີ ໄດ້ພາອະເຈລະກັດສະປະເຂົ້າໄປຫາພິກຂຸຜູ້ເປັນເຖຣະທັງຫຼາຍ ຮອດບ່ອນຢູ່ແລ້ວ ໄດ້ຮຽນຖາມພິກຂຸຜູ້ເປັນເຖຣະທັງຫຼາຍດັ່ງນີ້ວ່າ ທ່ານຜູ້ຈະເລີນທັງຫຼາຍ ອະເຈລະກັດສະປະນີ້ ເຄີຍເປັນສະຫາຍເກົ່າເມື່ອຄັ້ງເປັນຄະລືຫັດຂອງຂ້ານ້ອຍ ຂໍພຣະເຖຣະທັງຫຼາຍ ໂຜດບັນພະຊາອຸປະສົມບົດໃຫ້ອະເຈລະກັດສະປະຜູ້ນີ້ດ້ວຍ ຂ້ານ້ອຍ ຈັກບໍາລຸງທ່ານດ້ວຍຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດບໍຣິຂານ

ອະເຈລະກັດສະປະໄດ້ບັນພະຊາອຸປະສົມບົດໃນພຣະທໍາວິໄນນີ້ແລ້ວ ແລະທ່ານພຣະກັດສະປະ ບວດແລ້ວບໍ່ດົນ ກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດ ໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ທ່ານພຣະກັດສະປະ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ

**ອະເຈລະກັດສະປະສູດທີ ໙ ຈົບ**

## ໑໐. ຄິລານະທັດສະນະສູດ

## ວ່າດ້ວຍການຢ້ຽມຜູ້ປ່ວຍ

[໓໕໘] ສະໄໝນັ້ນ ຈິດຕະຄະຫະບໍດີເຈັບປ່ວຍໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນ ເທວະດາຜູ້ສິງສະຖິດຢູ່ໃນອາຮາມ ເທວະດາຜູ້ສິງສະຖິດຢູ່ໃນປ່າ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນຫຍ້າເປັນໂອສົດ ແລະ ທີ່ຕົ້ນໄມ້ເຈົ້າປ່າຈໍານວນຫຼາຍ ມາປະຊຸມພ້ອມກັນແລ້ວ ໄດ້ກ່າວກັບ ຈິດຕະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ທ່ານຈົ່ງຕັ້ງຄວາມປາຖະໜາວ່າ ຂໍເຮົາເພິ່ງເປັນພຣະເຈົ້າຈັກກະພັດໃນອະນາຄົດຕະການດ້ວຍເທີ້ນ

ເມື່ອພວກເທວະດາກ່າວແນວນີ້ແລ້ວ ຈິດຕະຄະຫະບໍດີ ຈຶ່ງກ່າວກັບເທວະດາເຫຼົ່ານັ້ນດັ່ງນີ້ວ່າ ແມ່ນຄວາມປາຖະໜາເປັນພຣະເຈົ້າຈັກກະພັດນັ້ນກໍບໍ່ທ່ຽງ ບໍ່ໝັ້ນຍືນ ບຸກຄົນຈະຕ້ອງລະຖານະນັ້ນໄປ

ເມື່ອຈິດຕະຄະຫະບໍດີກ່າວແນວນີ້ແລ້ວ ພວກມິດ ອໍາມາດ ຍາດ ສາໂລຫິດຂອງຈິດຕະຄະຫະບໍດີໄດ້ກ່າວດັ່ງນີ້ວ່າ ທ່ານຈິດຕະ ທ່ານຈົ່ງຕັ້ງສະຕິໄວ້ ຢ່າເພີ້ໄປ

ຂ້າພະເຈົ້າເວົ້າອັນໃດໄປ ທີ່ເຮັດໃຫ້ພວກທ່ານເຕືອນຂ້າພະເຈົ້າວ່າ ທ່ານຈິດຕະ ທ່ານຈົ່ງຕັ້ງສະຕິໄວ້ ຢ່າເພີ້ໄປ

ທ່ານຈິດຕະ ທ່ານເວົ້າວ່າ ແມ່ນຄວາມປາຖະໜາເປັນພຣະເຈົ້າຈັກກະພັດນັ້ນ ກໍບໍ່ທ່ຽງ ບໍ່ໝັ້ນຍືນ ບຸກຄົນຈະຕ້ອງລະຖານະນັ້ນໄປ

ກໍຈິງແນວນັ້ນ ພວກເທວະດາຜູ້ສິງສະຖິດຢູ່ໃນອາຣາມ ເທວະດາຜູ້ສິງສະຖິດຢູ່ໃນປ່າ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນໄມ້ ເທວະດາຜູ້ສິງສະຖິດຢູ່ທີ່ຕົ້ນຫຍ້າເປັນໂອສົດ ແລະ ທີ່ຕົ້ນໄມ້ເຈົ້າປ່າ ກ່າວກັບຂ້າພະເຈົ້າວ່າ ຄະຫະບໍດີ ທ່ານຈົ່ງຕັ້ງຄວາມປາຖະໜາວ່າ ຂໍເຮົາເພິ່ງເປັນພຣະເຈົ້າຈັກກະພັດໃນອະນາຄົດຕະການເທີ້ນ ຂ້າພະເຈົ້າໄດ້ກ່າວກັບເທວະດາເຫຼົ່ານັ້ນວ່າ ແມ່ນຄວາມປາຖະໜາເປັນພຣະເຈົ້າຈັກກະພັດນັ້ນກໍບໍ່ທ່ຽງ ບໍ່ໝັ້ນຍືນ ກຄົນຈະຕ້ອງລະຖານະນັ້ນໄປ

ທ່ານຈິດຕະ ເທວະດາເຫຼົ່ານັ້ນ ເຫັນອຳນາດປະໂຫຍດອັນໃດຈຶ່ງກ່າວວ່າ ຄະຫະບໍດີ ທ່ານຈົ່ງຕັ້ງຄວາມປາຖະໜາວ່າ ຂໍເຮົາເພິ່ງເປັນພຣະເຈົ້າຈັກກະພັດໃນອະນາຄົດຕະການເທີ້ນ

ເທວະດາເຫຼົ່ານັ້ນ ຄິດວ່າ ຈິດຕະຄະຫະບໍດີນີ້ ມີສິນ ມີທຳອັນງາມ ຖ້າທ່ານຈັກຕັ້ງຄວາມປາຖະໜາວ່າ ຂໍເຮົາເພິ່ງເປັນພຣະເຈົ້າຈັກກະພັດໃນອະນາຄົດຕະການ ການຕັ້ງຄວາມປາຖະໜາໃນໃຈຂອງທ່ານຜູ້ມີສິນນີ້ ຈັກສຳເລັດໄດ້ຍ້ອນສິນບໍລິສຸດ ບຸກຄົນຜູ້ຕັ້ງຢູ່ໃນທຳຈັກຕາມເພີ່ມໃຫ້ກຳລັງ (ແກ່) ຜູ້ປະພຶດທຳ ເທວະດາເຫຼົ່ານີ້ ເມື່ອເຫັນອຳນາດປະໂຫຍດຈຶ່ງກ່າວວ່າ ຄະຫະບໍດີ ທ່ານຈົ່ງຕັ້ງຄວາມປາຖະໜາວ່າ ຂໍເຮົາເພິ່ງເປັນພຣະເຈົ້າຈັກກະພັດໃນອະນາຄົດຕະການດ້ວຍເທີ້ນ ຂ້າພະເຈົ້າໄດ້ກ່າວກັບເທວະດາເຫຼົ່ານັ້ນວ່າ ແມ່ນຄວາມປາຖະໜາເປັນພຣະເຈົ້າຈັກກະພັດນັ້ນ ກໍບໍ່ທ່ຽງ ບໍ່ໝັ້ນຍືນ ກຄົນຈະຕ້ອງລະຖານະນັ້ນໄປ

ທ່ານຈິດຕະ ຂໍທ່ານຈົ່ງກ່າວສອນພວກຂ້າພະເຈົ້າແດ່

ຖ້າຈັ່ງຊັ້ນ ພວກທ່ານເພິ່ງສຶກສາແນວນີ້ ວ່າ

ພວກເຮົາຈັກເຖິງພ້ອມດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ຈັກເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳອັນພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ຈັກເຖິງພ້ອມດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີເປັນນາບຸນອັນປະເສີດຂອງໂລກ

ອັນໜຶ່ງ ໄທຍະທຳທຸກຢ່າງໃນຕະກູນ ຈັກເປັນຂອງບໍ່ແບ່ງແຍກກັບທ່ານຜູ້ມີສີນ ມີທຳອັນງາມ ພວກທ່ານເພິ່ງສຶກສາແນວນີ້ຢູ່ເທີ້ນ

ຈິດຕະຄະຫະບໍດີເມື່ອຊັກຊວນມິດ ອຳມາດ ຍາດ ສາໂລຫິດໃຫ້ເຫຼື້ອມໃສໃນພຣະພຸດທະເຈົ້າ ພຣະທຳ ພຣະສົງ ແລະ ໃນການບໍລິຈາກທານແລ້ວກໍຕາຍໄປ

**ຄິລານະທັດສະນະສູດທີ ໑໐ ຈົບ**

## ລວມພຣະສູດທີ ມີໃນສັງຍຸດນີ້ ຄື

| | |
|---|---|
| ໑. ສັນໂຍຊະນະສູດ | ໒. ປະຖົມອິສິທັດຕະສູດ |
| ໓. ທຸຕິຍະອິສິທັດຕະສູດ | ໔. ມະຫະກະປາຕິຫາຣິຍະສູດ |
| ໕. ປະຖົມກາມະພູສູດ | ໖. ທຸຕິຍະກາມະພູສູດ |
| ໗. ໂຄທັດຕະສູດ | ໘. ນິຄັນຖະນາຕະປຸດຕະສູດ |
| ໙. ອະເຈລະກັດສະປະສູດ | ໑໐. ຄິລານະທັດສະນະສູດ |

**ຈິດຕະສັງຍຸດ ຈົບບໍລິບູນ**

# ๓. ຄາມະນີສັງຍຸດ

## ໑. ຈັນທະສູດ

### ວ່າດ້ວຍນາຍບ້ານຊື່ຈັນດະ

[໓໕໓] ເລື້ອງເກີດຂຶ້ນທີ່ນະຄອນສາວັດຖີ

ຄັ້ງນັ້ນ ນາຍບ້ານຊື່ຈັນດະ (ດຸຮ້າຍ) ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຄົນລາງຄົນໃນໂລກນີ້ເຖິງຄວາມນັບວ່າ ເປັນຄົນດຸຮ້າຍ ເປັນຄົນດຸຮ້າຍ ແລະ ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ຄົນລາງຄົນໃນໂລກນີ້ ເຖິງຄວາມນັບວ່າ ເປັນຄົນສະງົບສະງ່ຽມ ເປັນຄົນສະງົບສະງ່ຽມ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ຄົນລາງຄົນໃນໂລກນີ້ຍັງລະຣາຄະບໍ່ໄດ້ ຍ້ອນລະຣາຄະບໍ່ໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນດຸຮ້າຍ

ລະໂທສະບໍ່ໄດ້ ຍ້ອນລະໂທສະບໍ່ໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນດຸຮ້າຍ

ລະໂມຫະບໍ່ໄດ້ ຍ້ອນລະໂມຫະບໍ່ໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນດຸຮ້າຍ

ນາຍບ້ານ ນີ້ແລ ເປັນເຫດເປັນປັດໄຈໃຫ້ຄົນລາງຄົນໃນໂລກນີ້ເຖິງຄວາມນັບວ່າ ເປັນຄົນດຸຮ້າຍ ເປັນຄົນດຸຮ້າຍ

ນາຍບ້ານ ອັນໜຶ່ງ ຄົນລາງຄົນໃນໂລກນີ້ລະຣາຄະໄດ້ແລ້ວ ຍ້ອນລະຣາຄະໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດບໍ່ໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມບໍ່ສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນສະງົບສະງ່ຽມ

ລະໂທສະໄດ້ແລ້ວ ຍ້ອນລະໂທສະໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດບໍ່ໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມບໍ່ສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນສະງົບສະງ່ຽມ

ລະໂມຫະໄດ້ແລ້ວ ຍ້ອນລະໂມຫະໄດ້ ຄົນອື່ນຈຶ່ງຍົວະໃຫ້ໂກດບໍ່ໄດ້ ເມື່ອຄົນອື່ນຍົວະໃຫ້ໂກດ ຍ່ອມບໍ່ສະແດງຄວາມຄຽດໃຫ້ຜາກົດ ເຂົາຈຶ່ງເຖິງຄວາມນັບວ່າ ເປັນຄົນສະງົບສະງ່ຽມ

ນາຍບ້ານ ນີ້ແລ ເປັນເຫດເປັນປັດໄຈໃຫ້ຄົນລາງຄົນໃນໂລກນີ້ເຖິງຄວາມນັບວ່າ ເປັນຄົນສະງົບສະງ່ຽມ ເປັນຄົນສະງົບສະງ່ຽມ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ຈັນດະໄດ້ຂາບທູນ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຈັນທະສູດທີ ໑ ຈົບ**

# ໘. ຕາລະປຸດຕະສູດ

## ວ່າດ້ວຍນາຍບ້ານຊື່ຕານະບຸດ

[໓໕໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ນາຍບ້ານນັກຟ້ອນລຳຊື່ຕານະບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນັກຟ້ອນລຳຜູ້ເຄີຍເປັນອາຈານ ແລະ ປາຈານກ່ອນ ໆ ກ່າວວ່າ ນັກຟ້ອນລຳຄົນໃດເຮັດໃຫ້ປະຊາຊົນຫົວສຽງຟົດຟື້ນດ້ວຍຄຳຈິງແດ່ ຕົວະແດ່ ກາງໂຮງລະຄອນ ກາງງານມະໂຫລະສົບ ນັກຟ້ອນລຳຄົນນັ້ນຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ປະຫາສະ ໃນຂໍ້ນີ້ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຢ່າເລີຍ ນາຍບ້ານ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ແມ່ນເທື່ອທີ ໘ ນາຍບ້ານນັກຟ້ອນລຳຊື່ ຕານະບຸດ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນັກຟ້ອນລຳຜູ້ເຄີຍເປັນ

ອາຈານ ແລະ ປາຈານກ່ອນ ໆ ກ່າວວ່າ ນັກຟ້ອນລຳຄົນໃດເຮັດໃຫ້ປະຊາຊົນຫົວສຽງຟົດຟື້ນດ້ວຍຄຳຈິງແດ່ ຕົວະແດ່ ກາງໂຮງລະຄອນ ກາງງານມະໂຫລະສົບ ນັກຟ້ອນລຳຄົນນັ້ນ ຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ປະຫາສະ ໃນຂໍ້ນີ້ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຢ່າເລີຍ ນາຍບ້ານ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ແມ່ນເທື່ອທີ ໓ ນາຍບ້ານນັກຟ້ອນລຳຊື່ ຕານະບຸດ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນັກຟ້ອນລຳຜູ້ເຄີຍເປັນອາຈານແລະປາຈານກ່ອນ ໆ ກ່າວວ່າ ນັກຟ້ອນລຳຄົນໃດເຮັດໃຫ້ປະຊາຊົນຫົວສຽງຟົດຟື້ນດ້ວຍຄຳຈິງແດ່ ຕົວະແດ່ ກາງໂຮງລະຄອນ ກາງງານມະໂຫລະສົບ ນັກຟ້ອນລຳຄົນນັ້ນຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ປະຫາສະ ໃນຂໍ້ນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ ແຕ່ຖ້າຈັ່ງຊັ້ນ ເຮົາຈັກຕອບແກ່ທ່ານ ແຕ່ກ່ອນ ສັດທັງຫຼາຍບໍ່ປາສະຈາກຣາຄະ ຖືກເຄື່ອງມັດຄືຣາຄະມັດໄວ້ ນັກຟ້ອນລຳຍ່ອມຮິບໂຮມ ທຳເປັນທີ່ຕັ້ງແຫ່ງຄວາມກຳໜັດເຂົ້າໄປກາງໂຮງລະຄອນ ກາງງານມະໂຫລະສົບແກ່ສັດເຫຼົ່ານັ້ນ ໂດຍປະມານຍິ່ງ

ແຕ່ກ່ອນສັດທັງຫຼາຍ ບໍ່ປາສະຈາກໂທສະ ຖືກເຄື່ອງມັດຄື ໂທສະ ມັດໄວ້ ນັກຟ້ອນລຳຍ່ອມຮິບໂຮມທຳເປັນທີ່ຕັ້ງແຫ່ງຄວາມໂກດເຂົ້າໄປ ກາງໂຮງລະຄອນ ກາງງານມະໂຫລະສົບແກ່ສັດເຫຼົ່ານັ້ນ ໂດຍປະມານຍິ່ງ

ແຕ່ກ່ອນສັດທັງຫຼາຍ ບໍ່ປາສະຈາກໂມຫະ ຖືກເຄື່ອງມັດຄື ໂມຫະ ມັດໄວ້ ນັກຟ້ອນລຳຍ່ອມຮິບໂຮມທຳເປັນທີ່ຕັ້ງແຫ່ງຄວາມຫຼົງເຂົ້າໄປກາງໂຮງລະຄອນ ກາງງານມະໂຫລະສົບ ແກ່ສັດເຫຼົ່ານັ້ນ ໂດຍປະມານຍິ່ງ

ນັກຟ້ອນລຳນັ້ນ ຕົນເອງກໍມົວເມົາຜະໝາດ ແລະເຮັດໃຫ້ຜູ້ອື່ນມົວເມົາຜະໝາດດ້ວຍ ຫຼັງຈາກຕາຍແລ້ວ ຈະໄປເກີດໃນນະຣົກຊື່ ປະຫາສະ ແຕ່ຖ້າເຂົາມີຄວາມເຫັນວ່າ ນັກຟ້ອນລຳຄົນໃດ ເຮັດໃຫ້ປະຊາຊົນຫົວສຽງຟົດຟື້ນດ້ວຍຄຳຈິງແດ່ ຕົວະແດ່ ກາງໂຮງລະຄອນ ກາງງານມະໂຫລະສົບ ນັກຟ້ອນລຳຄົນນັ້ນ ຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ປະຫາສະ ຄວາມເຫັນຂອງເຂົາເປັນມິດສາທິດຖິ (ຄວາມເຫັນຜິດ) ແລະ ຜູ້ເປັນມິດສາທິດຖິເຮົາກ່າວວ່າ ມີຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານນັກຟ້ອນລຳຊື່ ຕານະບຸດ ໄດ້ຮ້ອງໄຫ້ ນ້ຳຕາໄຫຼພາກ ພຣະຜູ້ມີພຣະພາກເຈົ້າຕັດວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ນາຍບ້ານນັກຟ້ອນລຳຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຮ້ອງໄຫ້ ຍ້ອນພຣະອົງຕັດແນວນັ້ນກັບຂ້າພຣະອົງ ແຕ່ຂ້າພຣະອົງຖືກພວກນັກຟ້ອນລຳຜູ້ ເປັນອາຈານ ແລະປາຈານກ່ອນ ໆ ຫຼອກລວງໃຫ້ຫຼົງມາດົນວ່າ ນັກຟ້ອນລຳຄົນໃດເຮັດໃຫ້ປະຊາຊົນຫົວສຽງ ຟົດຟື້ນດ້ວຍຄຳຈິງແດ່ ຕົວະແດ່ ກາງໂຮງລະຄອນ ກາງງານມະໂຫລະສົບ ນັກຟ້ອນລຳຄົນນັ້ນ ຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ປະຫາສະ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂ້າພຣະອົງ ເພິ່ງໄດ້ບັນພະຊາອຸປະສົມບົດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ນາຍບ້ານນັກຟ້ອນລຳຊື່ ຕານະບຸດໄດ້ບັນພະຊາອຸປະສົມບົດໃນສຳນັກ ຂອງພຣະຜູ້ມີພຣະພາກເຈົ້າ ແລະ ທ່ານພຣະຕານະບຸດອຸປະສົມບົດໄດ້ບໍ່ດົນ ກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ຯລຯ

ອັນໜຶ່ງ ທ່ານພຣະຕານະບຸດໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ຕາລະປຸດຕະສູດທີ ๘ ຈົບ**

# ๓. ໂຍທາຊີວະສູດ

## ວ່າດ້ວຍນາຍບ້ານຊື່ໂຍທາຊີວະ

[๓๕๕] ຄັ້ງນັ້ນ ນາຍບ້ານຊື່ໂຍທາຊີວະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນັກຮົບອາຊີບຜູ້ເຄີຍເປັນອາຈານ ແລະປາຈານກ່ອນ ໆ ກ່າວວ່າ ນັກຮົບອາຊີບຄົນໃດພະຍາຍາມໃນການສົງຄາມ ນັກຮົບພວກອື່ນສັງຫານນັກຮົບອາຊີບ ຜູ້ພະຍາຍາມນັ້ນໃຫ້ເຖິງ

ຄວາມຕາຍ ເຂົາຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ໃນຂໍ້ນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຢ່າເລີຍ ນາຍບ້ານ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ແມ່ນເທື່ອທີ ໔ ໗໑໗

ແມ່ນເທື່ອທີ ໓ ນາຍບ້ານຊື່ ໂຍທາຊີວະໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ໄດ້ຍິນຄຳຂອງພວກນັກຣົບອາຊີບ ຜູ້ເປັນອາຈານແລະປາຈານກ່ອນ ໆ ກ່າວວ່າ ນັກຣົບອາຊີບຄົນໃດພະຍາຍາມໃນການສົງຄາມ ນັກຣົບພວກອື່ນ ສັງຫານນັກຣົບອາຊີບ ຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ໃນຂໍ້ນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ ແຕ່ຖ້າຈັ່ງຊັ້ນ ເຮົາຈັກຕອບແກ່ທ່ານ ນັກຣົບອາຊີບ ຄົນໃດພະຍາຍາມໃນການສົງຄາມ ຈິດຖືກເຂົາຢຶດ ເຮັດໄວ້ຜິດ ຕັ້ງໄວ້ບໍ່ດີໃນເບື້ອງຕົ້ນວ່າ ສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກແທງ ຈົ່ງຂາດສູນ ຈົ່ງພິນາດ ຫຼື ຢ່າໄດ້ມີ ນັກຣົບພວກອື່ນສັງຫານນັກຣົບອາຊີບຜູ້ພະຍາຍາມນັ້ນ ໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນນະຣົກຊື່ ສະຣະຊິຕະ ກໍຖ້າເຂົາມີຄວາມເຫັນແນວນີ້ວ່າ ນັກຣົບອາຊີບຄົນໃດພະຍາຍາມໃນການສົງຄາມ ນັກຣົບພວກອື່ນສັງຫານນັກຣົບອາຊີບຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ຄວາມເຫັນຂອງເຂົາເປັນມິດສາທິດຖິ ແລະ ຜູ້ເປັນມິດສາທິດຖິເຮົາກ່າວວ່າ ມີຄະຕິແນວ ໑ ໃນ ໔ ແນວ ຄື ນະຣົກ ຫຼື ກຳເນີດສັດເດຍຣັດສານ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ ໂຍທາຊີວະໄດ້ຮ້ອງໄຫ້ ນ້ຳຕາໄຫຼພາກ ພຣະຜູ້ມີພຣະພາກເຈົ້າຕັດວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ທ່ານຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ນາຍບ້ານຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຮ້ອງໄຫ້ຍ້ອນພຣະອົງຕັດແນວນັ້ນກັບຂ້າພຣະອົງ ແຕ່ຂ້າພຣະອົງຖືກພວກນັກຣົບອາຊີບຜູ້ເປັນອາຈານ ແລະປາຈານກ່ອນ ໆ ຫຼອກລວງໃຫ້ຫຼົງມາດົນວ່າ ນັກຣົບອາຊີບຄົນໃດພະຍາຍາມໃນການສົງຄາມ ນັກຣົບພວກອື່ນສັງຫານເຂົາຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາ ຊື່ ສະຣະຊິຕະ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດ

ຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**โยທາຊີວະສູດທີ ๓ ຈົບ**

# ๔. ຫັດຖາໂຣຫະສູດ

## ວ່າດ້ວຍນາຍບ້ານຊື່ຫັດຖາໂຣຫະ

[๓๕๒] ຄັ້ງນັ້ນ ນາຍບ້ານຊື່ ຫັດຖາໂຣຫະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ໆລໆ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຫັດຖາໂຣຫະສູດທີ ๔ ຈົບ**

# ๕. ອັດສາໂຣຫະສູດ

## ວ່າດ້ວຍນາຍບ້ານຊື່ອັດສາໂຣຫະ

[๓๕๓] ຄັ້ງນັ້ນ ນາຍບ້ານຊື່ ອັດສາໂຣຫະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ນັ່ງຢູ່ບ່ອນທີ່ສົມຄວນ ແລ້ວໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນາຍທະຫານມ້າ ຜູ້ເຄີຍເປັນອາຈານ ແລະປາຈານກ່ອນ ໆ ກ່າວວ່າ ທະຫານມ້າຄົນໃດພະຍາຍາມໃນການສົງຄາມ ທະຫານມ້າພວກອື່ນສັງຫານທະຫານມ້າຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ໃນຂໍ້ນີ້ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຢ່າເລີຍ ນາຍບ້ານ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ແມ່ນເທື່ອທີ ๒ ໆລໆ

ແມ່ນເທື່ອທີ ๓ ນາຍບ້ານຊື່ ອັດສາໂຣຫະ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນຄຳຂອງພວກນາຍທະຫານມ້າຜູ້ເຄີຍເປັນອາຈານແລະປາຈານກ່ອນ ໆ ກ່າວວ່າ ທະຫານມ້າຄົນໃດພະຍາຍາມໃນການສົງຄາມ ທະຫານມ້າ ພວກອື່ນ

ສັງຫານທະຫານມ້າຜູ້ພະຍາຍາມນັ້ນ ໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ສະຣະຊິຕະ ໃນຂໍ້ນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ນາຍບ້ານ ຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ ແຕ່ຖ້າຈັ່ງຊັ້ນ ເຮົາຈັກຕອບແກ່ທ່ານ ທະຫານມ້າຄົນໃດພະຍາຍາມໃນການສົງຄາມ ຈິດຖືກເຂົາຍຶດ ເຮັດໄວ້ຜິດ ຕັ້ງໄວ້ບໍ່ດີໃນເບື້ອງຕົ້ນວ່າ ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກແທງ ຈົ່ງຂາດສູນ ຈົ່ງພິນາດ ຫຼື ຢ່າໄດ້ມີ ທະຫານມ້າພວກອື່ນສັງຫານທະຫານມ້າຜູ້ພະຍາຍາມນັ້ນ ໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນນະຣົກຊື່ວ່າ ສະຣະຊິຕະ ແຕ່ຖ້າເຂົາມີຄວາມເຫັນນີ້ວ່າ ທະຫານມ້າຄົນໃດພະຍາຍາມໃນການສົງຄາມທະຫານມ້າພວກອື່ນ ສັງຫານທະຫານມ້າຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ຄວາມເຫັນຂອງເຂົາເປັນມິດສາທິດຖິ ແລະ ຜູ້ເປັນມິດສາທິດຖິເຮົາກ່າວວ່າມີຄະຕິເປັນແນວ ໑ ໃນ ໒ ແນວ ຄື ນະຣົກຫຼືກຳເນີດສັດເດຍຣັດສານ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ອັດສາໂຣຫະໄດ້ຮ້ອງໄຫ້ ນໍ້າຕາໄຫຼພາກ ພຣະຜູ້ມີພຣະພາກເຈົ້າຕັດວ່າ ນາຍບ້ານ ເຮົາໄດ້ຫ້າມທ່ານແລ້ວວ່າ ຢ່າເລີຍ ນາຍບ້ານ ທ່ານຈົ່ງພັກບັນຫາຂໍ້ນີ້ໄວ້ ຢ່າຖາມເຮົາເລີຍ

ນາຍບ້ານຊື່ ອັດສາໂຣຫະ ໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ຮ້ອງໄຫ້ຍ້ອນພຣະອົງຕັດກັບຂ້າພຣະອົງແນວນັ້ນ ແຕ່ຂ້າພຣະອົງຖືກພວກນາຍທະຫານມ້າຜູ້ເຄີຍເປັນອາຈານແລະປາຈານກ່ອນ ໆ ຫຼອກລວງໃຫ້ຫຼົງມາດົນວ່າ ທະຫານມ້າຄົນໃດພະຍາຍາມໃນການສົງຄາມ ທະຫານມ້າພວກອື່ນສັງຫານທະຫານມ້າຜູ້ພະຍາຍາມນັ້ນໃຫ້ເຖິງຄວາມຕາຍ ເຂົາຫຼັງຈາກຕາຍແລ້ວ ຈະເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທວະດາຊື່ ສະຣະຊິຕະ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ອັດສາໂຣຫະສູດທີ ໕ ຈົບ**

## ໖. ອະສິພັນທະກະປຸດຕະສູດ

### ວ່າດ້ວຍນາຍບ້ານຊື່ອຊີພັນທິກາບຸດ

[໓໕໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທາ ຄັ້ງນັ້ນ ນາຍບ້ານຊື່ ອະສິພັນທະກະບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່

ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພວກພາມຊາວປັດສາພູມມີເຕົ້ານໍ້າຕິດໂຕ ປະດັບພວງມາໄລສາຫຣ່າຍ ອາບນໍ້າທຸກເຊົ້າເຢັນ ບຳລຸງໄຟ ພາມເຫຼົ່ານັ້ນຊື່ວ່າ ເຮັດສັດທີ່ຕາຍແລ້ວໃຫ້ຟື້ນ ໃຫ້ຮູ້ຖືກ ໃຫ້ຂຶ້ນສະຫວັນ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າສາມາດຈະເຮັດສັດໂລກທັງໝົດ ຫຼັງຈາກຕາຍແລ້ວໃຫ້ໄປເກີດໃນ ສຸກຄະຕິໂລກສະຫວັນໄດ້ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ຖ້າຈັ່ງຊັ້ນ ເຮົາຈັກຍ້ອນຖາມໃນບັນຫາຂໍ້ນີ້ ທ່ານເພິ່ງຕອບຕາມສົມຄວນ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນການ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຍາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ໝູ່ມະຫາຊົນເພິ່ງມາປະຊຸມແລ້ວສູດອ້ອນວອນ ສູດສັນເສີນ ປະນົມມືຍ່າງວຽນຮອບບຸຣຸດນັ້ນວ່າ ຂໍບຸຣຸດນີ້ຫຼັງຈາກຕາຍແລ້ວ ຈົ່ງໄປເກີດໃນສຸກຄະຕິໂລກສະຫວັນເທີ້ນ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ບຸຣຸດນັ້ນ ຫຼັງຈາກຕາຍແລ້ວເພິ່ງໄປເກີດໃນສຸກຄະຕິໂລກສະຫວັນຍ້ອນການສູດອ້ອນວອນ ຍ້ອນການສູດສັນເສີນ ຫຼື ຍ້ອນການປະນົມ ມືຍ່າງວຽນຮອບແຫ່ງໝູ່ມະຫາຊົນເປັນເຫດໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ນາຍບ້ານ ປຽບຄື ບຸຣຸດໂຍນກ້ອນຫີນໃຫຍ່ລົງໃນແມ່ນໍ້າເລິກ ໝູ່ມະຫາຊົນ ເພິ່ງມາປະຊຸມແລ້ວສູດອ້ອນວອນ ສູດສັນເສີນ ປະນົມມືຍ່າງວຽນຮອບກ້ອນຫີນໃຫຍ່ນັ້ນວ່າ ຈົ່ງໂປ່ໂລ່ຂຶ້ນເທີ້ນ ກ້ອນຫີນໃຫຍ່ ຈົ່ງລອຍຂຶ້ນເທີ້ນ ກ້ອນຫີນໃຫຍ່ ຈົ່ງຂຶ້ນບົກເທີ້ນ ກ້ອນຫີນໃຫຍ່

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ກ້ອນຫີນໃຫຍ່ນັ້ນເພິ່ງໂປ່ໂລ່ຂຶ້ນ ລອຍຂຶ້ນ ຫຼື ຂຶ້ນບົກຍ້ອນການສູດອ້ອນວອນ ຍ້ອນການສູດສັນເສີນ ຫຼື ຍ້ອນການປະນົມມື ຍ່າງວຽນຮອບແຫ່ງໝູ່ມະຫາຊົນເປັນເຫດໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ນາຍບ້ານ ອຸປະມານັ້ນສັນໃດ ອຸປະໄມນີ້ກໍຄືກັນສັນນັ້ນ ບຸຣຸດໃດເປັນຜູ້ຂ້າສັດ ລັກຊັບປະພຶດຜິດໃນການ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຍາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ໝູ່ມະຫາຊົນເພິ່ງມາປະຊຸມແລ້ວສູດອ້ອນວອນ ສູດສັນເສີນ ປະນົມມືຍ່າງວຽນຮອບບຸຣຸດນັ້ນວ່າ ຂໍບຸຣຸດນີ້ຫຼັງຈາກຕາຍແລ້ວ ຈົ່ງໄປເກີດໃນສຸກຄະຕິໂລກສະຫວັນເທີ້ນ ກໍ່ຕາມ ບຸຣຸດນັ້ນ ຫຼັງຈາກຕາຍໄປແລ້ວ ຈະຕ້ອງໄປເກີດໃນອະບາຍ ທຸກຄະຕິວິນິບາດ ນະຮົກ

## ຜູ້ເວັ້ນຈາກອະກຸສົນກຳ ໑໐ ຍ່ອມໄປເກີດໃນສຸກຄະຕິ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດໃນໂລກນີ້ ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ແລະ ການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ບໍ່ມີຈິດພະຍາບາດ ເປັນສຳມາທິດຖິ ໝູ່ມະຫາຊົນເພິ່ງມາປະຊຸມແລ້ວ ສູດອ້ອນວອນ ສູດສັນເສີນ ປະນົມມືຍ່າງວຽນຮອບບຸຣຸດນັ້ນ ແລ້ວຂໍວ່າ ບຸຣຸດນີ້ຫຼັງຈາກຕາຍແລ້ວ ຈົ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກເທີ້ນ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ບຸຣຸດນັ້ນ ຫຼັງຈາກຕາຍແລ້ວເພິ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຍ້ອນການສູດອ້ອນວອນ ຍ້ອນການສູດສາບແຊ່ງ ຫຼື ຍ້ອນການປະນົມມື ຍ່າງວຽນຮອບແຫ່ງໝູ່ມະຫາຊົນເປັນເຫດໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ນາຍບ້ານ ປຽບຄື ບຸຣຸດມຸດລົງໃນແມ່ນ້ຳເລິກແລ້ວທຸບໝໍ້ເນີຍໃສ ຫຼື ໝໍ້ນ້ຳມັນ ກ້ອນຫີນ ຫຼື ກະເບື້ອງໝໍ້ນັ້ນ ເພິ່ງຈົມລົງໃນແມ່ນ້ຳນັ້ນ ສ່ວນເນີຍໃສ ຫຼື ນ້ຳມັນໃນໝໍ້ນັ້ນ ເພິ່ງລອຍຂຶ້ນມາໜ້ານ້ຳ ໝູ່ມະຫາຊົນ ເພິ່ງມາປະຊຸມແລ້ວສູດອ້ອນວອນ ສູດສາບແຊ່ງ ປະນົມມືຍ່າງວຽນຮອບເນີຍໃສ ຫຼື ນ້ຳມັນນັ້ນວ່າ ຈົງຈົມລົງເທີ້ນ ເນີຍໃສແລະນ້ຳມັນ ຈົງຢ່າໄດ້ຟູຂຶ້ນມາເທີ້ນ ເນີຍໃສແລະນ້ຳມັນ ຈົ່ງດິ່ງລົງຂ້າງລຸ່ມເທີ້ນ  ເນີຍໃສແລະນ້ຳມັນ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເນີຍໃສແລະນ້ຳມັນນັ້ນ ເພິ່ງຈົມລົງ ບໍ່ຟູຂຶ້ນມາ ຫຼື ດິ່ງລົງຂ້າງລຸ່ມ ຍ້ອນການສູດອ້ອນວອນ ຍ້ອນການສູດສາບແຊ່ງ ຫຼື ຍ້ອນການປະນົມມື ຍ່າງວຽນຮອບແຫ່ງໝູ່ມະຫາຊົນເປັນເຫດໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ນາຍບ້ານ ອຸປະມານັ້ນສັນໃດ ອຸປະໄມນີ້ກໍຄືກັນສັນນັ້ນ ບຸຣຸດໃດ ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ແລະ ການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ບໍ່ມີຈິດພະຍາບາດ ເປັນສຳມາທິດຖິ ແມ່ນວ່າ ໝູ່ມະຫາຊົນມາປະຊຸມກັນແລ້ວສູດອ້ອນວອນ ສູດສາບແຊ່ງ ປະນົມມືຍ່າງວຽນຮອບບຸຣຸດນັ້ນຂໍວ່າ ບຸຣຸດນີ້ຫຼັງຈາກຕາຍແລ້ວ ຈົ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກເທີ້ນກໍ່ຕາມ ແຕ່ບຸຣຸດນັ້ນ ຫຼັງຈາກຕາຍແລ້ວ ໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ ອະສິພັນທະກະ ບຸດໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ອນຫຼາຍ ໆລໆ ຂໍພຣະຜູ້

ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ

**ອະສິພັນທະກະປຸດຕະສູດທີ ໖ ຈົບ**

# ໗. ເຂດຕູປະມະສູດ

## ວ່າດ້ວຍອຸປະມາດ້ວຍນາ

[๔๕๘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທາ ຄັ້ງນັ້ນ ນາຍບ້ານຊື່ ອະສິພັນທະກະບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຊົງມີຄວາມອີດູນຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ບໍ່ແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບ ວ່າ ແນວນັ້ນ ນາຍບ້ານ ຕະຖາຄົດມີຄວາມອີດູນຸ້ງປະໂຫຍດເກື້ອກູນຕໍ່ສັບພະສັດ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນແນວນີ້ ຍ້ອນເຫດໃດ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງສະແດງທຳໂດຍເຄົາລົບແກ່ຄົນລາງພວກ ບໍ່ຊົງສະແດງທຳໂດຍເຄົາລົບຈັ່ງຊັ້ນແກ່ຄົນລາງພວກ

## ປຽບການສະແດງທຳກັບການຫວ່ານພືດໃນນາ ໓ ຊະນິດ

ນາຍບ້ານ ຖ້າຈັ່ງຊັ້ນ ເຮົາຈັກຍ້ອນຖາມທ່ານໃນບັນຫາຂໍ້ນີ້ ທ່ານເພິ່ງຕອບຕາມສົມຄວນ ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄະຫະບໍດີຊາວນາໃນໂລກນີ້ມີນາຢູ່ ໓ ຊະນິດ ຄືຊະນິດໜຶ່ງເປັນນາດີ ຊະນິດໜຶ່ງເປັນນາປານກາງ ຊະນິດໜຶ່ງເປັນນາບໍ່ດີ ມີດິນແຂງ ມີດິນເຄັມ ພື້ນດິນບໍ່ດີ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຄະຫະບໍດີ ເມື່ອຊາວນາປະສົງຈະຫວ່ານພືດຈັກຫວ່ານໃນນາຊະນິດໃດກ່ອນ ຄື ນາຊະນິດດີ ຊະນິດປານກາງ ຫຼື ຊະນິດບໍ່ດີ ເຊິ່ງມີດິນແຂງ ມີດິນເຄັມ ພື້ນດິນບໍ່ດີ?

ຂ້າແດ່ ພຣະອົງຜູ້ຈະເລີນ ຊາວນາ ເມື່ອປະສົງຈະຫວ່ານພືດ ເພິ່ງຫວ່ານໃນນາຊະນິດດີນັ້ນກ່ອນ ແລ້ວຫວ່ານລົງໃນນາຊະນິດປານກາງ ແລ້ວຈຶ່ງຫວ່ານແດ່ ບໍ່ຫວ່ານແດ່ ໃນນາຊະນິດບໍ່ດີ ເຊິ່ງມີດິນແຂງ ມີດິນເຄັມ ພື້ນດິນບໍ່ດີ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນວ່າ ທີ່ສຸດກໍຈັກເປັນອາຫານງົວ

ນາຍບ້ານ ເຮົາສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນແກ່ພິກຂຸ ແລະ ພິກຂຸນີທັງຫຼາຍຂອງເຮົາ ປຽບຄື ຄະຫະບໍດີຊາວນາຫວ່ານພືດໃນນາຊະນິດດີນັ້ນສັນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸ ແລະພິກຂຸນີເຫຼົ່ານັ້ນ ມີເຮົາເປັນທີ່ເພິ່ງ ມີເຮົາເປັນບ່ອນອາໄສ ມີເຮົາເປັນທີ່ຕ້ານທານ ມີເຮົາເປັນສະຣະນະຢູ່

ເຮົາສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ແກ່ອຸປາສົກ ແລະ ອຸປາສິກາທັງຫຼາຍຂອງເຮົາ ປຽບຄື ຄະຫະບໍດີຊາວນາຫວ່ານພືດໃນນາຊະນິດປານກາງນັ້ນສັນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນອຸປາສົກ ແລະອຸປາສິກາເຫຼົ່ານັ້ນ ມີເຮົາເປັນທີ່ເພິ່ງ ມີເຮົາເປັນບ່ອນອາໄສ ມີເຮົາເປັນທີ່ຕ້ານທານ ມີເຮົາເປັນສະຣະນະຢູ່

ແລະ ເຮົາສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ອັນຍະເດຍຣະຖີ ສະມະນະ ພາມ ແລະ ປະຣິພາຊົກທັງຫຼາຍຂອງເຮົາ ປຽບຄືຄະຫະບໍດີຊາວນາຫວ່ານພືດໃນນາຊະນິດບໍ່ດີນັ້ນ ເຊິ່ງມີດິນແຂງ ມີດິນເຄັມ ພື້ນດິນບໍ່ດີ ສັນນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນອັນຍະເດຍຣະຖີ ສະມະນະ ພາມ ແລະປະຣິພາຊົກເຫຼົ່ານັ້ນ ເພິ່ງຮູ້ທຳແມ່ນບົດດຽວ ຄວາມຮູ້ນັ້ນ ເພິ່ງເປັນໄປເພື່ອປະໂຫຍດເກື້ອກູນເພື່ອຄວາມສຸກແກ່ພວກເຂົາສິ້ນການລະນານ

## ປຽບການສະແດງທຳກັບການຕັກນ້ຳໃສ່ໂອ່ງນ້ຳ

ນາຍບ້ານ ປຽບຄືບຸຣຸດມີໂອ່ງນ້ຳ ໓ ໃບ ຄື ໂອ່ງນ້ຳໃບໜຶ່ງບໍ່ມີຮອຍແຫງ ນ້ຳຊຶມໄຫຼອອກບໍ່ໄດ້ ໃບໜຶ່ງບໍ່ມີຮອຍແຫງແຕ່ນ້ຳຊຶມໄຫຼອອກໄດ້ ໃບໜຶ່ງມີຮອຍແຫງ ນ້ຳຊຶມໄຫຼອອກໄດ້ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດນັ້ນ ປະສົງຈະໃສ່ນ້ຳ ເພິ່ງໃສ່ໃນໂອ່ງນ້ຳໃບໃດກ່ອນ ຄືໂອ່ງນ້ຳໃບທີ່ບໍ່ມີຮອຍແຫງນ້ຳຊຶມໄຫຼອອກບໍ່ໄດ້ ໃບທີ່ບໍ່ມີຮອຍແຫງແຕ່ນ້ຳຊຶມໄຫຼອອກໄດ້ ຫຼື ໃບທີ່ມີຮອຍແຫງນ້ຳຊຶມໄຫຼອອກໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດນັ້ນ ປະສົງຈະໃສ່ນ້ຳ ເພິ່ງໃສ່ໃນໂອ່ງນ້ຳໃບທີ່ບໍ່ມີຮອຍແຫງນ້ຳຊຶມໄຫຼອອກບໍ່ໄດ້ກ່ອນ ແລ້ວໃສ່ໃນໂອ່ງນ້ຳໃບທີ່ບໍ່ມີຮອຍແຫງ ແຕ່ນ້ຳຊຶມໄຫຼອອກໄດ້ ແລ້ວໃສ່ແດ່ ບໍ່ໃສ່ແດ່ ໃນໂອ່ງນ້ຳໃບທີ່ມີຮອຍແຫງນ້ຳຊຶມໄຫຼອອກໄດ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນວ່າທີ່ສຸດກໍຈັກເປັນນ້ຳໃຊ້ລ້າງສິ່ງຂອງທີ່ນັ້ນ

ນາຍບ້ານ ອຸປະມານັ້ນສັນໃດ ອຸປະໄມນີ້ກໍຄືກັນສັນນັ້ນ ເຮົາສະແດງທຳມີຄວາມງາມໃນ

ເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນແກ່ພິກຂຸ ແລະພິກຂຸນີທັງຫຼາຍຂອງເຮົາ ປຽບຄື ບຸຣຸດໃສ່ນໍ້າໃນໂອ່ງນໍ້າໃບທີ່ບໍ່ມີຮອຍແຫງ ນໍ້າຊຶມໄຫຼອອກບໍ່ໄດ້ສັນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸ ແລະພິກຂຸນີເຫຼົ່ານັ້ນ ມີເຮົາເປັນທີ່ເພິ່ງ ມີເຮົາເປັນບ່ອນອາໄສ ມີເຮົາເປັນທີ່ຕ້ານທານ ມີເຮົາເປັນສະຣະນະຢູ່

ເຮົາສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ແກ່ອຸປາສົກ ແລະອຸປາສິກາທັງຫຼາຍຂອງເຮົາ ປຽບຄື ບຸຣຸດໃສ່ນໍ້າໃນໂອ່ງນໍ້າໃບທີ່ບໍ່ມີຮອຍແຫງ ແຕ່ນໍ້າຊຶມໄຫຼອອກໄດ້ສັນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນອຸປາສົກແລະອຸປາສິກາເຫຼົ່ານັ້ນ ມີເຮົາເປັນທີ່ເພິ່ງ ມີເຮົາເປັນບ່ອນອາໄສ ມີເຮົາເປັນທີ່ຕ້ານທານ ມີເຮົາເປັນສະຣະນະຢູ່

ເຮົາສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ແກ່ອັນຍະເດຍຣະຖີ ສະມະນະ ພາມ ແລະປະຣິພາຊົກທັງຫຼາຍຂອງເຮົາ ປຽບຄື ບຸຣຸດໃສ່ນໍ້າໃນໂອ່ງນໍ້າໃບທີ່ມີຮອຍແຫງ ນໍ້າຊຶມໄຫຼອອກໄດ້ສັນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນອັນຍະເດຍຣະຖີ ສະມະນະ ພາມ ແລະ ປະຣິພາຊົກເຫຼົ່ານັ້ນ ຖ້າແມ່ນວ່າ ຮູ້ທຳໄດ້ແມ່ນບົດດຽວ ຄວາມຮູ້ນັ້ນເພິ່ງເປັນໄປເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ພວກເຂົາສິ້ນການລະນານ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ ອະສິພັນທະກະບຸດໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເຂດຕູປະມະສູດທີ ໗ ຈົບ**

# ໘. ສັງຂະທະມະສູດ

## ວ່າດ້ວຍຄົນເປົ່າຫອຍສັງ

[໓໓໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທາ ຄັ້ງນັ້ນ ນາຍບ້ານຊື່ ອະສິພັນທະກະບຸດ ຜູ້ເປັນສາວົກຂອງນິຄົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບນາຍບ້ານຊື່ ອະສິພັນທະກະບຸດ ດັ່ງນີ້ວ່າ ນາຍບ້ານ ນິຄົນນາຕະບຸດ ສະແດງທຳແກ່ພວກສາວົກແນວໃດ?

ນາຍບ້ານຊື່ ອະສິພັນທະກະບຸດ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ນິຄົນນາຕະບຸດສະແດງທຳແກ່ພວກສາວົກແນວນີ້ ວ່າ ຜູ້ຂ້າສັດທັງໝົດ ຕ້ອງໄປອະບາຍ ຕົກນະຣົກ ຜູ້ລັກຊັບທັງໝົດ ຕ້ອງໄປອະບາຍ ຕົກນະຣົກ ຜູ້ປະພຶດຜິດໃນກາມທັງໝົດ ຕ້ອງໄປອະບາຍ ຕົກນະຣົກ ຜູ້ເວົ້າຕົວະທັງໝົດ ຕ້ອງໄປອະບາຍ ຕົກນະຣົກ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ຂ້າແດ່ ພຣະອົງຜູ້ຈະເລີນ ນິຄົນ ນາຕະບຸດ ສະແດງທຳແກ່ພວກສາວົກໄວ້ແນວນີ້

ນາຍບ້ານ ນິຄົນ ນາຕະບຸດ ສະແດງທຳແກ່ພວກສາວົກວ່າ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ເມື່ອເປັນຈັ່ງຊັ້ນ ກໍຈັກບໍ່ມີໃຜໄປອະບາຍຕົກນະຣົກຕາມຄຳຂອງນິຄົນ ນາຕະບຸດເລີຍ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດຜູ້ຂ້າສັດອາໄສເວລາ ແລະບໍ່ແມ່ນເວລາຂອງກາງຄືນ ຫຼື ກາງເວັນ ເວລາທີ່ເຂົາຂ້າສັດ ຫຼື ເວລາທີ່ເຂົາບໍ່ຂ້າສັດ ເວລາໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຜູ້ຂ້າສັດອາໄສເວລາ ແລະ ບໍ່ແມ່ນເວລາຂອງກາງຄືນ ຫຼື ກາງເວັນ ເວລາທີ່ເຂົາຂ້າສັດໜ້ອຍກວ່າ ເວລາທີ່ເຂົາບໍ່ຂ້າສັດຫຼາຍກວ່າ

ນາຍບ້ານ ນິຄົນ ນາຕະບຸດສະແດງທຳແກ່ພວກສາວົກວ່າ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ເມື່ອເປັນຈັ່ງຊັ້ນ ກໍຈັກບໍ່ມີໃຜໄປອະບາຍ ຕົກນະຣົກຕາມຄຳຂອງນິຄົນ ນາຕະບຸດເລີຍ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດຜູ້ລັກຊັບອາໄສເວລາ ແລະບໍ່ແມ່ນເວລາຂອງກາງຄືນຫຼືກາງເວັນ ເວລາທີ່ເຂົາລັກຊັບ ຫຼື ເວລາທີ່ເຂົາບໍ່ລັກຊັບ ເວລາໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຜູ້ລັກຊັບອາໄສເວລາ ແລະບໍ່ແມ່ນເວລາຂອງກາງຄືນຫຼືກາງເວັນ ເວລາທີ່ເຂົາລັກຊັບໜ້ອຍກວ່າ ເວລາທີ່ເຂົາບໍ່ລັກຊັບຫຼາຍກວ່າ

ນາຍບ້ານ ນິຄົນ ນາຕະບຸດສະແດງທຳແກ່ພວກສາວົກວ່າ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ເມື່ອເປັນຈັ່ງຊັ້ນ ກໍຈັກບໍ່ມີໃຜໄປອະບາຍ ຕົກນະຣົກຕາມຄຳຂອງນິຄົນ ນາຕະບຸດເລີຍ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດຜູ້ປະພຶດຜິດໃນກາມ ອາໄສເວລາແລະບໍ່ແມ່ນເວລາຂອງກາງຄືນຫຼືກາງເວັນ ເວລາທີ່ເຂົາປະພຶດຜິດໃນກາມ ຫຼື ເວລາທີ່ເຂົາບໍ່ປະພຶດຜິດໃນກາມ ເວລາໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຜູ້ປະພຶດຜິດໃນກາມອາໄສເວລາ ແລະບໍ່ແມ່ນເວລາຂອງກາງຄືນຫຼືກາງເວັນ ເວລາທີ່ເຂົາປະພຶດຜິດໃນກາມໜ້ອຍກວ່າ ເວລາທີ່ເຂົາບໍ່ປະພຶດຜິດໃນກາມຫຼາຍກວ່າ

ນາຍບ້ານ ນິຄົນ ນາຕະບຸດສະແດງທຳແກ່ພວກສາວົກວ່າ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ເມື່ອເປັນຈັ່ງຊັ້ນ ກໍຈັກບໍ່ມີໃຜໄປອະບາຍ ຕົກນະຮົກຕາມຄຳຂອງນິຄົນ ນາຕະບຸດເລີຍ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ບຸຣຸດຜູ້ເວົ້າຕົວະອາໄສເວລາ ແລະບໍ່ແມ່ນເວລາຂອງ ກາງຄືນຫຼືກາງເວັນ ເວລາທີ່ເຂົາເວົ້າຕົວະ ຫຼື ເວລາທີ່ເຂົາບໍ່ເວົ້າຕົວະ ເວລາໃດຈະຫຼາຍກວ່າກັນ?

ຂ້າແດ່ ພຣະອົງຜູ້ຈະເລີນ ບຸຣຸດຜູ້ເວົ້າຕົວະອາໄສເວລາ ແລະບໍ່ແມ່ນເວລາຂອງກາງຄືນ ຫຼືກາງເວັນ ເວລາທີ່ເຂົາເວົ້າຕົວະໜ້ອຍກວ່າ ເວລາທີ່ເຂົາບໍ່ເວົ້າຕົວະຫຼາຍກວ່າ

ນາຍບ້ານ ນິຄົນ ນາຕະບຸດສະແດງທຳແກ່ພວກສາວົກວ່າ ກຳໃດ ໆ ມີຢູ່ຫຼາຍ ກຳນັ້ນ ໆ ຍ່ອມນຳບຸກຄົນໄປ ເມື່ອເປັນຈັ່ງຊັ້ນ ກໍຈັກບໍ່ມີໃຜໄປອະບາຍ ຕົກນະຮົກຕາມຄຳຂອງນິຄົນ ນາຕະບຸດເລີຍ

ສາດສະດາລາງຄົນໃນໂລກນີ້ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ຜູ້ຂ້າສັດທັງໝົດຕ້ອງ ໄປອະບາຍ ຕົກນະຮົກ ຜູ້ລັກຊັບທັງໝົດຕ້ອງໄປອະບາຍ ຕົກນະຮົກ ຜູ້ປະພຶດຜິດໃນກາມທັງ ໝົດຕ້ອງໄປອະບາຍ ຕົກນະຮົກ ຜູ້ເວົ້າຕົວະທັງໝົດຕ້ອງໄປອະບາຍ ຕົກນະຮົກ

ເມື່ອສາວົກຜູ້ເຫຼື້ອມໃສຢ່າງຍິ່ງ ໃນສາດສະດາອົງນັ້ນ ມີທິດຖິແນວນີ້ວ່າ ສາດສະດາ ຂອງເຮົາມີວາທະແນວນີ້ ມີທິດຖິແນວນີ້ວ່າ ຜູ້ຂ້າສັດທັງໝົດຕ້ອງໄປອະບາຍ ຕົກນະຮົກ ສາວົກ ຂອງສາດສະດານັ້ນກັບໄດ້ທິດຖິວ່າ ສັດທີ່ຖືກເຮົາຂ້າກໍມີຢູ່ ແມ່ນເຮົາກໍຕ້ອງໄປອະບາຍ ຕົກນະ ຮົກ ເຂົາບໍ່ລະຄຳເວົ້າ ບໍ່ລະຄວາມຄິດ ບໍ່ສະລະທິດຖິນັ້ນ ຍ່ອມຕົກນະຮົກຄືຖືກນຳມາຂັງໄວ້ ສັນນັ້ນ

ສາວົກຂອງສາດສະດານັ້ນ ມີທິດຖິແນວນີ້ວ່າ ສາດສະດາຂອງເຮົາມີວາທະແນວນີ້ ມີທິດ ຖິແນວນີ້ວ່າ ຜູ້ລັກຊັບທັງໝົດຕ້ອງໄປອະບາຍ ຕົກນະຮົກ ສາວົກຂອງສາດສະດານັ້ນກັບໄດ້ທິດ ຖິວ່າ ຊັບທີ່ເຮົາເຄີຍລັກກໍມີຢູ່ ແມ່ນເຮົາກໍຕ້ອງໄປອະບາຍ ຕົກນະຮົກ ຖ້າເຂົາຍັງບໍ່ລະຄຳເວົ້າ ບໍ່ ລະຄວາມຄິດ ບໍ່ສະລະທິດຖິນັ້ນ ຍ່ອມຕົກນະຮົກຄືຖືກນຳມາຂັງໄວ້ສັນນັ້ນ

ສາວົກຂອງສາດສະດານັ້ນ ມີທິດຖິແນວນີ້ວ່າ ສາດສະດາຂອງເຮົາມີວາທະແນວນີ້ ມີທິດ ຖິແນວນີ້ວ່າ ຜູ້ປະພຶດຜິດໃນກາມທັງໝົດຕ້ອງໄປອະບາຍ ຕົກນະຮົກ ສາວົກຂອງສາດສະດານັ້ນ ກັບໄດ້ທິດຖິວ່າ ການທີ່ເຮົາປະພຶດຜິດໃນກາມກໍມີຢູ່ ແມ່ນເຮົາກໍຕ້ອງໄປອະບາຍ ຕົກນະຮົກ ຖ້າ ເຂົາຍັງບໍ່ລະຄຳເວົ້າ ບໍ່ລະຄວາມຄິດ ບໍ່ສະລະທິດຖິນັ້ນ ຍ່ອມຕົກນະຮົກຄືຖືກນຳມາຂັງໄວ້ສັນນັ້ນ

ສາວົກຂອງສາດສະດານັ້ນມີທິດຖິແນວນີ້ວ່າ ສາດສະດາຂອງເຮົາມີວາທະແນວນີ້ ມີທິດ

ຖືແນວນີ້ວ່າ ຜູ້ເວົ້າຕົວະທັງໝົດຕ້ອງໄປອະບາຍ ຕົກນະຮົກ ສາວົກຂອງສາດສະດານັ້ນກັບໄດ້ທິດຖິວ່າ ຄຳຕົວະທີ່ເຮົາເວົ້າແລ້ວກໍມີຢູ່ ແມ່ນເຮົາກໍຕ້ອງໄປອະບາຍ ຕົກນະຮົກ ຖ້າເຂົາຍັງບໍ່ລະຄຳເວົ້າ ບໍ່ລະຄວາມຄິດ ບໍ່ສະລະທິດຖິນັ້ນ ຍ່ອມຕົກນະຮົກຄືຖືກນຳມາຂັງໄວ້ສັນນັ້ນ

ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຮູ້ດ້ວຍຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ຕະຖາຄົດນັ້ນ ຕຳໜິຕິຕຽນການຂ້າສັດໂດຍປະການຕ່າງ ໆ ເປັນໄວ້ຈຳນວນຫຼາຍ ແລະ ກ່າວວ່າ ທ່ານທັງຫຼາຍ ຈົ່ງງົດເວັ້ນຈາກການຂ້າສັດ ຕຳໜິຕິຕຽນການລັກຊັບໂດຍປະການຕ່າງ ໆ ໄວ້ເປັນຈຳນວນຫຼາຍ ແລະກ່າວວ່າ ທ່ານທັງຫຼາຍ ຈົ່ງງົດເວັ້ນຈາກການລັກຊັບ ຕຳໜິ ຕິຕຽນການປະພຶດຜິດໃນກາມໂດຍປະການຕ່າງ ໆ ໄວ້ເປັນຈຳນວນຫຼາຍ ແລະກ່າວວ່າ ທ່ານທັງຫຼາຍ ຈົ່ງງົດເວັ້ນຈາກການປະພຶດຜິດໃນກາມ ຕຳໜິຕິຕຽນການເວົ້າຕົວະໂດຍປະການຕ່າງ ໆ ໄວ້ເປັນຈຳນວນຫຼາຍ ແລະ ກ່າວວ່າ ທ່ານທັງຫຼາຍ ຈົ່ງງົດເວັ້ນຈາກການເວົ້າຕົວະ

ສາວົກຜູ້ເຫຼື້ອມໃສຢ່າງຍິ່ງໃນສາດສະດານັ້ນ ພິຈາລະນາເຫັນວ່າ ພຣະຜູ້ມີພຣະພາກເຈົ້າຊົງຕຳໜິຕິຕຽນການຂ້າສັດໂດຍປະການຕ່າງ ໆ ເປັນຈຳນວນຫຼາຍ ແລະ ຕັດວ່າ ທ່ານທັງຫຼາຍຈົ່ງງົດເວັ້ນຈາກການຂ້າສັດ ອັນໜຶ່ງ ສັດທີ່ຖືກເຮົາຂ້າກໍມີຢູ່ຫຼວງຫຼາຍ ການທີ່ເຮົາຂ້າສັດຫຼວງຫຼາຍນັ້ນ ບໍ່ເປັນການດີງາມເລີຍ ເຮົາທໍ່ນັ້ນ ເພິ່ງເປັນຜູ້ເດືອດຮ້ອນຍ້ອນການຂ້າສັດນັ້ນເປັນປັດໄຈ ຖ້າເຮົາບໍ່ໄດ້ເຮັດບາບກຳນັ້ນໄວ້ ບາບທີ່ຈະມາຮອດເຮົາບໍ່ມີທາງເປັນໄປໄດ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະການຂ້າສັດນັ້ນ ແລະ ເວັ້ນຂາດຈາກການຂ້າສັດຕໍ່ໄປ

ທ່ານລະບາບກຳ ກ້າວລ່ວງບາບກຳນັ້ນ ໄດ້ດ້ວຍປະການດັ່ງນີ້

ສາວົກນັ້ນ ພິຈາລະນາເຫັນວ່າ ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິຕິຕຽນການລັກຊັບໂດຍປະການຕ່າງ ໆ ເປັນຈຳນວນຫຼາຍ ແລະຕັດວ່າ ທ່ານທັງຫຼາຍຈົ່ງງົດເວັ້ນຈາກການລັກຊັບ ຊັບທີ່ເຮົາລັກກໍມີຢູ່ຫຼວງຫຼາຍ ການທີ່ເຮົາລັກຊັບຫຼວງຫຼາຍນັ້ນບໍ່ເປັນການດີງາມເລີຍ ເຮົາທໍ່ນັ້ນເພິ່ງເປັນຜູ້ເດືອດຮ້ອນຍ້ອນການລັກຊັບນັ້ນເປັນປັດໄຈ ຖ້າເຮົາບໍ່ໄດ້ເຮັດບາບກຳນັ້ນໄວ້ ບາບທີ່ຈະມາຮອດເຮົາບໍ່ມີທາງເປັນໄປໄດ້ ທ່ານພິຈາລະນາເຫັນແນວນີ້ແລ້ວ ຍ່ອມລະການລັກຊັບນັ້ນ ແລະເວັ້ນຂາດຈາກການລັກຊັບຕໍ່ໄປ

ທ່ານລະບາບກຳ ກ້າວລ່ວງບາບກຳນັ້ນໄດ້ດ້ວຍປະການຢ່າງນີ້

ສາວົກນັ້ນ ພິຈາລະນາເຫັນວ່າ ພຣະຜູ້ມີພຣະພາກເຈົ້າ ຊົງຕຳໜິຕິຕຽນການປະພຶດຜິດ

ໃນກາມໂດຍປະການຕ່າງ ໆ ເປັນຈຳນວນຫຼາຍ ແລະຕັດວ່າ ທ່ານທັງຫຼາຍ ຈົ່ງງົດເວັ້ນຈາກການປະພຶດຜິດໃນກາມ ການທີ່ເຮົາປະພຶດຜິດໃນກາມກໍມີຢູ່ຫຼວງຫຼາຍ ການທີ່ເຮົາປະພຶດຜິດໃນກາມຫຼວງຫຼາຍນັ້ນ ບໍ່ເປັນການດີງາມເລີຍ ເຮົາທໍ່ນັ້ນ ເພິ່ງເປັນຜູ້ເດືອດຮ້ອນຍ້ອນການປະພຶດຜິດໃນກາມນັ້ນເປັນປັດໄຈ ຖ້າເຮົາບໍ່ໄດ້ເຮັດບາບກຳນັ້ນໄວ້ ບາບທີ່ຈະມາຮອດເຮົາບໍ່ມີທາງເປັນໄປໄດ້ ທ່ານພິຈາລະນາເຫັນແນວນີ້ແລ້ວຍ່ອມລະການປະພຶດຜິດໃນກາມນັ້ນ ແລະເວັ້ນຂາດຈາກການປະພຶດຜິດໃນກາມຕໍ່ໄປ

ເຂົາລະບາບກຳ ກ້າວລ່ວງບາບກຳນັ້ນ ໄດ້ດ້ວຍປະການຢ່າງນີ້

ສາວົກນັ້ນ ພິຈາລະນາເຫັນວ່າ ພຣະຜູ້ມີພຣະພາກເຈົ້າຊົງຕຳໜິຕິຕຽນການເວົ້າຕົວະໂດຍປະການຕ່າງ ໆ ເປັນຈຳນວນຫຼາຍ ແລະຕັດວ່າ ທ່ານທັງຫຼາຍຈົ່ງເວັ້ນຂາດຈາກການເວົ້າຕົວະ ການທີ່ເຮົາເວົ້າຕົວະມີຢູ່ຫຼວງຫຼາຍ ການທີ່ເຮົາເວົ້າຕົວະໄວ້ຫຼາຍນັ້ນ ບໍ່ເປັນການດີງາມເລີຍ ເຮົາທໍ່ນັ້ນ ເພິ່ງເປັນຜູ້ເດືອດຮ້ອນຍ້ອນການເວົ້າຕົວະນັ້ນເປັນປັດໄຈ ຖ້າເຮົາບໍ່ໄດ້ເຮັດບາບກຳນັ້ນໄວ້ ບາບທີ່ຈະມາຮອດເຮົາບໍ່ມີທາງເປັນໄປໄດ້ ທ່ານພິຈາລະນາແນວນີ້ແລ້ວ ຍ່ອມລະການເວົ້າຕົວະນັ້ນ ແລະ ເວັ້ນຂາດຈາກການເວົ້າຕົວະຕໍ່ໄປ

ເຂົາລະບາບກຳ ກ້າວລ່ວງບາບກຳນັ້ນໄດ້ດ້ວຍປະການຢ່າງນີ້

ສາວົກນັ້ນລະການຂ້າສັດ ເວັ້ນຂາດຈາກການຂ້າສັດ ລະການລັກຊັບ ເວັ້ນຂາດຈາກການລັກຊັບ ລະການປະພຶດຜິດໃນກາມ ເວັ້ນຂາດຈາກການປະພຶດຜິດໃນກາມ ລະການເວົ້າຕົວະ ເວັ້ນຂາດຈາກການເວົ້າຕົວະ ລະການເວົ້າຄຳສັບສໍ່ ເວັ້ນຂາດຈາກການເວົ້າຄຳສັບສໍ່ ລະການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າຄຳຫຍາບ ລະການເວົ້າບໍ່ມີສາຣະ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ລະຄວາມເພ່ງເລັງຢາກໄດ້ຂອງເຂົາ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ລະຄວາມປະທຸດສະຮ້າຍທີ່ເກີດຈາກພະຍາບາດ ມີຈິດບໍ່ພະຍາບາດ ລະມິດສາທິດຖິ ເປັນສຳມາທິດຖິ

ອະຣິຍະສາວົກນັ້ນ ປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ນາຍບ້ານ ກຳທີ່ເຮັດພໍປະມານໃນເມດຕາເຈໂຕວິມຸດຕິທີ່ບຸກຄົນອົບຮົມແລ້ວແນວນີ້ ຈະບໍ່ເຫຼືອຢູ່ໃນຣູປາວະຈອນ ແລະ ອະຣູປະວະຈອນເລີຍ ປຽບຄືຄົນເປົ່າຫອຍສັງຜູ້ແຂງແຮງເພິ່ງເຮັດໃຫ້ໄດ້ຍິນຕະຫຼອດທິດທັງ ໔ ໄດ້ໂດຍບໍ່ຍາກ

ນາຍບ້ານ ອະຣິຍະສາວົກນັ້ນ ປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸ

ເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ນາຍບ້ານ ກຳທີ່ເຮັດພໍປະມານໃນອຸເປກຂາເຈໂຕວິມຸດຕິ ທີ່ບຸກຄົນອົບຮົມແລ້ວ ເຮັດໃຫ້ຫຼາຍແລ້ວແນວນີ້ຈະບໍ່ເຫຼືອຢູ່ໃນຮູປາວະຈອນ ແລະອະຮູປະວະຈອນເລີຍ ປຽບຄື ຄົນເປົ່າຫອຍສັງຜູ້ແຂງແຮງເພິ່ງເຮັດໃຫ້ໄດ້ຍິນຕະຫຼອດທິດທັງ ໔ ໄດ້ໂດຍບໍ່ຍາກ

ເມື່ອພຣະຜູ້ມີພຣະພາກເຈົ້າ ຕັດແນວນີ້ແລ້ວ ນາຍບ້ານຊື່ ອະສິພັນທະກະບຸດ ສາວົກຂອງນິຄົນໄດ້ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນນ່ອນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ສັງຂະທະມະສູດທີ ໗ ຈົບ**

# ໘. ກຸລະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ຕະກູນຄັບແຄ້ນ

[໓໕໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງເມືອງນາລັນທາ ຮູ້ວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທານັ້ນ

ສະໄໝນັ້ນ ເມືອງນາລັນທາເກີດເຂົ້າຍາກໝາກແພງ ປະຊາຊົນມີຄວາມເປັນຢູ່ອັດຕະຂັດໃຊ້ສະຫຼາກປັນສ່ວນຊື້ ອາຫານ ມີຄົນລົ້ມຕາຍກັນກະດູກຂາວຊະຊາຍ ສະໄໝນັ້ນ ນິຄົນ ນາຕະບຸດອາໄສຢູ່ໃນໝູ່ບ້ານນາລັນທາ ພ້ອມດ້ວຍນິຄົນ ບໍລິສັດໝູ່ໃຫຍ່

ຄັ້ງນັ້ນ ນາຍບ້ານຊື່ອະສິພັນທະກະບຸດ ສາວົກຂອງນິຄົນ ເຂົ້າໄປຫານິຄົນ ນາຕະບຸດຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ນິຄົນ ນາຕະບຸດໄດ້ກ່າວກັບນາຍບ້ານຊື່ ອະສິພັນທະກະບຸດດັ່ງນີ້ວ່າ ມາເທີ້ນ ນາຍບ້ານ ທ່ານຈົ່ງໄປໂຕ້ວາທະກັບພຣະສະມະນະໂຄດົມ ເມື່ອເປັນແນວນີ້ ກິດຕິສັບອັນງາມຂອງທ່ານກໍຈັກຊ່າລືໄປວ່າ ນາຍບ້ານຊື່ ອະສິພັນທະກະບຸດ ໄດ້ໂຕ້ວາທະກັບພຣະສະມະນະໂຄດົມ ຜູ້ມີລິດຫຼາຍ ມີອານຸພາບຫຼາຍແນວນີ້

ນາຍບ້ານຖາມວ່າ ທ່ານຜູ້ຈະເລີນ ຂ້າພະເຈົ້າຈະໄປໂຕ້ວາທະກັບພຣະສະມະນະໂຄດົມຜູ້ມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ໄດ້ຢ່າງໃດ?

ນິຄົນ ນາຕະບຸດກ່າວວ່າ ມາເທີ້ນນາຍບ້ານ ທ່ານຈຶ່ງເຂົ້າໄປຫາພຣະສະມະນະໂຄດົມ ຮອດບ່ອນຢູ່ ແລ້ວກ່າວວ່າ ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຍ່ອມຊົງສັນເສີນຄວາມອີດູ ຊົງສັນເສີນຄວາມຖືຮັກສາ ຊົງສັນເສີນຄວາມອະນຸເຄາະ ແກ່ຕະກູນທັງຫຼາຍໂດຍປະການເປັນອະເນກບໍ່ແມ່ນບໍ?

ຖ້າພຣະສະມະນະໂຄດົມ ຖືກທ່ານຖາມແນວນີ້ແລ້ວຕອບວ່າ ຖືກແລ້ວນາຍບ້ານ ຕະຖາຄົດຍ່ອມສັນເສີນຄວາມອີດູ ສັນເສີນຄວາມຖືຮັກສາ ສັນເສີນຄວາມອະນຸເຄາະແກ່ຕະກູນທັງຫຼາຍໂດຍປະການເປັນອະເນກ ທ່ານເພິ່ງກ່າວວ່າ ທ່ານຜູ້ຈະເລີນ ເມື່ອເປັນຈັ່ງຊັ້ນ ເປັນຫຍັງ ພຣະຜູ້ມີພຣະພາກເຈົ້າ ກັບພິກຂຸສົງໝູ່ໃຫຍ່ ຈຶ່ງສະເດັດຈາຣິກໄປໃນເມືອງນາລັນທາ ເຊິ່ງເກີດເຂົ້າຍາກໝາກແພງ ປະຊາຊົນມີຄວາມເປັນຢູ່ອັດຕະຂັດ ໃຊ້ສະຫຼາກປັນສ່ວນຊື້ ອາຫານ ມີຄົນລົ້ມຕາຍກັນກະດູກຂາວຊະຊາຍຢູ່ນໍ? ພຣະຜູ້ມີພຣະພາກເຈົ້າ ຊົງປະຕິບັດເພື່ອຕັດຮອນຕະກູນ ຊົງປະຕິບັດເພື່ອຄວາມເສື່ອມແຫ່ງຕະກູນ ຊົງປະຕິບັດເພື່ອຄວາມຄັບແຄ້ນແຫ່ງຕະກູນ ນາຍບ້ານ ພຣະສະມະນະໂຄດົມ ເມື່ອຖືກທ່ານຖາມບັນຫາ ໘ ເງື່ອນນີ້ແລ້ວ ຈະກືນບໍ່ເຂົ້າ ຄາຍບໍ່ອອກຢ່າງແນ່ນອນ

ນາຍບ້ານຊື່ ອະສິພັນທະກະບຸດຮັບຄຳຂອງນິຄົນ ນາຕະບຸດ ລຸກຂຶ້ນຈາກອາສະນະໄຫວ້ແລ້ວ ກະທຳປະທັກຂິນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າ ຍ່ອມຊົງສັນເສີນຄວາມອີດູ ຊົງສັນເສີນຄວາມຖືຮັກສາ ຊົງສັນເສີນ ຄວາມອະນຸເຄາະແກ່ຕະກູນທັງຫຼາຍ ໂດຍປະການເປັນຈຳນວນຫຼາຍບໍ່ແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຖືກແລ້ວນາຍບ້ານ ຕະຖາຄົດຍ່ອມສັນເສີນຄວາມອີດູ ສັນເສີນຄວາມຖືຮັກສາ ສັນເສີນຄວາມອະນຸເຄາະແກ່ຕະກູນທັງຫຼາຍ ໂດຍປະການເປັນອະເນກປະການ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເປັນຈັ່ງຊັ້ນ ແລ້ວເປັນຫຍັງ? ພຣະຜູ້ມີພຣະພາກເຈົ້າກັບພິກຂຸສົງໝູ່ໃຫຍ່ ຈຶ່ງຍັງສະເດັດຈາຣິກເຂົ້າໄປໃນເມືອງນາລັນທາ ເຊິ່ງເກີດເຂົ້າຍາກໝາກແພງ ປະຊາຊົນມີຄວາມເປັນຢູ່ອັດຕະຂັດ ໃຊ້ສະຫຼາກປັນສ່ວນຊື້ອາຫານ ມີຄົນລົ້ມຕາຍກັນກະດູກຂາວຊະຊາຍນໍ ພຣະຜູ້ມີພຣະພາກເຈົ້າ ຊົງປະຕິບັດເພື່ອຕັດຮອນຕະກູນ ຊົງປະຕິບັດເພື່ອຄວາມເສື່ອມແຫ່ງຕະກູນ ຊົງປະຕິບັດເພື່ອຄວາມຄັບແຄ້ນແຫ່ງຕະກູນ

ນາຍບ້ານ ນັບແຕ່ກັບນີ້ຍ້ອນໄປ ໙໑ ກັບທີ່ເຮົາຣະນຶກໄດ້ວ່າ ເຮົາບໍ່ຮູ້ວ່າເຄີຍບຽດບຽນຕະກູນໃດ ໆ ດ້ວຍການຖືເອົາພິກສາທີ່ຫຸງຕົ້ມແລ້ວ ແຕ່ຕະກູນທັງຫຼາຍທີ່ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີເງິນ ມີຄຳຫຼາຍ ມີເຄື່ອງປະດັບຫຼາຍ ມີຊັບແລະເຂົ້າເປືອກຫຼາຍ ທັງໝົດນັ້ນເກີດຍ້ອນການໃຫ້ ເກີດຍ້ອນຄວາມມີສັດຈະ ແລະ ເກີດຍ້ອນຄວາມສັງລວມ

ເຫດປັດໄຈທີ່ເຮັດໃຫ້ຕະກູນຄັບແຄ້ນ ໘ ປະການ ຄື

໑. ຕະກູນຄັບແຄ້ນຈາກພຣະຣາຊາ
໒. ຕະກູນຄັບແຄ້ນຈາກໂຈນ
໓. ຕະກູນຄັບແຄ້ນຈາກໄຟ
໔. ຕະກູນຄັບແຄ້ນຈາກນ້ຳ
໕. ຊັບທີ່ຝັງໄວ້ເຄື່ອນທີ່ໄປ
໖. ການງານທີ່ປະກອບບໍ່ດີ ເຮັດໃຫ້ຕະກູນວິບັດ
໗. ຊັບໃນຕະກູນກາຍເປັນຖ່ານໄຟ
໘. ການທີ່ບຸກຄົນໃຊ້ຈ່າຍໂພຄະຊັບສຸຣຸ່ຍສຸຣ່າຍ ຟຸ່ມເຟືອຍ ເຮັດໃຫ້ຕະກູນຍາກຈົນລົງ

ນາຍບ້ານ ເຫດປັດໄຈ ໘ ປະການນີ້ ທີ່ເຮັດໃຫ້ຕະກູນຄັບແຄ້ນ ເມື່ອເຫດປັດໄຈ ໘ ປະການນີ້ມີຢູ່ ບຸກຄົນໃດເພິ່ງກ່າວຫາເຮົາວ່າ ພຣະຜູ້ມີພຣະພາກເຈົ້າຊົງປະຕິບັດເພື່ອຕັດຣອນຕະກູນ ຊົງປະຕິບັດເພື່ອຄວາມເສື່ອມແຫ່ງຕະກູນ ຊົງປະຕິບັດເພື່ອຄວາມຄັບແຄ້ນແຫ່ງຕະກູນ ບຸກຄົນນັ້ນ ຖ້າບໍ່ລະຄຳເວົ້ານັ້ນ ບໍ່ລະຄວາມຄິດນັ້ນ ບໍ່ສະລະທິດຖິນັ້ນ ຍ່ອມດຳລົງຢູ່ໃນນະຮົກຄືຖືກນຳໄປຝັງໄວ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ ອະສິພັນທະກະບຸດໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປ ຈົນຕະຫຼອດຊີວິດ

**ກຸລະສູດທີ ໙ ຈົບ**

# ໑໐. ມະນິຈູລະກະສູດ

## ວ່າດ້ວຍນາຍບ້ານຊື່ມະນິຈູລະກະ

[໓໖໒] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດນະຄອນຣາດຊະຄຶ ສະໄໝນັ້ນ ພວກຂ້າຣາດຊະບໍຣິພານນັ່ງປະຊຸມກັນໃນຣາດຊະບໍລິສັດພາຍໃນພະຣາດຊະວັງ ໄດ້ສົນທະນາກັນຂຶ້ນວ່າ ຄຳແລະເງິນສົມຄວນແກ່ສະມະນະສາກະຍະບຸດ ຫຼື ສະມະນະສາກະຍະບຸດຍິນດີຄຳແລະເງິນໄດ້ບໍ ຮັບຄຳແລະເງິນໄດ້ບໍ?

ສະໄໝນັ້ນ ນາຍບ້ານຊື່ ມະນິຈູລະກະນັ່ງຢູ່ໃນບໍລິສັດນັ້ນ ຂະນະນັ້ນ ໄດ້ກ່າວກັບບໍລິສັດນັ້ນດັ່ງນີ້ວ່າ ທ່ານຢ່າໄດ້ກ່າວແນວນີ້ ຄໍາແລະເງິນບໍ່ສົມຄວນແກ່ສະມະນະສາກະຍະບຸດ ສະມະນະສາກະຍະ ບຸດບໍ່ຍິນດີຄໍາແລະເງິນ ບໍ່ຮັບຄໍາແລະເງິນ ສະມະນະສາກະຍະບຸດຫ້າມແກ້ວມະນີແລະຄໍາ ປາສະຈາກຄໍາແລະເງິນ

ນາຍບ້ານຊື່ ມະນິຈູລະກະສາມາດສາມາດເວົ້າໃຫ້ບໍລິສັດນັ້ນ ຍິນຍອມໄດ້

ຕໍ່ມາ ນາຍບ້ານຊື່ ມະນິຈູລະກະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພວກຂ້າຣາດຊະບໍຣິພານ ນັ່ງປະຊຸມກັນໃນຣາດຊະບໍລິສັດພາຍໃນພະຣາດຊະວັງນີ້ ໄດ້ສົນທະນາກັນຂຶ້ນວ່າ ຄໍາແລະເງິນຄວນແກ່ສະມະນະສາກະຍະບຸດບໍ ສະມະນະສາກະຍະບຸດຍິນດີຄໍາແລະເງິນໄດ້ບໍ ຮັບຄໍາແລະເງິນໄດ້ບໍ ເມື່ອບໍລິສັດນັ້ນກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ກ່າວກັບບໍລິສັດນັ້ນດັ່ງນີ້ວ່າ ທ່ານຢ່າໄດ້ກ່າວແນວນີ້ ຄໍາແລະເງິນບໍ່ສົມຄວນແກ່ສະມະນະສາກະຍະບຸດ ສະມະນະສາກະຍະບຸດບໍ່ຍິນດີຄໍາແລະເງິນ ບໍ່ຮັບຄໍາແລະເງິນ ສະມະນະສາກະຍະບຸດຫ້າມແກ້ວມະນີແລະຄໍາ ປາສະຈາກຄໍາແລະເງິນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງສາມາດເວົ້າໃຫ້ບໍລິສັດນັ້ນຍິນຍອມໄດ້ ຂ້າພຣະອົງເມື່ອຕອບແນວນີ້ ຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄໍາຕົວະບໍ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນແມ່ນບໍ? ບໍ່ມີແດ່ບໍທີ່ຄໍາກ່າວຈັງຊັ້ນແລະຄໍາທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕໍາໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ນາຍບ້ານ ເມື່ອທ່ານຕອບແນວນີ້ ຊື່ວ່າ ເວົ້າກົງຕາມຄໍາທີ່ເຮົາເວົ້າໄວ້ ບໍ່ຊື່ວ່າ ກ່າວຕູ່ເຮົາດ້ວຍຄໍາຕົວະ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີທີ່ຄໍາກ່າວຈັງຊັ້ນແລະຄໍາທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕໍາໜິໄດ້ ຍ້ອນວ່າຄໍາແລະເງິນບໍ່ສົມຄວນແກ່ສະມະນະສາກະຍະບຸດ ສະມະນະສາກະຍະບຸດບໍ່ຍິນດີຄໍາແລະເງິນ ບໍ່ຮັບຄໍາແລະເງິນ ສະມະນະສາກະຍະບຸດຫ້າມແກ້ວມະນີແລະຄໍາ ປາສະຈາກຄໍາແລະເງິນ

ນາຍບ້ານ ຄໍາແລະເງິນຄວນແກ່ຜູ້ໃດ ກາມມະຄຸນ ໕ ກໍຄວນແກ່ຜູ້ນັ້ນ ກາມມະຄຸນ ໕ ຄວນແກ່ຜູ້ໃດ (ຄໍາແລະເງິນກໍຄວນແກ່ຜູ້ນັ້ນ) ນາຍບ້ານ ເຮົາໃຫ້ເຂົ້າໃຈເລື້ອງນີ້ໂດຍສ່ວນດຽວວ່າ ບໍ່ແມ່ນທໍາຂອງສະມະນະ ບໍ່ແມ່ນທໍາຂອງສາກະຍະບຸດ

ອັນໜຶ່ງ ເຮົາກ່າວແນວນີ້ວ່າ ຜູ້ຕ້ອງການຫຍ້າເພິ່ງສະແຫວງຫາຫຍ້າ ຜູ້ຕ້ອງການໄມ້ເພິ່ງສະແຫວງຫາໄມ້ ຜູ້ຕ້ອງການກວຽນເພິ່ງສະແຫວງຫາກວຽນ ຜູ້ຕ້ອງການບຸຣຸດເພິ່ງສະແຫວງຫາ

ບຸຣຸດ ແຕ່ເຮົາບໍ່ກ່າວເລີຍວ່າ ເພິ່ງຍິນດີ ເພິ່ງສະແຫວງຫາຄໍາແລະເງິນໂດຍປະການໃດ ໆ

**ມະນິຈູລະກະສູດທີ ໑໐ ຈົບ**

# ໑໑. ຄັນທະພະກະສູດ

## ວ່າດ້ວຍນາຍບ້ານຊື່ຄັນທະພະກະ

[໔໑໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ອຸຣຸເວລະກັປປະນິຄົມຂອງຊາວມັນລະ ແຄວ້ນມັນລະ ຄັ້ງນັ້ນ ນາຍບ້ານຊື່ ຄັນທະພະກະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງສະແດງເຫດເກີດ ແລະຄວາມດັບທຸກແກ່ຂ້າພຣະອົງດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດ ວ່າ ນາຍບ້ານ ເຮົາເພິ່ງຜາຣົບອະດີດຕະການ ສະແດງເຫດເກີດທຸກ ແລະຄວາມດັບທຸກແກ່ທ່ານວ່າ ອະດີດຕະການໄດ້ມີແລ້ວແນວນີ້ ຄວາມສົງໄສຄວາມເຄືອບແຄງໃນເລື້ອງນັ້ນ ເພິ່ງມີແກ່ທ່ານ

ຖ້າເຮົາເພິ່ງຜາຣົບອະນາຄົດຕະການ ສະແດງເຫດເກີດທຸກ ແລະຄວາມດັບທຸກແກ່ທ່ານວ່າ ອະນາຄົດຕະການຈັກມີແນວນີ້ ຄວາມເຄືອບແຄງຄວາມສົງໄສໃນເລື້ອງນັ້ນ ເພິ່ງມີແກ່ທ່ານ

ອັນໜຶ່ງ ເຮົານັ່ງຢູ່ໃນບ່ອນນີ້ ຈັກສະແດງເຫດເກີດ ແລະຄວາມດັບທຸກແກ່ທ່ານຜູ້ນັ່ງຢູ່ໃນບ່ອນນີ້ຄືກັນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ນາຍບ້ານຊື່ ຄັນທະພະກະ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ມີຢູ່ບໍ ທີ່ໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮໍ່າໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເພິ່ງເກີດຂຶ້ນແກ່ທ່ານ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕໍາໜິໂທດ

ມີຢູ່ ຂ້ານ້ອຍ ທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເພິ່ງເກີດຂຶ້ນແກ່ຂ້າພຣະອົງ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕໍາໜິໂທດ

ນາຍບ້ານ ອັນໜຶ່ງ ມີຢູ່ບໍ່ ທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດ ບໍ່ເພິ່ງເກີດຂຶ້ນແກ່ທ່ານ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດ

ມີຢູ່ ຂ້ານ້ອຍ ທີ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດບໍ່ເພິ່ງເກີດຂຶ້ນແກ່ຂ້າພຣະອົງ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມ ຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດ

ນາຍບ້ານ ອັນໃດ ເປັນເຫດເປັນປັດໄຈໃຫ້ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເພິ່ງເກີດຂຶ້ນແກ່ທ່ານ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມລາງພວກ ຖືກປະຫານ ຄຸມຂັງ ປັບໄໝ ຫຼືຖືກຕຳໜິໂທດ

ແລະ ອັນໃດນໍ? ເປັນເຫດເປັນປັດໄຈ ໃຫ້ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ບໍ່ເພິ່ງເກີດຂຶ້ນແກ່ທ່ານ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມ ລາງພວກຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດ

ຂ້າແດ່ ພຣະອົງຜູ້ຈະເລີນ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເພິ່ງເກີດຂຶ້ນແກ່ຂ້າພຣະອົງ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມເຫຼົ່າໃດຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດ ກໍຍ້ອນຂ້າພຣະອົງ ມີສັນທະຣາຄະໃນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມເຫຼົ່ານັ້ນ

ແຕ່ໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດບໍ່ເພິ່ງເກີດຂຶ້ນແກ່ຂ້າພຣະອົງ ຍ້ອນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມເຫຼົ່າໃດ ຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດ ກໍຍ້ອນ ຂ້າພຣະອົງ ບໍ່ມີສັນທະຣາຄະໃນໝູ່ມະນຸດຊາວອຸຣຸເວລະກັບປະນິຄົມເຫຼົ່ານັ້ນ ຂ້ານ້ອຍ

ນາຍບ້ານ ທ່ານຈົ່ງນຳໄນໄປໃນທຸກທີ່ເປັນອະດີດ ແລະອະນາຄົດດ້ວຍທຳນີ້ທີ່ທ່ານເຫັນຮູ້ ບັນລຸໂດຍບໍ່ປະກອບດ້ວຍການເວລາ ຢັ່ງລົງແລ້ວ

ທຸກທີ່ເປັນອະດີດແນວໃດແນວໜຶ່ງ ເມື່ອຈະເກີດ ຍ່ອມເກີດຂຶ້ນ ທຸກນັ້ນທັງໝົດ ມີສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ

ແມ່ນທຸກທີ່ເປັນອະນາຄົດແນວໃດແນວໜຶ່ງ ເມື່ອຈະເກີດ ຈັກເກີດຂຶ້ນ ທຸກນັ້ນທັງ ໝົດມີສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ທີ່ພຣະຜູ້ມີພຣະພາກເຈົ້າ ຕັດໄວ້ດີວ່າ ທຸກທີ່ເປັນອະດີດແນວໃດແນວໜຶ່ງ ເມື່ອຈະເກີດ ຍ່ອມເກີດຂຶ້ນ ທຸກນັ້ນທັງໝົດມີສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ (ທຸກທີ່ເປັນອະນາຄົດແນວໃດແນວໜຶ່ງ ເມື່ອຈະເກີດ ຈັກເກີດຂຶ້ນ ທຸກທັງໝົດນັ້ນ ມີສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ)

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງມີກຸມານຊື່ຈິນວາສີ ອາໄສຢູ່ພາຍນອກທີ່ພັກຂ້າພຣະອົງຕື່ນແຕ່ເຊົ້າມືດ ຍ່ອມສົ່ງບຸຣຸດໄປດ້ວຍສັ່ງວ່າ ໄປເທີ້ນນາຍ ເຈົ້າຈົ່ງຮູ້ ຈິນວາສີກຸມານ

ຂ້າແດ່ ພຣະອົງຜູ້ຈະເລີນ ຕາບໃດທີ່ບຸຣຸດນັ້ນຍັງບໍ່ມາ ຕາບນັ້ນ ຄວາມກະວົນກະວາຍໃຈຍ່ອມມີແກ່ຂ້າພຣະອົງວ່າ ໄພໃດ ໆ ຢ່າໄດ້ບຽດບຽນຈິ ນວາສີກຸມານເລີຍ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເພິ່ງເກີດຂຶ້ນຍ້ອນຈິນວາສີກຸມານຖືກປະຫານ ຄຸມຂັງ ປັບໃໝ ຫຼື ຖືກຕຳໜິໂທດໄດ້ບໍ

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເມື່ອຈິນວາສີກຸມານຍັງມີຊີວິດຢູ່ ຄວາມກະວົນກະວາຍໃຈຍັງມີແກ່ຂ້າພຣະອົງ ກໍເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈັກບໍ່ເກີດຂຶ້ນແກ່ຂ້າພຣະອົງ ຍ້ອນຈິນວາສີກຸມານຖືກປະຫານ ຄຸມຂັງ ປັບໃໝ ຫຼື ຖືກຕຳໜິໂທດນໍ

ນາຍບ້ານ ທ່ານເພິ່ງຮູ້ເນື້ອຄວາມນັ້ນໂດຍເຫດນີ້ວ່າ ທຸກແນວໃດແນວໜຶ່ງ ເມື່ອຈະເກີດຍ່ອມເກີດຂຶ້ນ ທຸກນັ້ນ ທັງໝົດ ມີສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ

ທ່ານເຂົ້າໃຈຄວາມຂໍ້ນີ້ວ່າ ແນວໃດ ເມື່ອໃດທ່ານບໍ່ໄດ້ເຫັນມານດາຂອງຈິນວາສີກຸມານບໍ່ໄດ້ຟັງສຽງ ເມື່ອນັ້ນທ່ານຍັງມີສັນທະຣາຄະ ຫຼື ຄວາມຮັກໃນມານດາຂອງຈິນວາສີກຸມານບໍ?

ບໍ່ມີ ຂ້ານ້ອຍ

ນາຍບ້ານ ຍ້ອນອາໄສການເຫັນ ຫຼື ການຟັງ ທ່ານຈຶ່ງໄດ້ມີສັນທະຣາຄະ ຫຼື ຄວາມຮັກໃນມານດາຂອງຈິນວາສີກຸມານແມ່ນບໍ?

ເປັນແນວນັ້ນ ຂ້ານ້ອຍ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເພິ່ງເກີດຂຶ້ນແກ່ທ່ານ ຍ້ອນມານດາຂອງຈິນວາສີກຸມານຖືກປະຫານ ຄຸມຂັງ ປັບໃໝ ຫຼື ຖືກຕຳໜິໂທດໄດ້ບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ແມ່ນເມື່ອມານດາຂອງຈິນວາສີກຸມານຍັງມີຊີວິດຢູ່ ຄວາມກະວົນກະວາຍຍັງມີແກ່ຂ້າພຣະອົງ ແລ້ວເປັນຫຍັງ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດຈັກບໍ່ເກີດຂຶ້ນແກ່ຂ້າພຣະອົງ ຍ້ອນມານດາຂອງຈິນວາສີກຸມານຖືກປະຫານ ຄຸມຂັງ ປັບໄໝ ຫຼື ຖືກຕຳໜິໂທດບໍ່ໄດ້ນໍ?

ນາຍບ້ານ ທ່ານເພິ່ງຮູ້ຄວາມຂໍ້ນັ້ນໂດຍເຫດນີ້ວ່າ ທຸກແນວໃດແນວໜຶ່ງ ເມື່ອຈະເກີດຍ່ອມເກີດຂຶ້ນ ທຸກນັ້ນທັງໝົດມີ ສັນທະເປັນຮາກເຫງົ້າ ມີສັນທະເປັນເຫດ ຍ້ອນສັນທະເປັນຮາກເຫງົ້າແຫ່ງທຸກ

**ຄັນທະພະກະສູດທີ ໑໑ ຈົບ**

# ໑໘. ຣາສີຍະສູດ

## ວ່າດ້ວຍນາຍບ້ານຊື່ຣາສີຍະ

[໓໖໔] ຄັ້ງນັ້ນ ນາຍບ້ານຊື່ ຣາສີຍະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ຖວາຍອະພິວາດ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນມາວ່າ ພຣະສະມະນະໂຄດົມຊົງຕຳໜິຕະບະທຸກຂະນິດ ຊົງຊີ້ໂທດ ແລະ ຄັດຄ້ານຜູ້ພໍ່າເພັງຕະບະທັງປວງວ່າ ເປັນຢູ່ເສົ້າໝອງໂດຍສ່ວນດຽວ

ຂ້າແດ່ ພຣະອົງຜູ້ຈະເລີນ ສະມະນະພາມທີ່ກ່າວແນວນີ້ວ່າ ພຣະສະມະນະໂຄດົມຊົງຕຳໜິຕະບະທຸກຂະນິດ ຊົງຊີ້ໂທດ ແລະຄັດຄ້ານຜູ້ພໍ່າເພັງຕະບະທັງປວງວ່າ ເປັນຢູ່ເສົ້າໝອງໂດຍສ່ວນດຽວ ຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກດ້ວຍຄຳຕົວະບໍ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນບໍ ບໍ່ມີແດ່ບໍ ທີ່ຄຳກ່າວຈັ່ງຊັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ສະມະນະພາມທີ່ກ່າວແນວນີ້ວ່າ ພຣະສະມະນະໂຄດົມ ຊົງຕຳໜິຕະບະທຸກຂະນິດ ຊົງຊີ້ໂທດ ແລະຄັດຄ້ານຜູ້ພໍ່າເພັງຕະບະທັງປວງວ່າ ເປັນຢູ່ເສົ້າໝອງໂດຍສ່ວນດຽວ ບໍ່ຊື່ວ່າ ເວົ້າກົງຕາມຄຳທີ່ເຮົາເວົ້າໄວ້ ແລະຊື່ວ່າ ກ່າວຕູ່ເຮົາດ້ວຍຄຳຕົວະ

### ບັນພະຊິດບໍ່ເພິ່ງເສບສ່ວນສຸດ ໒ ຢ່າງ

ນາຍບ້ານ ສ່ວນສຸດ ໒ ຢ່າງນີ້ບັນພະຊິດບໍ່ເພິ່ງເສບ ຄື

໑. ກາມສຸຂັນລິການຸໂຍກ (ການໝົກມຸ້ນຢູ່ດ້ວຍສຸກໃນກາມທັງຫຼາຍ) ເປັນທຳອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

໒. ອັດຕະກິລະມະຖານຸໂຍກ (ການປະກອບຄວາມລຳບາກເດືອດຮ້ອນແກ່ຕົນ) ເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ສ່ວນສຸດ ໒ ຢ່າງນັ້ນຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນ ປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງເພື່ອ ຄວາມຕັດສະຣູ້ ເພື່ອນິບພານ

ມັດຊິມາປະຕິປະທາທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານນັ້ນເປັນແນວໃດ?

ມັດຊິມາປະຕິປະທານັ້ນ ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ฯລฯ ໘. ສຳມາສະມາທິ

ນີ້ຄື ມັດຊິມາປະຕິປະທານັ້ນທີ່ຕະຖາຄົດໄດ້ຕັດສະຣູ້ແລ້ວ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອຄວາມຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ເພື່ອນິບພານ

## ກາມໂພຄີບຸກຄົນ ໑໐ ຈຳພວກ

ນາຍບ້ານ ກາມໂພຄີບຸກຄົນ ໑໐ ຈຳພວກນີ້ມີຜາກົດຢູ່ໃນໂລກ

ກາມໂພຄີບຸກຄົນ ໑໐ ຈຳພວກ ຈຳພວກໃດແດ່ ຄື

໑. ກາມໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບ ໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແລະບໍ່ແຈກຈ່າຍ ບໍ່ທຳບຸນ

ກາມໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແຕ່ບໍ່ແຈກຈ່າຍບໍ່ທຳບຸນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະແຈກຈ່າຍທຳບຸນ

໔. ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳແລະບໍ່ບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະ ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳແລະບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ແລະບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະ ແຈກຈ່າຍ ທຳບຸນ

໙. ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳດ້ວຍການງານ ທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະແຈກຈ່າຍທຳບຸນ ແຕ່ເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ

ການໂພຄີບຸກຄົນລາງຄົນໃນໂລກນີ້ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໝຳສຸກສະບາຍ ແລະແຈກຈ່າຍທຳບຸນ ທັງເປັນຜູ້ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເປັນເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ

# ການໂພຄີບຸກຄົນທີ່ຄວນຕິຕຽນແລະສັນເສີນ

ນາຍບ້ານ ໃນບັນດາການໂພຄີບຸກຄົນ ໓ ຈຳພວກນັ້ນ ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ບໍ່ແຈກຈ່າຍ ບໍ່ທຳບຸນ ນີ້ຄວນຕິຕຽນໂດຍ ໓ ສະຖານ

ຄວນຕິຕຽນໂດຍ ໓ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ
໓. ຄວນຕິຕຽນໂດຍສະຖານທີ ໓ ນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນນີ້ຄວນຕິຕຽນໂດຍ ໓ ສະຖານນີ້ (໑)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບ ໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ ນີ້ຄວນຕິຕຽນໂດຍ ໒ ສະຖານ ຄວນສັນເສີນໂດຍສະຖານດຽວ ຄື

ຄວນຕິຕຽນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ຄວນສັນເສີນໂດຍສະຖານດຽວ ຄືອັນໃດ?

ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ

ການໂພຄີບຸກຄົນນີ້ຄວນຕິຕຽນໂດຍ ໒ ສະຖານ ຄວນສັນເສີນໂດຍສະຖານດຽວ (໒)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບ ໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແລະແຈກຈ່າຍ ທຳບຸນນີ້ຄວນຕິຕຽນໂດຍສະຖານດຽວ ຄວນສັນເສີນໂດຍ ໒ ສະຖານ ຄື

ຄວນຕິຕຽນໂດຍສະຖານດຽວ ຄືອັນໃດ?

ຄື ຄວນຕິຕຽນໂດຍສະຖານດຽວນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍ ການງານທີ່ຜິດ

ຄວນສັນເສີນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ລ້ຽງຕົນໃຫ້ອິ່ມໜຳສຸກສະບາຍ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ແຈກຈ່າຍ ແລະ ທຳບຸນ

ການໂພຄີບຸກຄົນນີ້ຄວນຕິຕຽນໂດຍສະຖານດຽວ ຄວນສັນເສີນໂດຍ ໒ ສະຖານ (໓)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ແລະບໍ່ຖືກຕ້ອງຕາມທຳດ້ວຍການງານ ທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອິ່ມໜຳສຸກສະບາຍບໍ່ແຈກຈ່າຍ ບໍ່ທຳບຸນນີ້ຄວນສັນເສີນໂດຍສະຖານດຽວ ຄວນຕິຕຽນໂດຍ ໓ ສະຖານ ຄື

ຄວນສັນເສີນໂດຍສະຖານດຽວ ຄື ອັນໃດ?

ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳດ້ວຍ ການງານທີ່ບໍ່ຜິດ

ຄວນຕິຕຽນໂດຍ ໓ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ລ້ຽງຕົນໃຫ້ອິ່ມໜຳສຸກສະບາຍ
໓. ຄວນຕິຕຽນໂດຍສະຖານທີ ໓ ນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນນີ້ຄວນສັນເສີນໂດຍສະຖານດຽວ ຄວນຕິຕຽນໂດຍ ໓ ສະຖານ (໔)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ແລະບໍ່ຖືກຕ້ອງຕາມທຳດ້ວຍການງານ ທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອິ່ມໜຳສຸກສະ ບາຍແຕ່ບໍ່ແຈກຈ່າຍ ບໍ່ທຳບຸນນີ້ຄວນສັນເສີນໂດຍ ໒ ສະຖານ ຄວນຕິຕຽນໂດຍ ໒ ສະຖານ ຄື

ຄວນສັນເສີນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ດ້ວຍການງານທີ່ບໍ່ຜິດ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ລ້ຽງຕົນໃຫ້ອິ່ມໜຳສຸກສະບາຍ

ຄວນຕິຕຽນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍການງານທີ່ຜິດ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ການໂພຄີບຸກຄົນນີ້ຄວນສັນເສີນໂດຍ ໒ ສະຖານນີ້ ຄວນຕິຕຽນໂດຍ ໒ ສະຖານນີ້ (໕)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ແລະບໍ່ຖືກຕ້ອງຕາມທຳດ້ວຍການງານ ທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍທັງແຈກຈ່າຍແລະທຳບຸນ ຄວນສັນເສີນໂດຍ ໓ ສະຖານ ຄວນຕິຕຽນໂດຍສະຖານດຽວ ຄື

ຄວນສັນເສີນໂດຍ ໓ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ດ້ວຍການງານທີ່ບໍ່ຜິດ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ
໓. ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ ແຈກຈ່າຍແລະທຳບຸນ

ຄວນຕິຕຽນໂດຍສະຖານດຽວ ຄື ອັນໃດ?

ຄື ຄວນຕິຕຽນໂດຍສະຖານດຽວນີ້ວ່າ ສະແຫວງຫາໂພຄະຊັບໂດຍບໍ່ຖືກຕ້ອງຕາມທຳດ້ວຍ ການງານທີ່ຜິດ

ການໂພຄີບຸກຄົນນີ້ຄວນສັນເສີນໂດຍ ໓ ສະຖານ ຄວນຕິຕຽນໂດຍສະຖານດຽວ (໖)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຖືກຕ້ອງ ຕາມທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ບໍ່ແຈກຈ່າຍ ບໍ່ທຳບຸນ ຄວນສັນເສີນ ໂດຍສະຖານດຽວ ຄວນຕິຕຽນໂດຍ ໒ ສະຖານ ຄື

ຄວນສັນເສີນໂດຍສະຖານດຽວ ຄື ອັນໃດ?

ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳດ້ວຍ ການງານທີ່ບໍ່ຜິດ

ຄວນຕິຕຽນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນຕິຍຸນໂດຍສະຖານທີ ໑ ນີ້ວ່າ ບໍ່ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ
໒. ຄວນຕິຍຸນໂດຍສະຖານທີ ໒ ນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ກາມໂພຄີບຸກຄົນນີ້ຄວນສັນເສີນໂດຍສະຖານດຽວ ຄວນຕິຍຸນໂດຍ ໒ ສະຖານ (໗)

ກາມໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບ ໂດຍຖືກຕ້ອງຕາມທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ ຄວນສັນເສີນ ໂດຍ ໒ ສະຖານ ຄວນຕິຍຸນໂດຍສະຖານດຽວ

ຄວນສັນເສີນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງ ຕາມທຳ ດ້ວຍການງານທີ່ບໍ່ຜິດ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ

ຄວນຕິຍຸນໂດຍສະຖານດຽວ ຄື ອັນໃດ

ຄື ຄວນຕິຍຸນໂດຍສະຖານດຽວນີ້ວ່າ ບໍ່ແຈກຈ່າຍ ບໍ່ທຳບຸນ

ກາມໂພຄີບຸກຄົນນີ້ຄວນສັນເສີນໂດຍ ໒ ສະຖານ ຄວນຕິຍຸນໂດຍສະຖານດຽວ (໘)

ກາມໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບ ໂດຍຖືກຕ້ອງຕາມທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ແຈກຈ່າຍ ແລະທຳບຸນ ແຕ່ເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນຢູ່ ຄວນສັນເສີນໂດຍ ໓ ສະຖານ ຄວນຕິຍຸນໂດຍສະຖານດຽວ

ຄວນສັນເສີນໂດຍ ໓ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງ ຕາມທຳ ດ້ວຍການງານທີ່ບໍ່ຜິດ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ
໓. ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ ແຈກຈ່າຍ ແລະ ທຳບຸນ

ຄວນຕິຍຸນໂດຍສະຖານດຽວ ຄື ອັນໃດ

ຄື ຄວນຕິຍຸນໂດຍສະຖານດຽວນີ້ວ່າ ເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນຢູ່

ການໂພຄີບຸກຄົນນີ້ຄວນສັນເສີນໂດຍ ໓ ສະຖານ ຄວນຕິຕຽນໂດຍສະຖານດຽວ (໗)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມ ທຳດ້ວຍການງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ ທັງແຈກຈ່າຍແລະທຳບຸນ ແຕ່ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ ຢູ່ ຄວນສັນເສີນໂດຍ ໔ ສະຖານ

ຄວນສັນເສີນໂດຍ ໔ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ສະແຫວງຫາໂພຄະຊັບໂດຍຖືກຕ້ອງຕາມທຳ ດ້ວຍການງານທີ່ບໍ່ຜິດ
໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ລ້ຽງຕົນໃຫ້ອີ່ມໜຳສຸກສະບາຍ
໓. ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ ແຈກຈ່າຍແລະທຳບຸນ
໔. ຄວນສັນເສີນໂດຍສະຖານທີ ໔ ນີ້ວ່າ ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເຄື່ອງສະບັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນຢູ່

ການໂພຄີບຸກຄົນ ຄວນສັນເສີນໂດຍ ໔ ສະຖານ (໑໐)

## ຜູ້ພໍ່າເພັງຕະບະເປັນຢູ່ເສົ້າໝອງ ໓ ຈຳພວກ

ນາຍບ້ານ ບຸກຄົນຜູ້ພໍ່າເພັງຕະບະ ເປັນຢູ່ເສົ້າໝອງ ໓ ຈຳພວກນີ້ມີປາກົດຢູ່ໃນໂລກ

ບຸກຄົນຜູ້ພໍ່າເພັງຕະບະເປັນຢູ່ເສົ້າໝອງ ໓ ຈຳພວກ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ພໍ່າເພັງຕະບະເປັນຢູ່ເສົ້າໝອງ ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ ເຮັດແນວໃດນໍ ເຮົາເພິ່ງບັນລຸກຸສົນທຳ ເຮັດແນວໃດນໍ ເຮົາເພິ່ງເຮັດໃຫ້ແຈ້ງຍານທັດສະນະ ທີ່ປະເສີດອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດ ເຂົາເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບໍ່ບັນລຸກຸສົນທຳ ແລະ ບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ (໑)

໒. ອັນໜຶ່ງ ບຸກຄົນລາງຄົນໃນໂລກນີ້ ພໍ່າເພັງຕະບະເປັນຢູ່ເສົ້າໝອງ ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດ ດ້ວຍຄິດວ່າ ເຮັດແນວໃດນໍ ເຮົາເພິ່ງບັນລຸກຸສົນທຳ ເຮັດແນວໃດນໍ ເຮົາເພິ່ງເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ເຂົາເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບັນລຸກຸສົນທຳ ແຕ່ບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດ ຍິ່ງກວ່າທຳຂອງມະນຸດ (໒)

໓. ອັນໜຶ່ງ ບຸກຄົນລາງຄົນໃນໂລກນີ້ພໍ່າເພັງຕະບະເປັນຢູ່ເສົ້າໝອງ ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດດ້ວຍຄິດວ່າ ເຮັດແນວໃດນໍ ເຮົາເພິ່ງບັນລຸກຸສົນທຳ ເຮັດແນວໃດນໍເຮົາເພິ່ງເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າ ທຳຂອງມະນຸດ ເຂົາເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບັນລຸກຸສົນທຳ ແລະ ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ (໓)

## ຜູ້ພໍ່າເພັງຕະບະເປັນຢູ່ເສົ້າໝອງຄວນຖືກຕິຕຽນແລະສັນເສີນ

ນາຍບ້ານ ບັນດາບຸກຄົນ ໓ ຈຳພວກນັ້ນ ບຸກຄົນຜູ້ພໍ່າເພັງຕະບະ ເປັນຢູ່ເສົ້າໝອງ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບໍ່ບັນລຸກຸສົນທຳ ແລະບໍ່ເຮັດໃຫ້ແຈ້ງ ຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ ຄວນຕິຕຽນໂດຍ ໓ ສະຖານ

ຄວນຕິຕຽນໂດຍ ໓ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ບັນລຸກຸສົນທຳ
໓. ຄວນຕິຕຽນໂດຍສະຖານທີ ໓ ນີ້ວ່າ ບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ

ບຸກຄົນຜູ້ພໍ່າເພັງຕະບະ ເປັນຢູ່ເສົ້າໝອງນີ້ ຄວນຕິຕຽນໂດຍ ໓ ສະຖານນີ້ (໑)

ບຸກຄົນຜູ້ພໍ່າເພັງຕະບະ ເປັນຢູ່ເສົ້າໝອງ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບັນລຸກຸສົນທຳ ແຕ່ບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດ ຄວນຕິຕຽນໂດຍ ໒ ສະຖານ ຄວນສັນເສີນໂດຍສະຖານດຽວ ຄື

ຄວນຕິຕຽນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ
໒. ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ ບໍ່ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ

ຄວນສັນເສີນໂດຍສະຖານດຽວ ຄື ອັນໃດ?

ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ ບັນລຸກຸສົນທຳ

ບຸກຄົນຜູ້ພໍ່າເພັງຕະບະ ເປັນຢູ່ເສົ້າໝອງນີ້ຄວນຕິຕຽນໂດຍ ໒ ສະຖານນີ້ ຄວນສັນເສີນໂດຍສະຖານດຽວນີ້ (໒)

ບຸກຄົນຜູ້ພ່ຳເພັງຕະບະ ເປັນຢູ່ເສົ້າໝອງ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ ບັນລຸກຸສົນທຳ ແລະ ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດ ອັນວິເສດຍິ່ງກວ່າທຳຂອງມະນຸດ ຄວນຕິຕຽນໂດຍສະຖານດຽວ ຄວນສັນເສີນໂດຍ ໒ ສະຖານ

ຄວນຕິຕຽນໂດຍສະຖານດຽວ ຄື ອັນໃດ?

ຄື ຄວນຕິຕຽນໂດຍສະຖານດຽວນີ້ວ່າ ເຮັດຕົນໃຫ້ເດືອດຮ້ອນກະວົນກະວາຍ

ຄວນສັນເສີນໂດຍ ໒ ສະຖານ ອັນໃດແດ່ ຄື

໑. ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ ບັນລຸກຸສົນທຳ

໒. ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ ເຮັດໃຫ້ແຈ້ງຍານທັດສະນະທີ່ປະເສີດ ອັນສາມາດອັນວິເສດຍິ່ງກວ່າທຳຂອງມະນຸດ

ບຸກຄົນຜູ້ພ່ຳເພັງຕະບະ ເປັນຢູ່ເສົ້າໝອງນີ້ຄວນຕິຕຽນໂດຍສະຖານດຽວນີ້ ຄວນສັນເສີນໂດຍ ໒ ສະຖານນີ້ (໓)

## ທຳ ໓ ປະການທີ່ຜູ້ປະຕິບັດເພິ່ງເຫັນແຈ້ງດ້ວຍຕົນເອງ

ນາຍບ້ານ ທຳ ໓ ປະການນີ້ທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ລ້າຫຼັງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ທຳ ໓ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ມີຣາຄະຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ຍ້ອນຣາຄະເປັນເຫດ ເມື່ອລະຣາຄະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງແດ່ ບໍ່ຄິດເພື່ອບຽດບຽນຜູ້ອື່ນແດ່ ບໍ່ຄິດເພື່ອບຽດບຽນທັງ ໒ ຝ່າຍແດ່ ນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ລ້າຫຼັງ ບໍ່ປະກອບດ້ວຍການເວລາ ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

໒. ບຸກຄົນຜູ້ມີໂທສະຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໒ ຝ່າຍແດ່ ຍ້ອນໂທສະເປັນເຫດ ເມື່ອລະໂທສະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງແດ່ ບໍ່ຄິດເພື່ອບຽດບຽນຜູ້ອື່ນແດ່ ບໍ່ຄິດ

ເພື່ອບຽດບຽນທັງ ໘ ຝ່າຍແດ່ ນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ລ້າຫຼັງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

໓. ບຸກຄົນຜູ້ມີໂມຫະຍ່ອມຄິດເພື່ອບຽດບຽນຕົນເອງແດ່ ເພື່ອບຽດບຽນຜູ້ອື່ນແດ່ ເພື່ອບຽດບຽນທັງ ໘ ຝ່າຍແດ່ ຍ້ອນໂມຫະເປັນເຫດ ເມື່ອລະໂມຫະໄດ້ແລ້ວ ເຂົາຍ່ອມບໍ່ຄິດເພື່ອບຽດບຽນຕົນເອງແດ່ ບໍ່ຄິດເພື່ອບຽດບຽນຜູ້ອື່ນແດ່ ບໍ່ຄິດເພື່ອບຽດບຽນທັງ ໘ ຝ່າຍແດ່ ນີ້ເປັນທຳທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ລ້າຫຼັງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ທຳ ໓ ປະການນີ້ ທີ່ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ລ້າຫຼັງ ບໍ່ປະກອບດ້ວຍການ ຄວນເອີ້ນໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ ຣາສິຍະ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ໆລໆ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງໄວ້ວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ຣາສິຍະສູດທີ ໑໘ ຈົບ**

# ໑໓. ປາຕະລິຍະສູດ

## ວ່າດ້ວຍນາຍບ້ານຊື່ປາຕະລິຍະ

[໓໖໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນິຄົມຂອງຊາວໂກລິຍະຊື່ ອຸດຕະຣະ ໃນແຄວັນໂກລິຍະ ຄັ້ງນັ້ນ ນາຍບ້ານຊື່ ປາຕະລິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຍິນມາວ່າ ພຣະສະມະນະໂຄດົມຊົງຮູ້ຈັກມານຍາ ສະມະນະພາມທີ່ກ່າວວ່າ ພຣະສະມະນະໂຄດົມຊົງຮູ້ຈັກມານຍາ ຊື່ວ່າ ເວົ້າກົງຕາມທີ່ ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະບໍ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນບໍ? ບໍ່ມີແດ່ບໍ? ທີ່ຄຳກ່າວຈັ່ງຊັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້ ຍ້ອນພວກຂ້າພຣະອົງ ບໍ່ປະສົງຈະກ່າວຕູ່ພຣະຜູ້ມີພຣະພາກເຈົ້າເລີຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນາຍບ້ານ ສະມະນະພາມທີ່ກ່າວວ່າ ພຣະສະມະນະໂຄດົມຊົງຮູ້ຈັກມານຍາ ຊື່ວ່າ ເວົ້າກົງຕາມຄຳທີ່ເຮົາເວົ້າໄວ້ ບໍ່ຊື່ວ່າ ກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີທີ່ຄຳກ່າວຈັ່ງຊັ້ນ ແລະຄຳທີ່ກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕຳໜິໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ່າວທີ່ໄດ້ຍິນມາຈິງຢ່າງແນ່ນອນ ຂ້າພຣະອົງບໍ່ເຊື່ອສະມະນະພາມເຫຼົ່ານັ້ນວ່າ ພຣະສະມະນະໂຄດົມ ຊົງຮູ້ຈັກມານຍາ ແຕ່ໄດ້ຂ່າວວ່າ ພຣະສະມະນະໂຄດົມ ຊົງມີມານຍາ

ນາຍບ້ານ ຜູ້ໃດກ່າວວ່າ ເຮົາຮູ້ຈັກມານຍາ ຜູ້ນັ້ນກໍທໍ່ກັບກ່າວວ່າ ເຮົາມີມານຍາ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ຂໍ້ນັ້ນ ເປັນແນວນັ້ນຢ່າງແນ່ນອນ ຂ້າແດ່ພຣະສຸຄົດເຈົ້າ ຂໍ້ນັ້ນ ເປັນແນວນັ້ນຢ່າງແນ່ນອນ

ນາຍບ້ານ ຖ້າຈັ່ງຊັ້ນ ເຮົາຈັກຍ້ອນຖາມທ່ານໃນເລື້ອງນີ້ທ່ານເພິ່ງຕອບຕາມສົມຄວນ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານຮູ້ຈັກພວກທະຫານຜົມຍາວຊາວໂກລິຍະບໍ?

ຂ້າພຣະອົງ ຮູ້ຈັກພວກທະຫານຜົມຍາວຊາວໂກລິຍະ ຂ້ານ້ອຍ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ພວກທະຫານຜົມຍາວຊາວໂກລິຍະມີໄວ້ເພື່ອປະໂຫຍດອັນໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ພວກທະຫານຜົມຍາວຊາວໂກລິຍະມີໄວ້ເພື່ອປະໂຫຍດ ຄືເພື່ອປ້ອງກັນພວກໂຈນຊາວໂກລິຍະ ແລະ ເພື່ອການເຮັດໜ້າທີ່ເປັນໂຕແທນຂອງຊາວໂກລິຍະ

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານຮູ້ຈັກພວກທະຫານຜົມຍາວໃນນິຄົມຂອງຊາວໂກລິຍະວ່າ ມີສີນ ຫຼື ທຸສີນ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຮູ້ຈັກພວກທະຫານຜົມຍາວຊາວໂກລິຍະ ວ່າ ເປັນຜູ້ທຸສີນ ມີທຳຊົ່ວຊາມ ແລະ ພວກທະຫານຜົມຍາວຊາວໂກລິຍະ ເປັນພວກໜຶ່ງໃນບັນດາຜູ້ທຸສີນມີທຳຊົ່ວຊາມໃນໂລກ

ນາຍບ້ານ ຜູ້ໃດເພິ່ງກ່າວວ່າ ນາຍບ້ານຊື່ ປາຕະລິຍະ ຮູ້ຈັກພວກທະຫານຜົມຍາວຊາວໂກລິຍະວ່າທຸສີນ ມີທຳຊົ່ວຊາມ ແມ່ນນາຍບ້ານຊື່ ປາຕະລິຍະ ກໍທຸສີນ ມີທຳຊົ່ວຊາມ ຜູ້ນັ້ນເມື່ອກ່າວ ຊື່ວ່າກ່າວຖືກບໍ?

ກ່າວບໍ່ຖືກ ຂ້ານ້ອຍ ພວກທະຫານຜົມຍາວຊາວໂກລິຍະເປັນພວກໜຶ່ງ ຂ້າພຣະອົງກໍເປັນອີກພວກໜຶ່ງ ພວກທະຫານຜົມຍາວຊາວໂກລິຍະ ມີທຳແນວໜຶ່ງ ຂ້າພຣະອົງກໍມີທຳອີກແນວໜຶ່ງ

ນາຍບ້ານ ແທ້ຈິງ ທ່ານເອງຈັກກ່າວບໍ່ໄດ້ວ່າ ນາຍບ້ານຊື່ ປາຕະລິຍະ ຮູ້ຈັກພວກທະຫານຜົມຍາວຊາວໂກລິຍະວ່າທຸສີນ ມີທຳຊົ່ວຊາມ ແຕ່ນາຍບ້ານຊື່ ປາຕະລິຍະ ບໍ່ແມ່ນຜູ້ທຸສີນມີທຳຊົ່ວຊາມ ຍ້ອນແນວນັ້ນ ຕະຖາຄົດກໍຈັກກ່າວບໍ່ໄດ້ວ່າ ຕະຖາຄົດຮູ້ຈັກມານຍາ ແຕ່ຕະຖາຄົດບໍ່ແມ່ນຜູ້ມີມານຍາ

ເຮົາຮູ້ແຈ້ງມານຍາ ຜົນຂອງມານຍາ ແລະ ຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ມີມານຍາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການຂ້າສັດ ຜົນຂອງການຂ້າສັດ ແລະ ຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ຂ້າສັດຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການລັກຊັບ ຜົນຂອງການລັກຊັບ ແລະ ຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ລັກຊັບຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການປະພຶດຜິດໃນກາມ ຜົນຂອງການປະພຶດຜິດໃນກາມ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ປະພຶດຜິດໃນກາມ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການເວົ້າຕົວະ ຜົນຂອງການເວົ້າຕົວະ ແລະ ຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ເວົ້າຕົວະຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການເວົ້າຄຳສັບສໍ່ ຜົນຂອງການເວົ້າຄຳສັບສໍ່ ແລະ ຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ເວົ້າຄຳສັບສໍ່ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການເວົ້າຄຳຫຍາບ ຜົນຂອງການເວົ້າຄຳຫຍາບ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ເວົ້າຄຳຫຍາບ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງການເວົ້າບໍ່ມີສາຣະ ຜົນຂອງການເວົ້າບໍ່ມີສາຣະ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນ ຜູ້ເວົ້າບໍ່ມີສາຣະຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງຄວາມເພັ່ງເລັງຢາກໄດ້ຂອງເຂົາ ຜົນຂອງຄວາມເພັ່ງເລັງຢາກໄດ້ຂອງເຂົາ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນ ຜູ້ເພັ່ງເລັງຢາກໄດ້ຂອງເຂົາຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ເຮົາຮູ້ແຈ້ງຄວາມປະທຸດສະຮ້າຍ ທີ່ເກີດຈາກພະຍາບາດ ຜົນຂອງຄວາມປະທຸດສະຮ້າຍທີ່ເກີດຈາກພະຍາບາດ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ມີຈິດພະຍາບາດຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ເຮົາຮູ້ແຈ້ງມິດສາທິດຖິ ຜົນຂອງມິດສາທິດຖິ ແລະຂໍ້ປະຕິບັດທີ່ເປັນເຫດໃຫ້ບຸກຄົນຜູ້ເປັນມິດສາທິດຖິຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

## ສະມະນະພາມຜູ້ເວົ້າຕົວະ

ນາຍບ້ານ ມີສະມະນະພາມພວກໜຶ່ງຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ ຜູ້ຂ້າສັດທັງໝົດຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ຜູ້ລັກຊັບທັງໝົດຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ຜູ້ປະພຶດຜິດໃນກາມທັງໝົດຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ຜູ້ເວົ້າຕົວະທັງໝົດຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ

ແຕ່ຜາກົດວ່າ ຄົນລາງຄົນໃນໂລກນີ້ຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳຢ່າງດີ ລູບທາຢ່າງດີ ແຕ່ງຜົມແລະໜວດ ບົນເປີຕົນດ້ວຍກາມກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ເປັນຫຍັງ ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳຢ່າງດີ ລູບທາຢ່າງດີ ແຕ່ງຜົມ ແລະໜວດ ບົນເປີຕົນດ້ວຍກາມກັບສະຕີ ຄື ພຣະຣາຊາ

ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ຂົ່ມຂ້າເສິກຂອງພຣະຣາຊາແລ້ວຕັດຊີບມັນສາ ພຣະຣາຊາຊົງພໍພຣະທະໄທ ໄດ້ພຣະຣາດຊະທານລາງວັນແກ່ເຂົາ ດ້ວຍເຫດນັ້ນ ບຸຣຸດນີ້ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳຢ່າງດີ ລູບທາຢ່າງດີ ແຕ່ງຜົມແລະໜວດບົນເປີຕົນດ້ວຍກາມກັບສະຕີ ຄື ພຣະຣາຊາ

ຜາກົດວ່າ ຄົນລາງຄົນໃນໂລກນີ້ ຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວແລ້ວ ແຖຫົວ ແຫ່ປະຈານໄປຕາມຖະໜົນ ຕາມຮ່ອມ ດ້ວຍກອງບັນເດາະສຽງດັງສະໜັ່ນ ອອກທາງປະຕູດ້ານທິດໃຕ້ ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ ເປັງຫຍັງ ຈຶ່ງຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວແລ້ວ ແຖຫົວ ແຫ່ປະຈານໄປຕາມຖະໜົນ ຕາມຮ່ອມ ດ້ວຍກອງບັນເດາະສຽງດັງສະໜັ່ນ ອອກທາງປະຕູດ້ານທິດໃຕ້ ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ

ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນ ອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ເປັນສັດຕູຂອງພຣະຣາຊາໄດ້ຕັດຊີບສະຕີ ຫຼື ບຸຣຸດ ດ້ວຍເຫດນັ້ນ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບເຂົາແລ້ວລົງໂທດແນວນີ້ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເລື້ອງແນວນີ້ທ່ານເຄີຍໄດ້ເຫັນ ຫຼື ໄດ້ຍິນມາກ່ອນແດ່ບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ເຫັນ ໄດ້ຍິນ ທັງຈັກໄດ້ຍິນຕໍ່ໄປ ຂ້ານ້ອຍ

ນາຍບ້ານ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມທີ່ມີວາທະແນວນີ້ ມີທິດຖິແນວນີ້ວ່າ ຜູ້ຂ້າສັດທັງໝົດ ຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ເວົ້າຈິງ ຫຼື ເວົ້າຕົວະ?

ເວົ້າຕົວະ ຂ້ານ້ອຍ

ສະມະນະພາມພວກທີ່ເວົ້າຕົວະ ມີສິນ ຫຼື ທຸສິນ?

ທຸສິນ ຂ້ານ້ອຍ

ສະມະນະພາມພວກທີ່ທຸສິນ ມີທຳຊົ່ວຊາມ ປະຕິບັດຜິດ ຫຼື ປະຕິບັດຖືກ?

ປະຕິບັດຜິດ ຂ້ານ້ອຍ

ສະມະນະພາມພວກທີ່ປະຕິບັດຜິດ ເປັນມິດສາທິດຖິ ຫຼື ເປັນສຳມາທິດຖິ?

ເປັນມິດສາທິດຖິ ຂ້ານ້ອຍ

ຄວນບໍທີ່ຈະເຫຼື້ອມໃສໃນສະມະນະພາມຜູ້ເປັນມິດສາທິດຖິເຫຼົ່ານັ້ນ?

ບໍ່ຄວນເລີຍ ຂ້ານ້ອຍ (໑)

ນາຍບ້ານ ແຕ່ຜາກົດວ່າ ຄົນລາງຄົນໃນໂລກນີ້ຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປົນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ເປັນຫຍັງ ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປົນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ ໄດ້ຂົ່ມຂູ່ຢຶດເອົາຣັດຕະນະຂອງຂ້າເສິກຂອງພຣະຣາຊາມາໄດ້ ພຣະຣາຊາຊົງພໍພຣະທະໄທ ໄດ້ພຣະຣາດຊະທານລາງວັນແກ່ເຂົາດ້ວຍເຫດນັ້ນ ບຸຣຸດນີ້ ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປົນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ

ແຕ່ ຜາກົດວ່າ ຄົນລາງຄົນໃນໂລກນີ້ ຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວ ຯລຯ ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ເຮັດຫຍັງຈຶ່ງຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວ ຯລຯ ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດຜູ້ນີ້ລັກຊັບຈາກບ້ານແດ່ ຈາກປ່າແດ່ ຍ້ອນເຫດນັ້ນ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບເຂົາແລ້ວລົງໂທດແນວນີ້

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ? ເລື້ອງແນວນີ້ ທ່ານໄດ້ເຫັນ ຫຼືໄດ້ຍິນມາແດ່ບໍ?

ຂ້າພຣະອົງໄດ້ເຫັນ ໄດ້ຍິນ ທັງຈັກໄດ້ຍິນຕໍ່ໄປ ຂ້ານ້ອຍ

ນາຍບ້ານ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມທີ່ມີວາທະແນວນີ້ ມີທິດຖິແນວນີ້ວ່າ ຜູ້ລັກຊັບທັງໝົດຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ເວົ້າຄວາມຈິງ ຫຼື ເວົ້າຕົວະ ຯລຯ

ຄວນບໍທີ່ຈະເຫຼື້ອມໃສໃນສະມະນະພາມ ຜູ້ເປັນມິດສາທິດຖິເຫຼົ່ານັ້ນ

ບໍ່ຄວນເລີຍ ຂ້ານ້ອຍ (໘)

ນາຍບ້ານ ແຕ່ປາກົດວ່າ ຄົນລາງຄົນໃນໂລກນີ້ຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປີນເປີ ຕົນດ້ວຍການກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ ເຮັດຫຍັງ ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປີນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ປະພຶດຜິດໃນພັນລະຍາຂອງຂ້າເສິກ ຂອງພຣະຣາຊາ ພຣະຣາຊາຊົງພໍພຣະຫະໄທ ໄດ້ພຣະຣາດຊະທານລາງວັນແກ່ເຂົາ ດ້ວຍເຫດ ນັ້ນບຸຣຸດນີ້ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ຯລຯ ປີນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ

ຜາກົດວ່າ ຄົນລາງຄົນໃນໂລກນີ້ ຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງ ດ້ວຍເຊືອກທີ່ໜຽວ ຯລຯ ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ ໄດ້ເຮັດຫຍັງ ຈຶ່ງຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວ ຯລຯ ແລ້ວຕັດ ຫົວດ້ານ ທິດໃຕ້ຂອງເມືອງ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ປະພຶດຜິດໃນເຫຼົ່າ ກຸນລະສະຕີ ໃນເຫຼົ່າກຸນລະກຸມາຣີ ດ້ວຍເຫດນັ້ນ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບເຂົາແລ້ວ ລົງໂທດແນວນີ້

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເລື້ອງແນວນີ້ ທ່ານເຄີຍໄດ້ເຫັນ ຫຼືໄດ້ຍິນ ມາແດ່ບໍ?

ຂ້າພຣະອົງໄດ້ເຫັນ ໄດ້ຍິນ ທັງຈັກໄດ້ຍິນຕໍ່ໄປ ຂ້ານ້ອຍ

ນາຍບ້ານ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມທີ່ມີວາທະແນວນີ້ມີທິດຖິແນວນີ້ ວ່າ ຜູ້ປະພຶດຜິດໃນກາມທັງໝົດ ຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ເວົ້າຄວາມຈິງຫຼືເວົ້າ ຕົວະ ຯລຯ

ຄວນບໍທີ່ຈະເຫຼື້ອມໃສໃນສະມະນະພາມ ຜູ້ເປັນມິດສາທິດຖິເຫຼົ່ານັ້ນ

ບໍ່ຄວນເລີຍ ຂ້ານ້ອຍ (໙)

ນາຍບ້ານ ແຕ່ຜາກົດວ່າ ຄົນລາງຄົນໃນໂລກນີ້ຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳຢ່າງ ດີ ລູບທາຢ່າງດີ ແຕ່ງຜົມແລະໜວດ ປີນເປີຕົນດ້ວຍການກັບສະຕີ ຄື ພຣະຣາຊາ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ໄດ້ເຮັດຫຍັງ ຈຶ່ງຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳ ຢ່າງດີ ລູບທາຢ່າງດີ ແຕ່ງຜົມແລະໜວດ ປີນເປີຕົນດ້ວຍການກັບສະຕີ ຄືພຣະຣາຊາ ຄົນ ທັງຫຼາຍເວົ້າເຖິງຜູ້ນັ້ນອີກວ່າ ທ່ານຜູ້ຈະເລີນ ບຸຣຸດນີ້ເຮັດ ໃຫ້ພຣະຣາຊາຊົງຫົວດ້ວຍການເວົ້າ ຕົວະ ພຣະຣາຊາຊົງພໍພຣະຫະໄທໄດ້ພຣະຣາດຊະທານລາງວັນແກ່ເຂົາ ດ້ວຍເຫດນັ້ນບຸຣຸດນີ້ຈຶ່ງ ຄ້ອງພວງມາໄລ ໃສ່ຕຸ້ມຫູ ອາບນ້ຳຢ່າງດີ ລູບໄລ້ຢ່າງດີ ແຕ່ງຜົມແລະໜວດ ປີນເປີຕົນດ້ວຍ ການກັບສະຕີ ຄື ພຣະຣາຊາ

ຜາກົດວ່າ ຄົນລາງຄົນໃນໂລກນີ້ ຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວ ແຖຫົວແລ້ວ ແຫ່ປະຈານໄປຕາມຖະໜົນ ຕາມຮ່ອມ ດ້ວຍກອງບັນເດາະສຽງດັງສະໜັ່ນອອກ ທາງປະຕູດ້ານທິດໃຕ້ແລ້ວ ຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍ ເວົ້າເຖິງຜູ້ນັ້ນວ່າ ທ່ານ ຜູ້ຈະເລີນ ບຸຣຸດນີ້ໄດ້ເຮັດຫຍັງ ຈຶ່ງຖືກມັດແຂນໄຂວ້ຫຼັງຢ່າງໝັ້ນຄົງດ້ວຍເຊືອກທີ່ໜຽວ ແຖຫົວ ແລ້ວ ແຫ່ປະຈານໄປຕາມຖະໜົນ ຕາມຮ່ອມ ດ້ວຍກອງບັນເດາະສຽງດັງສະໜັ່ນ ອອກທາງປະ ຕູດ້ານທິດໃຕ້ແລ້ວຕັດຫົວດ້ານທິດໃຕ້ຂອງເມືອງ ຄົນທັງຫຼາຍເວົ້າເຖິງຜູ້ນັ້ນ ອີກວ່າ ທ່ານຜູ້ຈະ ເລີນ ບຸຣຸດນີ້ ທຳລາຍປະໂຫຍດຂອງຄະຫະບໍດີແດ່ ຂອງບຸດຄະຫະບໍດີແດ່ ດ້ວຍການເວົ້າຕົວະ ດ້ວຍເຫດນັ້ນ ພຣະຣາຊາທັງຫຼາຍ ຈຶ່ງຮັບສັ່ງໃຫ້ຈັບເຂົາແລ້ວລົງໂທດແນວນີ້

ນາຍບ້ານ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ເລື້ອງແນວນີ້ ທ່ານໄດ້ເຫັນ ຫຼື ໄດ້ຍິນມາ ແດ່ບໍ?

ຂ້າພຣະອົງໄດ້ເຫັນ ໄດ້ຍິນ ທັງຈັກໄດ້ຍິນຕໍ່ໄປ ຂ້ານ້ອຍ

ນາຍບ້ານ ບັນດາສະມະນະພາມເຫຼົ່ານັ້ນ ສະມະນະພາມທີ່ມີວາທະແນວນີ້ມີທິດຖິແນວນີ້ ວ່າ ຜູ້ເວົ້າຕົວະທັງໝົດ ຍ່ອມສະເຫວີຍທຸກໂທມະນັດໃນປັດຈຸບັນ ເວົ້າຄວາມຈິງ ຫຼື ເວົ້າຕົວະ?

ເວົ້າຕົວະ ຂ້ານ້ອຍ

ສະມະນະພາມພວກທີ່ເວົ້າຕົວະ ມີສິນຫຼືທຸສິນ?

ທຸສິນ ຂ້ານ້ອຍ

ສະມະນະພາມພວກທີ່ທຸສິນ ມີທຳຊົ່ວຊາມ ປະຕິບັດຜິດຫຼືປະຕິບັດຖືກ?

ປະຕິບັດຜິດ ຂ້ານ້ອຍ

ສະມະນະພາມພວກທີ່ປະຕິບັດຜິດ ເປັນມິດສາທິດຖິ ຫຼື ເປັນສຳມາທິດຖິ?

ເປັນມິດສາທິດຖິ ຂ້ານ້ອຍ

ຄວນບໍທີ່ຈະເຫຼື້ອມໃສໃນສະມະນະພາມຜູ້ເປັນມິດສາທິດຖິເຫຼົ່ານັ້ນ?

ບໍ່ຄວນເລີຍ ຂ້ານ້ອຍ

## ທິດຖິຂອງສາດສະດາຕ່າງ ໆ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຂ້າພຣະອົງ ມີເຮືອນພັກຢູ່ ຫຼັງໜຶ່ງ ໃນເຮືອນພັກນັ້ນມີຕຽງ ມີບ່ອນນັ່ງ ມີໂອ່ງນໍ້າ ມີຕະກຽງນໍ້າມັນ ຜູ້ໃດບໍ່ວ່າຈະເປັນ ສະມະນະ ຫຼື ພາມເຂົ້າພັກໃນເຮືອນພັກນັ້ນ ຂ້າພຣະອົງຈະແຈກແກ່ຜູ້ນັ້ນ ຕາມຄວາມສາມາດ ຕາມກຳລັງ ຂ້າແດ່ ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ສາດສະດາທັງ ໔ ເຊິ່ງມີ ທິດຖິ ຕ່າງກັນ ມີຄວາມພໍໃຈຕ່າງກັນ ມີຄວາມຖືກໃຈຕ່າງກັນ ເຂົ້າພັກໃນເຮືອນພັກນັ້ນ

ສາດສະດາທ່ານໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ

ບູຊາແລ້ວບໍ່ມີຜົນ ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກໍາທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມ ຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນ ໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ

ສາດສະດາທ່ານໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກໍາທີ່ເຮັດໄວ້ດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີ ປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ກໍມີຢູ່ໃນໂລກ

ສາດສະດາທ່ານໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນ ເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລໍາບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລໍາບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ (ເຊັ່ນນັ້ນ) ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມ ຄື ມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ໃຫ້ເປັນລານຕາກຊີ້ນໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກໍານັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນໍ້າຄົງຄາ ຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກໍານັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນໍ້າຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກໍານັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄໍາສັດ ບໍ່ມີບຸນມາເຖິງເຂົາ

ສາດສະດາທ່ານໜຶ່ງ ມີວາທະແນວນີ້ ມີທິດຖິແນວນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລໍາບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລໍາບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນ ຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ (ເຊັ່ນນັ້ນ) ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມມີບາບທີ່ເກີດຈາກກໍານັ້ນ ມີບາປມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມມີບາບທີ່ເກີດຈາກກຳນັ້ນ ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມມີບຸນທີ່ເກີດຈາກກຳນັ້ນ ມີບຸນມາເຖິງເຂົາ ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ມີບຸນມາເຖິງເຂົາ ຂ້າແດ່ ພຣະອົງ ຜູ້ຈະເລີນຂ້າພຣະອົງໄດ້ມີຄວາມເຄືອບແຄງສົງໄສວ່າ ບັນດາສະມະນະພາມຜູ້ຈະເລີນເຫຼົ່ານີ້ ໃຜເວົ້າຈິງ ໃຜເວົ້າຕົວະ

ນາຍບ້ານ ສົມຄວນທີ່ທ່ານຈະເຄືອບແຄງສົງໄສ ແລະ ຄວາມສົງໄສກໍເກີດຂຶ້ນແກ່ທ່ານໃນຖານະທີ່ຄວນເຄືອບແຄງ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າວ່າ ພຣະອົງສາມາດສະແດງທຳໃຫ້ຂ້າພຣະອົງລະຄວາມເຄືອບແຄງນີ້ໄດ້

## ທຳສະມາທິເຮັດໃຫ້ຫາຍສົງໄສ

ນາຍບ້ານ ທຳສະມາທິ ມີຢູ່ ຖ້າທ່ານ (ຕັ້ງຢູ່) ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິເມື່ອເປັນແນວນີ້ ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ທຳສະມາທິ ເປັນແນວໃດ?

ຄື ອະຣິຍະສາວົກໃນສາດສະໜານີ້ລະການຂ້າສັດ ເວັ້ນຂາດຈາກການຂ້າສັດ ລະການລັກຊັບ ເວັ້ນຂາດຈາກການລັກຊັບ ລະການປະພຶດຜິດໃນກາມ ເວັ້ນຂາດຈາກການປະພຶດຜິດໃນກາມ ລະການເວົ້າຕົວະ ເວັ້ນຂາດຈາກການເວົ້າຕົວະ ລະການເວົ້າຄຳສັບສໍ່ ເວັ້ນຂາດຈາກການເວົ້າຄຳສັບສໍ່ ລະການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າຄຳຫຍາບ ລະການເວົ້າບໍ່ມີສາຣະເວັ້ນຂາດຈາກການເວົ້າບໍ່ມີສາຣະ ລະຄວາມເພ່ງເລັງຢາກໄດ້ຂອງເຂົາ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ລະຄວາມປະທຸດສະຮ້າຍທີ່ເກີດຈາກພະຍາບາດ ມີຈິດບໍ່ພະຍາບາດ ລະມິດສາທິດຖິ ເປັນສຳມາທິດຖິ

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນພິຈາລະນາເຫັນແບວນີ້ວ່າ ສາດສະດາຜູ້ມີວາທະແບວນີ້ ມີທິດຖິແບວນີ້ວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດໄວ້ດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະ ຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ ເປັນການຖືເອົາໄຊຊະນະໃນຄຳສອນ ຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງ ຫຼື ຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແບວນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແບວນີ້ ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນ ປາສະຈາກຄວາມເພ່ງເລັງຍາກໄດ້ຂອງເຂົາ ປາສະຈາກພະຍາບາດແບວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນ ພິຈາລະນາເຫັນແບວນີ້ວ່າ ສາດສະດາຜູ້ມີວາທະແບວນີ້ ມີທິດຖິແບວນີ້ ວ່າ ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊ່ນສຣວງມີຜົນ ຜົນວິບາກແຫ່ງກຳ ທີ່ເຮັດໄວ້ດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມ ຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະ ໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍມີຢູ່ໃນໂລກ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ ເປັນການຖືເອົາໄຊຊະນະໃນຄຳສອນ ຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າ ຜູ້ສະດຸ້ງ ຫຼື ຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແບວນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແບວນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຍາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນ ພິຈາລະນາເຫັນແນວນີ້ວ່າ ສາດສະດາທ່ານໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາປມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາປມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄຳສອນຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປິຕິກໍເກີດ ເມື່ອໃຈເກີດປິຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແນວນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແນວນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຍາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ

ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນພິຈາລະນາເຫັນແນວນີ້ວ່າ ສາດສະດາທ່ານໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາປມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາປມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄຳສອນຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແນວນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແນວນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີກະລຸນາຈິດແຜ່ໄປຕະຫຼອດທິດທີ ໑ ໆລໆ ມີມຸທິຕາຈິດ ແຜ່ໄປຕະຫຼອດທິດທີ ໑ ໆລໆ

ນາຍບ້ານ ອະຣິຍະສາວົກນັ້ນ ປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກ

ພະຍາບາດແນວນີ້ບໍ່ຫຼົງ ມີສໍາປະຊັນຍະ ມີສະຕິ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນ ພິຈາລະນາເຫັນແນວນີ້ວ່າ ສາດສະດາຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກໍາທີ່ເຮັດໄວ້ດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄໍາສອນຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປິຕິກໍເກີດ ເມື່ອໃຈເກີດປິຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທໍາສະມາທິເປັນແນວນີ້ແລ ຖ້າທ່ານຕັ້ງຢູ່ໃນທໍາສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແນວນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຍາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສໍາປະຊັນຍະ ມີສະຕິ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ໆລໆ ທິດທີ ໒ ໆລໆ ທິດທີ ໓ ໆລໆ ທິດທີ ໔ ໆລໆ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນພິຈາລະນາເຫັນແນວນີ້ວ່າ ສາດສະດາຜູ້ມີວາທະແນວນີ້ ມີທິດຖິແນວນີ້ວ່າ ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກໍາທີ່ເຮັດໄວ້ດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍມີຢູ່ໃນໂລກ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄໍາສອນ

ຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແນວນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແນວນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນ ປາສະຈາກຄວາມເພ່ງເລັງຍາກໄດ້ຂອງເຂົາ ປາສະຈາກພະຍາບາດແນວນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນພິຈາລະນາເຫັນແນວນີ້ວ່າ ສາດສະດາທ່ານໜຶ່ງມີວາທະແນວນີ້ ມີທິດຖິແນວນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຮົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຮົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານ ຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄຳສອນ ຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແບບນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແບບນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ນາຍບ້ານ ອະຣິຍະສາວົກນັ້ນປາສະຈາກຄວາມເພ່ງເລັງຢາກໄດ້ຂອງເຂົາ ປາສະຈາກພະຍາບາດແບບນີ້ບໍ່ຫຼົງ ມີສຳປະຊັນຍະ ມີສະຕິ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານ ດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ອະຣິຍະສາວົກນັ້ນພິຈາລະນາເຫັນແບບນີ້ວ່າ ສາດສະດາທ່ານໜຶ່ງມີວາທະແບບນີ້ ມີທິດຖິແບບນີ້ວ່າ ເມື່ອບຸກຄົນເຮັດເອງ ໃຊ້ໃຫ້ຜູ້ອື່ນເຮັດ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດ ບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຮັດໃຫ້ເສົ້າໂສກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ເສົ້າໂສກ ເຮັດໃຫ້ລຳບາກເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ລຳບາກ ດີ້ນຣົນເອງ ໃຊ້ໃຫ້ຜູ້ອື່ນເຮັດໃຫ້ດີ້ນຣົນ ຂ້າສັດ ລັກຊັບ ເຈາະປ່ອງຈອບລັກ ປຸ້ນສະດົມ ປຸ້ນໃນເຮືອນຫຼັງດຽວ ດັກປຸ້ນທີ່ທາງປ່ຽວ ເປັນຊູ້ ເວົ້າຕົວະ ຜູ້ເຮັດ(ເຊັ່ນນັ້ນ)ກໍບໍ່ຈັດວ່າເຮັດບາບ

ແມ່ນຫາກບຸກຄົນໃຊ້ຈັກມີຄົມຄືມີດແຖສັງຫານເຫຼົ່າສັດໃນປະຖະພີນີ້ ໃຫ້ເປັນລານຕາກຊີ້ນ ໃຫ້ເປັນກອງຊີ້ນດຽວກັນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຂວາແມ່ນ້ຳຄົງຄາຂ້າເອງ ໃຊ້ໃຫ້ຜູ້ອື່ນຂ້າ ຕັດເອງ ໃຊ້ໃຫ້ຜູ້ອື່ນຕັດບຽດບຽນເອງ ໃຊ້ໃຫ້ຜູ້ອື່ນບຽດບຽນ ເຂົາຍ່ອມບໍ່ມີບາບທີ່ເກີດຈາກກຳນັ້ນ ບໍ່ມີບາບມາເຖິງເຂົາ

ແມ່ນຫາກບຸກຄົນໄປຝັ່ງຊ້າຍແມ່ນ້ຳຄົງຄາໃຫ້ເອງ ໃຊ້ໃຫ້ຜູ້ອື່ນໃຫ້ ບູຊາເອງ ໃຊ້ໃຫ້ຜູ້ອື່ນບູຊາ ເຂົາຍ່ອມບໍ່ມີບຸນທີ່ເກີດຈາກກຳນັ້ນ ບໍ່ມີບຸນມາເຖິງເຂົາ ບໍ່ມີບຸນທີ່ເກີດຈາກການໃຫ້ທານຈາກການເຝິກອິນຊີ ຈາກການສັງລວມ ຈາກການເວົ້າຄຳສັດ ບໍ່ມີບຸນມາເຖິງເຂົາ

ຖ້າສາດສະດາທ່ານນັ້ນເວົ້າຈິງ ຂໍ້ທີ່ເຮົາສັງລວມກາຍ ວາຈາ ໃຈ ແລະຂໍ້ທີ່ເຮົາຫຼັງຈາກຕາຍແລ້ວຈັກໄປເກີດໃນສຸກຄະຕິໂລກສະຫວັນ ທັງ ໒ ຂໍ້ນີ້ເປັນການຖືເອົາໄຊຊະນະໃນຄຳສອນຍ້ອນເຮົາບໍ່ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືຜູ້ໝັ້ນຄົງ ຈຶ່ງເປັນຜູ້ປະຕິບັດບໍ່ຜິດ ປາໂມດກໍເກີດແກ່ອະຣິຍະສາວົກນັ້ນ ເມື່ອເກີດປາໂມດ ປີຕິກໍເກີດ ເມື່ອໃຈເກີດປີຕິ ກາຍກໍສະງົບ ທ່ານຜູ້ມີກາຍສະງົບຍ່ອມຢູ່ສະບາຍ ຈິດຂອງທ່ານຜູ້ຢູ່ສະບາຍຍ່ອມຕັ້ງໝັ້ນ

ນາຍບ້ານ ທຳສະມາທິເປັນແບບນີ້ແລ ຖ້າທ່ານຕັ້ງຢູ່ໃນທຳສະມາທິນັ້ນ ເພິ່ງໄດ້ຈິດຕະສະມາທິ ເມື່ອເປັນແບບນີ້ທ່ານເພິ່ງລະຄວາມເຄືອບແຄງນີ້ໄດ້

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນາຍບ້ານຊື່ປາຕະລິຍະໄດ້ຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ປາຕະລິຍະສູດທີ ໑໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ຄື

໑. ຈັນທະສູດ
໒. ໂຍທາຊີວະສູດ
໓. ຫັດຖາໂຣຫະສູດ
໔. ອັດສາໂຣຫະສູດ
໕. ອະສິພັນທະກະປຸດຕະສູດ
໖. ເຂດຕູປະມະສູດ
໗. ສັງຂະທະມະສູດ
໘. ກຸລະສູດ
໙. ມະນີຈູລະກະສູດ
໑໐. ມະນິຈູລະກະສູດ
໑໑. ຄັນທະພະກະສູດ
໑໒. ຣາສິຍະສູດ
໑໓. ປາຕະລິຍະສູດ

**ຄາມະນີສັງຍຸດ ຈົບບໍລິບູນ**

# ໙. ອະສັງຂະຕະສັງຍຸດ

## ໑. ປະຖົມວັກ

### ໝວດທີ ໑

## ໑. ກາຍະຄະຕາສະຕິສູດ

### ວ່າດ້ວຍກາຍະຄະຕາສະຕິ

[໓໖໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ເຮົາຈັກສະແດງອະສັງຂະຕະທຳ (ສິ່ງທີ່ປັດໄຈປຸງແຕ່ງບໍ່ໄດ້) ແລະທາງທີ່ໃຫ້ເຖິງອະສັງຂະຕະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະສັງຂະຕະທຳ ຄື ອັນໃດ?
ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະ ຄວາມສິ້ນໂມຫະ
ນີ້ເຮົາຮຽກວ່າ ອະສັງຂະຕະທຳ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?
ຄື ກາຍະຄະຕາສະຕິ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ

ອະສັງຂະຕະທຳເຮົາໄດ້ສະແດງແລ້ວ ແລະທາງທີ່ໃຫ້ເຖິງອະສັງຂະຕະທຳເຮົາໄດ້ສະແດງແລ້ວແກ່ທ່ານທັງຫຼາຍແນວນີ້ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

**ກາຍະຄະຕາສະຕິສູດທີ ໑ ຈົບ**

# ໘. ສະມະຖະວິປັດສະນາສູດ

## ວ່າດ້ວຍສະມະຖະແລະວິປັດສະນາ

[໓໙໗] ພິກຂຸທັງຫຼາຍ ເຮົາຈັກສະແດງອະສັງຂະຕະທຳ ແລະທາງທີ່ໃຫ້ເຖິງອະສັງຂະຕະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະສັງຂະຕະທຳ ຄືອັນໃດ?
ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະ ຄວາມສິ້ນໂມຫະ
ນີ້ເຮົາຮຽກວ່າ ອະສັງຂະຕະທຳ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?
ຄື ສະມະຖະ ແລະວິປັດສະນາ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ສະມະຖະວິປັດສະນາສູດທີ ໘ ຈົບ**

# ໙. ສະວິຕັກກະສະວິຈາຣະສູດ

## ວ່າດ້ວຍສະວິຕັກກະສະວິຈາຣະສະມາທິ

[໓໙໘] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

| | |
|---|---|
| ຄື ສະວິຕັກກະສະວິຈາຣະສະມາທິ | (ສະມາທິທີ່ມີວິຕົກວິຈານ) |
| ອະວິຕັກກະວິຈານສະມາທິ | (ສະມາທິທີ່ບໍ່ມີວິຕົກມີພຽງວິຈານ) |
| ອະວິຕັກກະອະວິຈາຣະສະມາທິ | (ສະມາທິທີ່ບໍ່ມີວິຕົກວິຈານ) |

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ສະວິຕັກກະສະວິຈາຣະສູດທີ ໙ ຈົບ**

# ໔. ສູນຍະຕະສະມາທິສູດ

## ວ່າດ້ວຍສູນຍະຕະສະມາທິ

[໓໖໙] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?

ຄື ສູນຍະຕະສະມາທິ (ສະມາທິພິຈາລະນາຄວາມວ່າງ)
ອະນິມິດຕະສະມາທິ (ສະມາທິພິຈາລະນາທຳບໍ່ມີນິມິດ)
ອັບປະນິຫິຕະສະມາທິ (ສະມາທິພິຈາລະນາທຳບໍ່ມີຄວາມຕັ້ງປາຖະໜາ)

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ສູນຍະຕະສະມາທິສູດທີ ໔ ຈົບ**

# ໕. ສະຕິປັດຖານສູດ

## ວ່າດ້ວຍສະຕິປັດຖານ

[໓໗໐] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ສະຕິປັດຖານ ໔

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ສະຕິປັດຖານສູດທີ ໕ ຈົບ**

# ໖. ສຳມັບປະທານສູດ

## ວ່າດ້ວຍສຳມັບປະທານ

[໓໗໑] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?

ຄື ສຳມັບປະທານ ໔

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ສຳມັບປະທານສູດທີ ໖ ຈົບ**

# ໗. ອິດທິປາທະສູດ

## ວ່າດ້ວຍອິດທິບາດ

[໑໗໔] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອິດທິບາດ ໔

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ອິດທິປາທະສູດທີ ໗ ຈົບ**

# ໘. ອິນທະຣິຍະສູດ

## ວ່າດ້ວຍອິນຊີ

[໑໗໕] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?

ຄື ອິນຊີ ໕

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ອິນທະຣິຍະສູດທີ ໘ ຈົບ**

# ໙. ພະລະສູດ

## ວ່າດ້ວຍພະລະ

[໑໗໖] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ພະລະ ໕

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ພະລະສູດທີ ໙ ຈົບ**

# ໑໐. ໂພດຊັງຄະສູດ

## ວ່າດ້ວຍໂພດຊົງ

[໓໗໘] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?

ຄື ໂພດຊົງ ໗

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

**ໂພດຊັງຄະສູດທີ ໑໐ ຈົບ**

# ໑໑. ມັກຄັງຄະສູດ

## ວ່າດ້ວຍອົງແຫ່ງມັກ

[໓໗໙] ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອະຣິຍະມັກມີອົງ ໘

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ

ອະສັງຂະຕະທຳເຮົາໄດ້ສະແດງແລ້ວ ແລະທາງທີ່ໃຫ້ເຖິງອະສັງຂະຕະທຳເຮົາໄດ້ສະແດງແລ້ວແກ່ທ່ານ ທັງຫຼາຍແນວນີ້ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍ ຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

**ມັກຄັງຄະສູດທີ ໑໑ ຈົບ**

**ປະຖົມວັກແຫ່ງສັງຍຸດ ຈົບບໍລິບູນ**

# ລວມພຣະສູດທີ່ມີໃນວັກນີ້ ຄື

๑. ກາຍະຄະຕາສະຕິສູດ
๒. ສະວິຕັກກະສະວິຈາຣະສູດ
๓. ສະຕິປັດຖານສູດ
๔. ອິດທິປາທະສູດ
๕. ພະລະສູດ
๖. ສະມະຖະວິປັດສະນາສູດ
๗. ສູນຍະຕະສະມາທິສູດ
๘. ສຳມັບປະທານສູດ
๙. ອິນທະຣິຍະສູດ
๑๐. ໂພດຊັງຄະສູດ
๑๑. ມັກຄັງຄະສູດ

# ໘. ທຸຕິຍະວັກ

## ໝວດທີ ໘

## ໑. ອະສັງຂະຕະສູດ

### ວ່າດ້ວຍອະສັງຂະຕະທຳ

[໓໗໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງອະສັງຂະຕະທຳ (ສິ່ງທີ່ປັດໄຈປຸງແຕ່ງບໍ່ໄດ້) ແລະ ທາງທີ່ໃຫ້ເຖິງອະສັງຂະຕະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະສັງຂະຕະທຳ ຄື ອັນໃດ?

ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະ ຄວາມສິ້ນໂມຫະ

ນີ້ເຮົາຮຽກວ່າ ອະສັງຂະຕະທຳ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄືອັນໃດ?

ຄື ສະມະຖະ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ

ອະສັງຂະຕະທຳເຮົາໄດ້ສະແດງແລ້ວແລະທາງທີ່ໃຫ້ເຖິງອະສັງຂະຕະທຳເຮົາໄດ້ສະແດງແລ້ວແກ່ທ່ານ ທັງຫຼາຍແນວນີ້ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ (໑)

ພິກຂຸທັງຫຼາຍ ເຮົາຈັກສະແດງອະສັງຂະຕະທຳ ແລະ ທາງທີ່ໃຫ້ເຖິງອະສັງຂະຕະທຳແກ່ທ່ານ

ທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະສັງຂະຕະທຳ ຄື ອັນໃດ?

ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະ ຄວາມສິ້ນໂມຫະ

ນີ້ເຮົາຮຽກວ່າ ອະສັງຂະຕະທຳ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ວິປັດສະນາ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ

ອະສັງຂະຕະທຳເຮົາໄດ້ສະແດງແລ້ວ ฯລฯ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ (໘)

ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ສະວິຕັກກະສະວິຈາຣະສະມາທິ (ສະມາທິທີ່ມີວິຕົກວິຈານ)

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອະວິຕັກກະວິຈານສະມາທິ (ສະມາທິທີ່ບໍ່ມີວິຕົກມີພຽງວິຈານ)

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອະວິຕັກກະອະວິຈາຣະສະມາທິ (ສະມາທິທີ່ບໍ່ມີວິຕົກວິຈານ)

ນີ້ເຮົາຮຽກ ວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ (໓-໕)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ສູນຍະຕະສະມາທິ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອະນິມິດຕະສະມາທິ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ຄື ອັນໃດ?

ຄື ອັບປະນິຫິຕະສະມາທິ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ (໖-໗)

ພິກຂຸທັງຫຼາຍ ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນທຳໃນທຳທັງຫຼາຍ ຢູ່ ຯລຯ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ (໙-໑໘)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນທຳທີ່ເປັນບາບອະກຸສົນທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະທຳທີ່ເປັນບາບອະກຸສົນທີ່ເກີດຂຶ້ນແລ້ວ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ (໑໓-໑໖)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ (໑໗-໔໐)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນສັດທິນຊີອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນການສະລະ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນວິຣິຍິນຊີອັນອາໄສວິເວກ ໆລໆ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສະຕິນຊີ ໆລໆ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສະມາທິນຊີ ໆລໆ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ໆລໆ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນປັນຍິນຊີ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນການສະລະ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ (໔໑-໔໕)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສັທທາພະລະອັນອາໄສວິເວກ ฯລฯ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນວິຣິຍະພະລະ ฯລฯ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສະຕິພະລະ ฯລฯ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສະມາທິພະລະ ฯລฯ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນປັນຍາພະລະອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນການສະລະ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ (໔໖-໕໐)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສ ນິໂຣທ ນ້ອມໄປໃນການສະລະ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ຈະເລີນທັມມະວິຈະຍະສຳໂພດຊົງ ฯລฯ ຈະເລີນວິຣິຍະສຳໂພດຊົງ ฯລฯ ຈະເລີນປີຕິສຳໂພດຊົງ ฯລฯ ຈະເລີນປັດສັດທິສຳໂພດຊົງ ฯລฯ ຈະເລີນສະມາທິສຳໂພດຊົງ ฯລฯ ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນການສະລະ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ฯລฯ (໕໑-໕໗)

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣທ ນ້ອມໄປໃນການສະລະ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນສຳມາສັງກັບປະ ຯລຯ ຈະເລີນສຳມາວາຈາ ຯລຯ ຈະເລີນສຳມາກຳມັນຕະ ຯລຯ ຈະເລີນສຳມາອາຊີວະ ຯລຯ ຈະເລີນສຳມາວາຍາມະ ຯລຯ ຈະເລີນສຳມາສະຕິ ຯລຯ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ ຯລຯ

ທາງທີ່ໃຫ້ເຖິງອະສັງຂະຕະທຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນການສະລະ

ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງອະສັງຂະຕະທຳ

ພິກຂຸທັງຫຼາຍ ອະສັງຂະຕະທຳເຮົາໄດ້ສະແດງແລ້ວ ແລະທາງທີ່ໃຫ້ເຖິງອະສັງຂະຕະທຳເຮົາໄດ້ສະແດງແລ້ວແກ່ທ່ານທັງຫຼາຍແນວນີ້ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນ ຜູ້ອະນຸເຄາະ ເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ (໓໗-໔໕)

**ອະສັງຂະຕະສູດທີ ໑ ຈົບ**

# ໒. ອະນະຕະສູດ

## ວ່າດ້ວຍຄວາມບໍ່ນ້ອມໄປ

[໓໗໗] ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມບໍ່ນ້ອມໄປ ແລະທາງທີ່ໃຫ້ເຖິງຄວາມບໍ່ນ້ອມໄປແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ຄວາມບໍ່ນ້ອມໄປ ເປັນແນວໃດ? ຯລຯ

(ເພິ່ງຂະຫຍາຍຄວາມໃຫ້ພິດສະດານຄືອະສັງຂະຕະສູດ)

**ອະນະຕະສູດທີ ໒ ຈົບ**

# ၃-၃໘. ອະນາສະວາທິສູດ

## ວ່າດ້ວຍທຳອັນຫາອາສະວະບໍ່ໄດ້ເປັນຕົ້ນ

[၃໗໙-໔໐໗] ພິກຂຸທັງຫຼາຍ ເຮົາຈັກສະແດງທຳອັນຫາອາສະວະບໍ່ໄດ້ ແລະທາງທີ່ໃຫ້ເຖິງທຳອັນຫາອາສະວະບໍ່ໄດ້ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳອັນຫາອາສະວະບໍ່ໄດ້ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງສັດຈະທຳ ແລະທາງທີ່ໃຫ້ເຖິງສັດຈະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ສັດຈະທຳ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນຝັ່ງ ແລະທາງທີ່ໃຫ້ເຖິງທຳທີ່ເປັນຝັ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເປັນ ຝັ່ງ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ລະອຽດອ່ອນແລະທາງທີ່ໃຫ້ເຖິງທຳທີ່ລະອຽດອ່ອນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ລະອຽດອ່ອນ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເຫັນໄດ້ຍາກຍິ່ງ ແລະທາງທີ່ໃຫ້ເຖິງທຳທີ່ເຫັນໄດ້ຍາກຍິ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເຫັນໄດ້ຍາກຍິ່ງ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ລ້າຫຼັງ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ລ້າຫຼັງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ລ້າຫຼັງ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ໝັ້ນຍືນ ແລະທາງທີ່ໃຫ້ເຖິງທຳທີ່ໝັ້ນຍືນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ໝັ້ນຍືນ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ເສື່ອມສະຫຼາຍ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ເສື່ອມສະຫຼາຍແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ເສື່ອມສະຫຼາຍ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ໃຜ ໆ ບໍ່ເພິ່ງເຫັນ (ດ້ວຍຈັກຂຸວິນຍານ) ແລະທາງທີ່ໃຫ້ເຖິງທຳທີ່ໃຜໆ ບໍ່ເພິ່ງເຫັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ໃຜ ໆ ບໍ່ເພິ່ງເຫັນ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ມີກິເລດເຄື່ອງປຸງແຕ່ງ (ຕັນຫາ ມານະ ແລະທິດຖິ) ແລະທາງທີ່ໃຫ້ເຖິງທຳທີ່ບໍ່ມີກິເລດເຄື່ອງປຸງແຕ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ມີກິເລດເຄື່ອງປຸງແຕ່ງ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ສະງົບ ແລະທາງທີ່ໃຫ້ເຖິງທຳທີ່ສະງົບແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ສະງົບ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງອະມະຕະທຳ ແລະທາງທີ່ໃຫ້ເຖິງອະມະຕະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະມະຕະທຳ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ປະນີດ ແລະທາງທີ່ໃຫ້ເຖິງທຳທີ່ປະນີດແກ່ທ່ານທັງຫຼາຍທ່ານທັງຫຼາຍຈົ່ງຟັງ

ທຳທີ່ປະນີດ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ປອດໄພ ແລະທາງທີ່ໃຫ້ເຖິງທຳທີ່ປອດໄພແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ປອດໄພ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ກະເສມ ແລະທາງທີ່ໃຫ້ເຖິງທຳທີ່ກະເສມແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ກະເສມ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳເປັນທີ່ສິ້ນຕັນຫາ ແລະທາງທີ່ໃຫ້ເຖິງທຳເປັນທີ່ສິ້ນຕັນຫາແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເປັນທີ່ສິ້ນຕັນຫາ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ໜ້າອັດສະຈັນແລະທາງທີ່ໃຫ້ເຖິງທຳທີ່ໜ້າອັດສະຈັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ໜ້າອັດສະຈັນ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ເຄີຍຜາກົດ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ເຄີຍຜາກົດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ເຄີຍຜາກົດ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ມີທຸກ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ມີທຸກແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ມີທຸກ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ມີເຄື່ອງຮ້ອຍຮັດ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ມີເຄື່ອງຮ້ອຍຮັດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ມີເຄື່ອງຮ້ອຍຮັດ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງນິບພານ ແລະທາງທີ່ໃຫ້ເຖິງນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ນິບພານ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ມີຄວາມບຽດບຽນ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ມີຄວາມບຽດບຽນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ມີຄວາມບຽດບຽນ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ປາສະຈາກຣາຄະ ແລະທາງທີ່ໃຫ້ເຖິງທຳທີ່ປາສະຈາກຣາຄະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ປາສະຈາກຣາຄະ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມບໍລິສຸດ ແລະທາງທີ່ໃຫ້ເຖິງຄວາມບໍລິສຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ຄວາມບຣິສຸດ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມລຸດພົ້ນ ແລະທາງທີ່ໃຫ້ເຖິງຄວາມລຸດພົ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ຄວາມລຸດພົ້ນ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ບໍ່ມີຄວາມອາໄລ ແລະທາງທີ່ໃຫ້ເຖິງທຳທີ່ບໍ່ມີຄວາມອາໄລແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ບໍ່ມີຄວາມອາໄລ ເປັນແນວໃດ? ฯລฯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນເກາະ ແລະທາງທີ່ໃຫ້ເຖິງທຳທີ່ເປັນເກາະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳທີ່ເປັນເກາະ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳເປັນທີ່ລີ້ ແລະທາງທີ່ໃຫ້ເຖິງທຳເປັນທີ່ລີ້ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເປັນທີ່ລີ້ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳເປັນທີ່ຕ້ານທານ ແລະທາງທີ່ໃຫ້ເຖິງທຳເປັນທີ່ຕ້ານທານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເປັນທີ່ຕ້ານທານ ເປັນແນວໃດ? ຯລຯ

ພິກຂຸທັງຫຼາຍ ເຮົາຈັກສະແດງທຳເປັນທີ່ເພິ່ງ ແລະທາງທີ່ໃຫ້ເຖິງທຳເປັນທີ່ເພິ່ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເປັນທີ່ເພິ່ງ ເປັນແນວໃດ? ຯລຯ

**ອະນາສະວາທິສູດທີ ໑-໓໘ ຈົບ**

# ໓໓. ປະຣາຍະນະສູດ

## ວ່າດ້ວຍທຳເປັນທີ່ໄປໃນເບື້ອງໜ້າ

[໔໐໗] ພິກຂຸທັງຫຼາຍ ເຮົາຈັກສະແດງທຳເປັນທີ່ໄປໃນເບື້ອງໜ້າ ແລະທາງທີ່ໃຫ້ເຖິງທຳເປັນທີ່ໄປໃນເບື້ອງໜ້າແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທຳເປັນທີ່ໄປໃນເບື້ອງໜ້າ ຄືອັນໃດ?
ຄື ຄວາມສິ້ນຣາຄະ ຄວາມສິ້ນໂທສະ ແລະຄວາມສິ້ນໂມຫະ
ນີ້ເຮົາຮຽກວ່າ ທຳເປັນທີ່ໄປໃນເບື້ອງໜ້າ

ທາງທີ່ໃຫ້ເຖິງທຳເປັນທີ່ໄປໃນເບື້ອງໜ້າ ຄື ອັນໃດ?
ຄື ກາຍະຄະຕາສະຕິ
ນີ້ເຮົາຮຽກວ່າ ທາງທີ່ໃຫ້ເຖິງທຳເປັນທີ່ໄປໃນເບື້ອງໜ້າ

ພິກຂຸທັງຫຼາຍ ທຳເປັນທີ່ໄປໃນເບື້ອງໜ້າ ແລະທາງທີ່ໃຫ້ເຖິງທຳເປັນທີ່ໄປໃນເບື້ອງໜ້າເຮົາໄດ້ສະແດງແລ້ວ ແກ່ທ່ານທັງຫຼາຍແນວນີ້ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດ

ເກື້ອກູນ ຜູ້ອະນຸເຄາະ ເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວ ແກ່ທ່ານທັງຫຼາຍ ພິກຂຸທັງຫຼາຍ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມເດືອດຮ້ອນໃຈໃນພາຍຫຼັງ ນີ້ເປັນຄຳພ່ຳສອນສຳລັບທ່ານທັງຫຼາຍຂອງເຮົາ

(ເພິ່ງຂະຫຍາຍຄວາມໃຫ້ພິດສະດານຄືອະສັງຂະຕະສູດ)

**ປະຣາຍະນະສູດທີ ໓໓ ຈົບ**

**ທຸຕິຍະວັກ ຈົບບໍລິບູນ**

## ລວມພຣະສູດທີ່ ມີໃນວັກນີ້ ຄື



**ອະສັງຂະຕະສັງຍຸດ ຈົບບໍລິບູນ**

**ສູດທີ ໗ ໃນອາສີວິສະວັກກໍຄືກັນ**

# ໑໐. ອັບພະຍາກະຕະສັງຍຸດ

## ໑. ເຂມາສູດ
### ວ່າດ້ວຍເຂມາພິກຂຸນີ

[໔໑໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ເຂມາພິກຂຸນີທ່ຽວຈາຣິກໄປໃນແຄວ້ນໂກສົນ ເຂົ້າໄປພັກຢູ່ທີ່ໂຕຣະນະວັດຖຸ (ຄ່າຍຫຼັກຮົ້ວຕ້າຍ) ລະຫວ່າງນະຄອນສາວັດຖີກັບເມືອງສາເກດ ຄັ້ງນັ້ນ ພຣະເຈົ້າປະເສນທິໂກສົນສະເດັດຈາກ ເມືອງສາເກດໄປສູ່ນະຄອນສາວັດຖີ ໄດ້ເຂົ້າປະທັບແຮມຣາຕີໜຶ່ງທີ່ໂຕຣະນະວັດຖຸລະຫວ່າງນະຄອນສາວັດຖີກັບເມືອງສາເກດ ຮັບສັ່ງຮຽກຣາດຊະບຸຣຸດຄົນໜຶ່ງມາຕັດຖາມດັ່ງນີ້ວ່າ ບຸຣຸດຜູ້ຈະເລີນ ທ່ານຈົ່ງໄປເບິ່ງໃຫ້ຮູ້ວ່າທີ່ໂຕຣະນະວັດຖຸມີສະມະນະ ຫຼື ພາມຜູ້ທີ່ເຮົາຄວນເຂົ້າໄປຫາໃນມື້ນີ້ມີບໍ?

ຣາດຊະບຸຣຸດນັ້ນ ທູນຮັບສະໜອງພຣະດຳຣັດຂອງພຣະເຈົ້າປະເສນທິໂກສົນແລ້ວກວດເບິ່ງໂຕຣະນະວັດຖຸ ຈົນທົ່ວກໍບໍ່ເຫັນສະມະນະ ຫຼື ພາມຜູ້ທີ່ພຣະເຈົ້າປະເສນທິໂກສົນຄວນສະເດັດເຂົ້າໄປຫາ

ຣາດຊະບຸຣຸດນັ້ນ ໄດ້ພົບເຂມາພິກຂຸນີເຊິ່ງເຂົ້າໄປພັກຢູ່ທີ່ໂຕຣະນະວັດຖຸ ຈຶ່ງເຂົ້າໄປເຝົ້າພຣະເຈົ້າ ປະເສນທິໂກສົນຮອດບ່ອນຢູ່ ໄດ້ຂາບທູນດັ່ງນີ້ວ່າ ຂໍເດຊະ ຂ້າແດ່ ພຣະອົງ ທີ່ໂຕຣະນະວັດຖຸບໍ່ມີສະມະນະ ຫຼື ພາມຜູ້ທີ່ພຣະອົງຄວນສະເດັດເຂົ້າໄປຫາເລີຍ ມີແຕ່ພິກຂຸນີ ຊື່ວ່າເຂມາ ຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ ແລະ ພຣະແມ່ເຈົ້າອົງນັ້ນ ມີກິດຕິສັບອັນງາມ ຂ່າລືໄປແນວນີ້ວ່າ ພຣະແມ່ເຈົ້າເຂມາພິກຂຸນີເປັນບັນດິດ ມີປັນຍາ ແຫຼມຄົມ ເປັນພະຫູສູດ ເວົ້າມ່ວນ ມີປະຕິພານດີ ຂໍຂາບທູນເຊີນພຣະອົງສະເດັດເຂົ້າໄປຫາພຣະແມ່ເຈົ້າອົງນັ້ນເທີ້ນ

### ພຣະເຈົ້າປະເສນທິໂກສົນຕັດຖາມບັນຫາກັບເຂມາພິກຂຸນີ

ຕໍ່ມາ ພຣະເຈົ້າປະເສນທິໂກສົນ ສະເດັດເຂົ້າໄປຫາເຂມາພິກຂຸນີຮອດບ່ອນຢູ່ ຊົງໄຫວ້ແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຕັດຖາມດັ່ງນີ້ວ່າ ພຣະແມ່ເຈົ້າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ?

ເຂມາພິກຂຸນີຖວາຍພຣະພອນວ່າ ຂໍຖວາຍພຣະພອນ ມະຫາບໍພິດ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນ

ກໍຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ? ກໍຕອບວ່າ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ? ກໍຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກແມ່ນບໍ? ກໍຕອບວ່າ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກນີ້ ພຣະຜູ້ມີພຣະພາກບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ ກໍຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ອັນໃດນໍ? ເປັນເຫດເປັນປັດໄຈໃຫ້ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ

ຂໍຖວາຍພຣະພອນ ມະຫາບໍພິດ ຖ້າຈັ່ງຊັ້ນ ເຮົາຂໍຍ້ອນຖາມມະຫາບໍພິດໃນ ເລື້ອງນີ້ແດ່ ຂໍພຣະອົງເພິ່ງຕອບຕາມທີ່ຊົງພໍພຣະທະໄທ ພຣະອົງຈະຊົງເຂົ້າພຣະທະໄທຄວາມຂໍ້ນີ້ວ່າແນວໃດ? ນັກຄຳນວນ ນັກຕີລາຄາ ຫຼື ນັກປະມວນ ລາງຄົນຂອງພຣະອົງ ຜູ້ສາມາດຄຳນວນຊາຍໃນແມ່ນ້ຳຄົງຄາວ່າ ຊາຍທີ່ນີ້ເມັດ ທີ່ນີ້ ໑໐໐ ເມັດ ທີ່ນີ້ ໑,໐໐໐ ເມັດ ຫຼື ທີ່ນີ້ ໑໐໐,໐໐໐ ເມັດ ມີຢູ່ບໍ?

ບໍ່ມີ ພຣະແມ່ເຈົ້າ

ອັນໜຶ່ງ ນັກຄຳນວນ ນັກຕີລາຄາ ຫຼື ນັກປະມວນລາງຄົນຂອງພຣະອົງ ຜູ້ສາມາດຄຳນວນນ້ຳໃນມະຫາສະມຸດວ່າ ນ້ຳທີ່ນີ້ອາລະຫະກະ ທີ່ນີ້ ໑໐໐ ອາລະຫະກະ ທີ່ນີ້ ໑,໐໐໐ ອາລະຫະກະ ຫຼື ທີ່ນີ້ ໑໐໐,໐໐໐ ອາລະຫະກະ ມີຢູ່ບໍ?

ບໍ່ມີ ພຣະແມ່ເຈົ້າ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນມະຫາສະມຸດມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ

ເລື້ອງນີ້ກໍຄືກັນ ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍຮູບໃດ ຮູບນັ້ນ ພຣະຕະຖາຄົດລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພຣະຕະຖາຄົດພົ້ນແລ້ວ ຈາກການບັນຍັດວ່າ ຮູບ ມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ຍ່ອມບໍ່ຖືກ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍເວທະນາໃດ ເວທະນານັ້ນພຣະຕະຖາຄົດລະໄດ້ແລ້ວ ຕັດຮາກກົ່ນເຫງົ້າ ຄື ຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພຣະຕະຖາຄົດພົ້ນແລ້ວ ຈາກການບັນຍັດວ່າ ເວທະນາ ມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ຍ່ອມບໍ່ຖືກ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍ ສັນຍາ ໃດ ຯລຯ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍສັງຂານເຫຼົ່າໃດ ສັງຂານເຫຼົ່ານັ້ນພຣະຕະຖາຄົດລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພຣະຕະຖາຄົດພົ້ນແລ້ວ ຈາກການບັນຍັດວ່າສັງຂານ ມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ຍ່ອມບໍ່ຖືກ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍວິນຍານໃດ ວິນຍານນັ້ນພຣະຕະຖາຄົດລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ພຣະຕະຖາຄົດພົ້ນແລ້ວ ຈາກການບັນຍັດວ່າ ວິນຍານ ມີຄວາມເລິກປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ຍ່ອມບໍ່ຖືກ

ລຳດັບນັ້ນ ພຣະເຈົ້າປະເສນທິໂກສົນຊົງ ຊົມຊື່ນ ຍິນດີພາສິດຂອງເຂມາພິກຂຸນີ ສະເດັດລຸກຂຶ້ນຈາກທີ່ປະທັບ ຊົງໄຫວ້ເຂມາພິກຂຸນີ ກະທຳປະທັກຂິນແລ້ວສະເດັດຈາກໄປ

## ພຣະເຈົ້າປະເສນທິໂກສົນທູນຖາມບັນຫາພຣະຜູ້ມີພຣະພາກເຈົ້າ

ຕໍ່ມາພຣະເຈົ້າປະເສນທິໂກສົນ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຊົງຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ?

ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ ຂໍຖວາຍພຣະພອນ ມະຫາບໍພິດ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ອາຕະມາພາບບໍ່ພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ອາຕະມາພາບກໍບໍ່ພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ນີ້ອາຕະມາພາບບໍ່ພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ອາຕະມາພາບກໍບໍ່ພະຍາກອນ

ເມື່ອພຣະອົງຖືກຂ້າພຣະອົງທູນຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ? ກໍຕັດຕອບວ່າ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ອາຕະມາພາບບໍ່ພະຍາກອນ ໆລໆ

ພຣະອົງຖືກຂ້າພຣະອົງທູນຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ ກໍຕັດຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ອາຕະມາພາບກໍບໍ່ພະຍາກອນ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ ໆ

ຂໍຖວາຍພຣະພອນ ມະຫາບໍພິດ ຖ້າຈັ່ງຊັ້ນ ອາຕະມາພາບຈັກຍ້ອນຖາມມະຫາບໍພິດໃນເລື້ອງນີ້ແດ່ ຂໍພຣະອົງເພິ່ງຕັດຕອບຕາມທີ່ຊົງພໍພຣະທະໄທເທີ້ນ ພຣະອົງຊົງເຂົ້າພຣະທະໄທຄວາມຂໍ້ນີ້ວ່າແນວໃດ ນັກຄຳນວນ ນັກຕີລາຄາ ຫຼື ນັກປະມວນລາງຄົນຂອງພຣະອົງຜູ້ສາມາດຄຳນວນເມັດຊາຍໃນແມ່ນ້ຳຄົງຄາວ່າ ຊາຍທີ່ນີ້ເມັດ ໆລໆ ຫຼື ຊາຍທີ່ນີ້ ໑໐໐,໐໐໐ ເມັດ ມີຢູ່ບໍ

ບໍ່ມີ ຂ້ານ້ອຍ

ອັນໜຶ່ງ ນັກຄຳນວນ ນັກຕີລາຄາ ຫຼື ນັກປະມວນລາງຄົນຂອງພຣະອົງຜູ້ສາມາດ ຄຳນວນນ້ຳໃນມະຫາສະມຸດວ່າ ນ້ຳທີ່ນີ້ອາລະຫະກະ ໆລໆ ຫຼື ນ້ຳທີ່ນີ້ ໑໐໐,໐໐໐ ອາລະຫະກະ ມີຢູ່ບໍ?

ບໍ່ມີ ຂ້ານ້ອຍ
ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນມະຫາສະມຸດມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຂ້ານ້ອຍ

ເລື້ອງນີ້ກໍຄືກັນ ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍຮູບໃດ ຮູບນັ້ນຕະຖາຄົດ (ເຮົາ) ລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດ (ເຮົາ) ພົ້ນແລ້ວ ຈາກການບັນຍັດວ່າ ຮູບ ມີຄວາມເລິກປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີຍ່ອມບໍ່ຖືກ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍ ເວທະນາໃດ ໆລໆ

ດ້ວຍສັນຍາໃດ ຯລຯ
ດ້ວຍສັງຂານເຫຼົ່າໃດ ຯລຯ

ບຸກຄົນເມື່ອຈະບັນຍັດຕະຖາຄົດ ເພິ່ງບັນຍັດດ້ວຍວິນຍານໃດ ວິນຍານນັ້ນຕະຖາຄົດ(ເຮົາ) ລະໄດ້ແລ້ວ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ ເຮັດໃຫ້ບໍ່ມີເກີດຂຶ້ນຕໍ່ໄປບໍ່ໄດ້ ຕະຖາຄົດ (ເຮົາ) ພົ້ນແລ້ວຈາກການບັນຍັດວ່າວິນຍານ ມີຄວາມເລິກ ປະມານບໍ່ໄດ້ ຢັ່ງເຖິງໄດ້ຍາກ ຄື ມະຫາສະມຸດສັນນັ້ນ

ຄໍາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີຍ່ອມບໍ່ຖືກ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບຂອງພຣະສາວິກາ ທຽບຄຽງກັນໄດ້ຄືກັນ ບໍ່ຜິດບິດບ້ຽວໃນບົດທີ່ສໍາຄັນ ຂ້າແດ່ ພຣະອົງຜູ້ຈະເລີນ ສະໄໝໜຶ່ງ ຂ້າພຣະອົງເຂົ້າໄປຫານາງເຂມາພິກຂຸນີໄດ້ຖາມເລື້ອງນີ້ ແມ່ນພຣະແມ່ເຈົ້າອົງນັ້ນ ກໍໄດ້ຕອບເລື້ອງນີ້ດ້ວຍບົດ ແລະພະຍັນຊະນະເຫຼົ່ານີ້ແກ່ຂ້າພຣະອົງຄືພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບຂອງພຣະສາວິກາ ທຽບຄຽງກັນໄດ້ ຄືກັນບໍ່ຜິດບິດບ້ຽວໃນບົດທີ່ສໍາຄັນ ຖ້າຈັ່ງຊັ້ນ ບັດນີ້ຂ້ານ້ອຍຂໍທູນລາກັບກ່ອນ ຍ້ອນມີກິດມີໜ້າທີ່ທີ່ຈະຕ້ອງເຮັດອີກຫຼາຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຂໍພຣະອົງຈົ່ງຊົງກໍານົດເວລາທີ່ສົມຄວນໃນບັດນີ້ເທີ້ນ

ລໍາດັບນັ້ນ ພຣະເຈົ້າປະເສນທິໂກສົນ ຊົງຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວໄດ້ສະເດັດລຸກຂຶ້ນຈາກທີ່ປະທັບ ຊົງຖວາຍອະພິວາດ ກະທໍາປະທັກຂິນແລ້ວສະເດັດຈາກໄປ

**ເຂມາສູດທີ ໑ ຈົບ**

# ໘. ອະນຸຣາທະສູດ

## ວ່າດ້ວຍພຣະອະນຸຣາທະ

[໔໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດນະຄອນເວສາລີ ສະໄໝນັ້ນ ທ່ານພຣະອະນຸຣາທະຢູ່ທີ່ກຸດຕິປ່າ ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ ພວກອັນຍະເດຍຣະຖີປະຣິພາຊົກຈໍານວນຫຼາຍ ເຂົ້າໄປຫາທ່ານພຣະອະນຸຣາທະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອະນຸຣາທະດັ່ງນີ້ ວ່າ

ທ່ານອະນຸຣາທະ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊຶ່ງບັນລຸທໍາທີ່ຄວນບັນລຸອັນປະເສີດ ເມື່ອຈະຊົງບັນຍັດໃນຂໍ້ນັ້ນ ໆ ຍ່ອມບັນຍັດໃນຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
໒. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ
໓. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ທ່ານພຣະອະນຸຣາທະຕອບວ່າ ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊຶ່ງບັນລຸທໍາທີ່ຄວນບັນລຸອັນປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມບັນຍັດເວັ້ນຈາກຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
໒. ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ
໓. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອທ່ານພຣະອະນຸຣາທະກ່າວແນວນີ້ແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນໄດ້ກ່າວກັບທ່ານພຣະອະນຸຣາທະດັ່ງນີ້ວ່າ ພິກຂຸຮູບນີ້ຄົງຈັກເປັນພຣະໃໝ່ບວດໄດ້ບໍ່ດົນ ຫຼື ເປັນພຣະເຖຣະແຕ່ໂງ່ ບໍ່ສະຫຼາດ ບັດນັ້ນ ຈຶ່ງໄດ້ຮຸກຮານທ່ານພຣະອະນຸຣາທະດ້ວຍວາທະວ່າ ເປັນພຣະໃໝ່ ແລະດ້ວຍວາທະວ່າ ເປັນພຣະໂງ່ ພາກັນລຸກຈາກອາສະນະແລ້ວຈາກໄປ

ຄັນເມື່ອພວກອັນຍະເດຍຣະຖີປະຣິພາຊົກຈາກໄປໄດ້ບໍ່ດົນ ທ່ານພຣະອະນຸຣາທະໄດ້ມີຄວາມຄິດວ່າ ຖ້າອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເພິ່ງຖາມບັນຫາກັບເຮົາຍິ່ງຂຶ້ນໄປ ເຮົາຈະພະຍາກອນແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວໃດ ຈຶ່ງຈະຊື່ວ່າ ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີທີ່ຄຳກ່າວຈັ່ງຊັ້ນ ແລະ ຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

## ພຣະອະນຸຣາທະທູນຖາມບັນຫາພຣະຜູ້ມີພຣະພາກເຈົ້າ

ຕໍ່ມາທ່ານພຣະອະນຸຣາທະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄພກາດ ຂ້າພຣະອົງຢູ່ທີ່ກຸດຕິປ່າ ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ

ອັນຍະເດຍຣະຖີປະຣິພາຊົກຈຳນວນຫຼາຍ ເຂົ້າໄປຫາຂ້າພຣະອົງຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມຂ້າພຣະອົງດັ່ງນີ້ວ່າ ທ່ານອະນຸຣາທະ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນບັນລຸ ແນວປະເສີດ ເມື່ອຈະຊົງບັນຍັດຂໍ້ນັ້ນ ຍ່ອມຊົງບັນຍັດໃນຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
ฯລฯ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອພວກອັນຍະເດຍຣະຖີປະຣິພາຊົກກ່າວແນວນີ້ແລ້ວ ຂ້າພຣະອົງໄດ້ຕອບດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊົງບັນລຸທຳທີ່ຄວນບັນລຸອັນປະເສີດ ເມື່ອຈະຊົງບັນຍັດໃນຂໍ້ນັ້ນ ໆ ຍ່ອມຊົງບັນຍັດເວັ້ນຈາກຖານະທັງ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
ฯລฯ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ເມື່ອຂ້າພຣະອົງກ່າວແນວນີ້ແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ພິກຂຸຮູບນີ້ຄົງຈັກເປັນພຣະໃໝ່ບວດໄດ້ບໍ່ດົນ ຫຼື ເປັນພຣະເຖຣະແຕ່ໂງ່ ບໍ່ສະຫຼາດ ແລ້ວໄດ້ຮຸກຮານຂ້າພຣະອົງດ້ວຍວາທະວ່າ ເປັນພຣະໃໝ່ ແລະດ້ວຍວາທະວ່າເປັນພຣະໂງ່ ພາກັນລຸກຈາກອາສະນະແລ້ວຈາກໄປ

ເມື່ອອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈາກໄປບໍ່ດົນ ຂ້າພຣະອົງໄດ້ມີຄວາມຄິດວ່າ

ຖ້າອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ເພິ່ງຖາມບັນຫາກັບເຮົາຍິ່ງຂຶ້ນໄປ ເຮົາຈະພະຍາກອນແກ່ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວໃດ? ຈຶ່ງຈະຊື່ວ່າ ເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າ ກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະ ຊື່ວ່າ ກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີທີ່ຄຳກ່າວຈັ່ງຊັ້ນ ແລະ ຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອະນຸຣາທະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ຮູບທ່ຽງຫຼືບໍ່ທ່ຽງ?

ທ່ານພຣະອະນຸຣາທະຂາບທູນວ່າ ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ເວທະນາທ່ຽງບໍບໍ່ທ່ຽງ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານທ່ຽງບໍບໍ່ທ່ຽງ?

ບໍ່ທ່ຽງ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກຫຼືເປັນສຸກ?

ເປັນທຸກ ຂ້ານ້ອຍ

ກໍສິ່ງໃດບໍ່ທ່ຽງ ເປັນທຸກ ມີຄວາມຜັນແປເປັນທຳມະດາ ຄວນບໍທີ່ຈະພິຈາລະນາ ເຫັນສິ່ງນັ້ນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ອະນຸຣາທະ ຍ້ອນເຫດນັ້ນແລ ຮູບແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ຮູບທັງໝົດນັ້ນທ່ານເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ເວທະນາທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານແນວໃດແນວໜຶ່ງທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ຢູ່ໄກຫຼືຢູ່ໃກ້ ວິນຍານທັງໝົດນັ້ນທ່ານ ເພິ່ງເຫັນດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແນວນີ້ວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ

ອະຣິຍະສາວົກຜູ້ໄດ້ສະດັບເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນຮູບ ຍ່ອມເບື່ອໜ່າຍ

ແມ່ນ ໃນເວທະນາ ຍ່ອມເບື່ອໜ່າຍແມ່ນໃນສັນຍາ ຍ່ອມເບື່ອໜ່າຍແມ່ນໃນສັງຂານ ຍ່ອມເບື່ອໜ່າຍແມ່ນໃນວິນຍານ ເມື່ອເບື່ອໜ່າຍຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຍ່ອມລຸດພົ້ນ ເມື່ອຈິດລຸດພົ້ນແລ້ວ ກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອະນຸຣາທະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຮູບວ່າເປັນຕະຖາຄົດບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນເວທະນາວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນສັນຍາວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນສັງຂານວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວິນຍານວ່າ ເປັນຕະຖາຄົດແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນຮູບແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກຮູບແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນເວທະນາແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກເວທະນາແມ່ນບໍ? ຯລຯ ຕະຖາຄົດມີໃນສັນຍາແມ່ນບໍ? ຯລຯ ຕະຖາຄົດມີນອົກຈາກສັນຍາແມ່ນບໍ? ຯລຯ ຕະຖາຄົດມີໃນສັງຂານແມ່ນບໍ? ຯລຯ ຕະຖາຄົດມີນອົກຈາກສັງຂານແມ່ນບໍ? ຯລຯ ທ່ານພິຈາລະນາເຫັນວ່າ ຕະຖາຄົດມີໃນວິນຍານແມ່ນບໍ?

ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ທ່ານພິຈາລະນາເຫັນວ່າ ຕະຖາຄົດມີນອກຈາກວິນຍານແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານ ວິນຍານວ່າ ເປັນຕະຖາຄົດແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ທ່ານເຂົ້າໃຈຄວາມຂໍ້ນີ້ວ່າແນວໃດ ທ່ານພິຈາລະນາເຫັນວ່າ ຕະຖາຄົດນີ້ບໍ່ມີຮູບ ບໍ່ມີເວທະນາ ບໍ່ມີສັນຍາ ບໍ່ມີສັງຂານ ບໍ່ມີວິນຍານ ແມ່ນບໍ?
ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ອະນຸຣາທະ ແທ້ຈິງ ທ່ານຈະຄົ້ນຫາຕະຖາຄົດໂດຍຄວາມຈິງ ໂດຍຄວາມທ່ຽງແທ້ໃນຂັນ ໕ ນີ້ ໃນປັດຈຸບັນບໍ່ໄດ້ເລີຍ ຄວນບໍທີ່ທ່ານຈະຕອບວ່າ ຜູ້ມີອາຍຸທັງຫຼາຍ ພຣະຕະຖາຄົດເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ຊຶ່ງບັນລຸທຳທີ່ຄວນບັນລຸອັນປະເສີດ ເມື່ອຈະຊົງບັນຍັດໃນຂໍ້ນັ້ນ ໆ ຍ່ອມຊົງບັນຍັດເວັ້ນຈາກຖານະ ໔ ປະການນີ້ ຄື

໑. ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ
ຯລຯ
໔. ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ຄວນບໍ?

ຂໍ້ນັ້ນ ບໍ່ຄວນເລີຍ ຂ້ານ້ອຍ

ດີແລ້ວ ດີແລ້ວ ອະນຸຣາທະ ທັງໃນການກ່ອນ ແລະໃນບັດນີ້ ເຮົາຍ່ອມບັນຍັດທຸກແລະຄວາມດັບທຸກທ່ານັ້ນ

**ອະນຸຣາທະສູດທີ ໘ ຈົບ**

# ໓. ປະຖົມສາຣີປຸດຕະໂກດຖິຕະສູດ

## ວ່າດ້ວຍພຣະສາຣີບຸດແລະພຣະມະຫາໂກດຖິຕະ ສູດທີ ໑

[໔໑໘] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະ ທ່ານພຣະມະຫາໂກດຖິຕະຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະມະຫາໂກດຖິຕະອອກຈາກ

ບ່ອນຫຼີບຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ?

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານຖືກຜົມຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ? ກໍຕອບວ່າ ຜູ້ມີອາຍຸ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ ໆລໆ

ທ່ານຖືກຜົມຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ ກໍຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນໃນບັນຫານັ້ນ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ເປັນສັກແຕ່ວ່າ ຮູບ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ເປັນສັກແຕ່ວ່າ ເວທະນາ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ເປັນສັກແຕ່ວ່າ ສັນຍາ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ເປັນສັກແຕ່ວ່າ ສັງຂານ

ຄຳວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ນີ້ເປັນສັກແຕ່ວ່າ ວິນຍານ

ຜູ້ມີອາຍຸ ນີ້ແລ ເປັນເຫດເປັນປັດໄຈ ທີ່ພຣະຜູ້ມີພຣະພາກເຈົ້າ ຈຶ່ງບໍ່ຊົງພະຍາກອນໃນບັນຫານັ້ນ

**ປະຖົມສາຣີປຸດຕະໂກດຖິຕະສູດທີ ໗ ຈົບ**

# ໘. ທຸຕິຍະສາຣີປຸດຕະໂກດຖິຕະສູດ

## ວ່າດ້ວຍພຣະສາຣີບຸດ ແລະພຣະມະຫາໂກດຖິຕະ ສູດທີ ໘

[໔໑໗] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂກດຖິຕະຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຯລຯ (ມີການຖາມຕອບຄືສູດທີ ໗) ຜູ້ມີອາຍຸ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ບໍ່ຮູ້ບໍ່ເຫັນຮູບ ເຫດເກີດຮູບ ຄວາມດັບຮູບ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບຮູບຕາມຄວາມເປັນຈິງ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ບໍ່ຮູ້ບໍ່ເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ບໍ່ຮູ້ບໍ່ເຫັນວິນຍານ ເຫດເກີດວິນຍານ ຄວາມດັບວິນຍານ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບວິນຍານຕາມຄວາມເປັນຈິງ

ແຕ່ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ຮູ້ເຫັນ ຮູບ ເຫດເກີດຮູບ ຄວາມດັບຮູບ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບຮູບຕາມຄວາມເປັນຈິງ ฯລฯ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ຮູ້ເຫັນວິນຍານ ເຫດເກີດວິນຍານ ຄວາມດັບວິນຍານ ແລະ ປະຕິປະທາທີ່ໃຫ້ເຖິງຄວາມດັບວິນຍານຕາມຄວາມເປັນຈິງ

ຜູ້ມີອາຍຸ ນີ້ແລ ເປັນເຫດເປັນປັດໄຈ ທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນໃນບັນຫານັ້ນ

**ທຸຕິຍະສາຣີປຸດຕະໂກດຖິຕະສູດທີ່ ໔ ຈົບ**

# ໕. ຕະຕິຍະສາຣີປຸດຕະໂກດຖິຕະສູດ

## ວ່າດ້ວຍພຣະສາຣີບຸດແລະພຣະມະຫາໂກດຖິຕະ ສູດທີ ໕

[໔໑໔] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂກດຖິຕະຢູ່ປ່າ ອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ฯລฯ (ມີການຖາມຕອບຄືສູດທີ ໔) ຜູ້ມີອາຍຸອັນໃດນໍ? ເປັນເຫດເປັນປັດໄຈ ທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນບັນຫານັ້ນ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຍັງບໍ່ປາສະຈາກຣາຄະ ສັນທະ ຄວາມຮັກ ຄວາມຢາກ ຄວາມຮ້ອນຮົນ ຕັນຫາໃນຮູບ ฯລฯ ໃນເວທະນາ ฯລฯ ໃນສັນຍາ ฯລฯ ໃນສັງຂານ ฯລฯ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯลฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຍັງບໍ່ປາສະຈາກ ຣາຄະ ສັນທະ ຄວາມຮັກ ຄວາມຢາກ ຄວາມຮ້ອນຮົນ ຕັນຫາໃນວິນຍານ

ແຕ່ ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯลฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ປາສະຈາກ ຣາຄະ ฯลฯ ໃນຮູບ ฯลฯ ໃນເວທະນາ ฯลฯ ໃນສັນຍາ ฯลฯ ໃນສັງຂານ ฯลฯ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯลฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ປາສະຈາກ ຣາຄະ ສັນທະ ຄວາມຮັກ ຄວາມຢາກ ຄວາມຮ້ອນຮົນ ຕັນຫາໃນວິນຍານ

ຜູ້ມີອາຍຸ ນີ້ແລ ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນໃນບັນຫານັ້ນ

**ຕະຕິຍະສາຣີປຸດຕະໂກດຖິຕະສູດທີ ໕ ຈົບ**

# ໖. ຈະຕຸດຖະສາຣີປຸດຕະໂກດຖິຕະສູດ

## ວ່າດ້ວຍພຣະສາຣີບຸດແລະພຣະມະຫາໂກດຖິຕະ ສູດທີ ໖

[໔໑໖] ສະໄໝໜຶ່ງ ທ່ານພຣະສາຣີບຸດແລະທ່ານພຣະມະຫາໂກດຖິຕະຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດນະຄອນພາຣານະສີ ຄັ້ງນັ້ນ ທ່ານພຣະສາຣີບຸດອອກຈາກບ່ອນຫຼີບຫຼີກໃນເວລາຄ່ຳ ເຂົ້າໄປຫາທ່ານພຣະມະຫາໂກດຖິຕະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂກດຖິຕະດັ່ງນີ້ວ່າ ທ່ານມະຫາໂກດຖິຕະ ທ່ານຖືກຂ້ານ້ອຍຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ? ฯลฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ ກໍຕອບວ່າ ຜູ້ມີອາຍຸ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນບັນຫານັ້ນ

ທ່ານພຣະມະຫາໂກດຖິຕະຕອບວ່າ ຜູ້ມີອາຍຸ ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດ ເກີດອີກແລະບໍ່ເກີດອີກ ກໍດີ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍ

ບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຊົມຊື່ນ ຍິນດີ ບັນເທີງໃນຮູບ ຜູ້ບໍ່ຮູ້ ບໍ່ເຫັນຄວາມດັບຮູບຕາມຄວາມເປັນຈິງ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຍ່ອມມີແກ່ບຸກຄົນ ຜູ້ຊົມຊື່ນ ຍິນດີ ບັນເທີງໃນເວທະນາ ຜູ້ບໍ່ຮູ້ ບໍ່ເຫັນຄວາມດັບເວທະນາຕາມຄວາມເປັນຈິງ ฯລฯ ຜູ້ຊົມຊື່ນໃນສັນຍາ ฯລฯ ຜູ້ຊົມຊື່ນໃນສັງຂານ ฯລฯ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນ ຜູ້ຊົມຊື່ນ ຍິນດີ ບັນເທີງໃນວິນຍານ ຜູ້ບໍ່ຮູ້ ບໍ່ເຫັນຄວາມດັບວິນຍານຕາມຄວາມເປັນຈິງ

ແຕ່ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນ ບໍ່ຍິນດີ ບໍ່ບັນເທີງໃນຮູບ ຜູ້ຮູ້ ເຫັນຄວາມດັບຮູບຕາມຄວາມເປັນຈິງ

ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ฯລฯ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນໃນເວທະນາ ฯລฯ ຜູ້ບໍ່ຊົມຊື່ນໃນສັນຍາ ฯລฯ ຜູ້ບໍ່ຊົມຊື່ນໃນສັງຂານ ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນ ບໍ່ຍິນດີ ບໍ່ບັນເທີງໃນວິນຍານ ຜູ້ຮູ້ ເຫັນຄວາມດັບວິນຍານຕາມຄວາມເປັນຈິງ

ຜູ້ມີອາຍຸ ນີ້ແລ ເປັນເຫດເປັນປັດໄຈທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນໃນບັນຫານັ້ນ

ທ່ານພຣະສາຣີບຸດຖາມວ່າ ອັນໜຶ່ງ ເຫດແມ່ນແນວອື່ນ ທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ ບັນຫານັ້ນມີຢູ່ບໍ?

ທ່ານພຣະມະຫາໂກດຖິຕະຕອບວ່າ ມີຢູ່ ຜູ້ມີອາຍຸ ຄື ທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຊົມຊື່ນ ຍິນດີ ບັນເທີງໃນພົບ ຜູ້ບໍ່ຮູ້ ບໍ່ເຫັນຄວາມດັບພົບຕາມຄວາມເປັນຈິງ

ແຕ່ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ฯລฯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນ ບໍ່ຍິນດີ ບໍ່ບັນເທີງໃນພົບ ຜູ້ຮູ້ ເຫັນຄວາມດັບພົບຕາມຄວາມເປັນຈິງ

ຜູ້ມີອາຍຸ ນີ້ແລ ເປັນເຫດທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ

ທ່ານພຣະສາຣີບຸດຖາມວ່າ ອັນໜຶ່ງ ເຫດແມ່ນແນວອື່ນທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ ບັນຫານັ້ນມີຢູ່ບໍ?

ທ່ານພຣະມະຫາໂກດຖິຕະຕອບວ່າ ມີຢູ່ ຜູ້ມີອາຍຸ ຄື ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຊົມຊື່ນ ຍິນດີ ບັນເທີງໃນອຸປາທານ ຜູ້ບໍ່ຮູ້ ບໍ່ເຫັນຄວາມດັບອຸປາທານຕາມຄວາມເປັນຈິງ

ແຕ່ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນ ບໍ່ຍິນດີ ບໍ່ບັນເທີງໃນອຸປາທານ ຜູ້ຮູ້ ເຫັນຄວາມດັບອຸປາທານຕາມຄວາມເປັນຈິງ

ຜູ້ມີອາຍຸ ນີ້ແລ ເປັນເຫດທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ

ທ່ານພຣະສາຣີບຸດຖາມວ່າ ອັນໜຶ່ງ ເຫດແມ່ນແນວອື່ນທີ່ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ ບັນຫານັ້ນມີຢູ່ບໍ?

ທ່ານພຣະມະຫາໂກດຖິຕະຕອບວ່າ ມີຢູ່ ຜູ້ມີອາຍຸ ຄື ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມມີແກ່ບຸກຄົນຜູ້ຊົມຊື່ນ ຍິນດີ ບັນເທີງໃນຕັນຫາ ຜູ້ບໍ່ຮູ້ ບໍ່ເຫັນ ຄວາມດັບຕັນຫາຕາມຄວາມເປັນຈິງ

ແຕ່ທິດຖິວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍດີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ກໍດີ ຍ່ອມບໍ່ມີແກ່ບຸກຄົນຜູ້ບໍ່ຊົມຊື່ນ ບໍ່ຍິນດີ ບໍ່ບັນເທີງໃນຕັນຫາ ຜູ້ຮູ້ ເຫັນຄວາມດັບຕັນຫາຕາມຄວາມເປັນຈິງ

ຜູ້ມີອາຍຸ ນີ້ແລ ເປັນເຫດທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນ

ຜູ້ມີອາຍຸ ອັນໜຶ່ງ ເຫດແມ່ນແນວອື່ນທີ່ພຣະຜູ້ມີພຣະພາກເຈົ້າ ບໍ່ຊົງພະຍາກອນບັນຫານັ້ນມີຢູ່ບໍ?

ທ່ານສາຣີບຸດ ບັດນີ້ ທ່ານຈະຕ້ອງການອັນໃດອີກ ໃນບັນຫານີ້ຍິ່ງໄປກວ່ານີ້ອີກນໍ? ຍ້ອນບໍ່ມີທຳນຽມສຳລັບໃຫ້ຮູ້ ພິກຂຸຜູ້ລຸດພົ້ນຍ້ອນສິ້ນຕັນຫາ

**ຈະຕຸດຖະສາຣີປຸດຕະໂກດຖິຕະສູດທີ ໗ ຈົບ**

# ໗. ໂມກຄັນລານະສູດ

## ວ່າດ້ວຍພຣະມະຫາໂມກຄັນລານະ

[໔໑໖] ຄັ້ງນັ້ນ ວັດສະໂຄດປະຣິພາຊົກເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂມກຄັນລານະດັ່ງນີ້ ວ່າ

ທ່ານໂມກຄັນລານະ ໂລກທ່ຽງແມ່ນບໍ?

ທ່ານພຣະມະຫາໂມກຄັນລານະຕອບວ່າ ວັດສະ ບັນຫາວ່າ ໂລກທ່ຽງ ນີ້ ພຣະຜູ້ມີພຣະພາກບໍ່ຊົງພະຍາກອນ

ໂລກບໍ່ທ່ຽງແມ່ນບໍ?

ແມ່ນບັນຫາວ່າ ໂລກບໍ່ທ່ຽງ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ໂລກມີບ່ອນສຸດແມ່ນບໍ?

ບັນຫາວ່າ ໂລກມີບ່ອນສຸດ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ໂລກບໍ່ມີບ່ອນສຸດແມ່ນບໍ?

ແມ່ນບັນຫາວ່າ ໂລກບໍ່ມີບ່ອນສຸດ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຊີວະກັບສະຣີຣະ ເປັນແນວດຽວກັນແມ່ນບໍ?

ບັນຫາວ່າ ຊີວະກັບສະຣີຣະເປັນແນວດຽວກັນ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຊີວະກັບສະຣີຣະ ເປັນຄົນລະແນວກັນແມ່ນບໍ?

ແມ່ນບັນຫາວ່າ ຊີວະກັບສະຣີຣະເປັນຄົນລະແນວກັນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານໂມກຄັນລານະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະສະມະນະໂຄດົມ ເມື່ອຖືກຖາມແນວນີ້ຈຶ່ງບໍ່ຊົງພະຍາກອນ ວ່າ ໂລກທ່ຽງແດ່ ໂລກບໍ່ທ່ຽງແດ່ ໂລກມີບ່ອນສຸດແດ່ ໂລກບໍ່ມີບ່ອນສຸດແດ່ ຊີວະສະຣີຣະເປັນແນວດຽວກັນແດ່ ຊີວະກັບສະຣີຣະເປັນຄົນລະແນວກັນແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ວັດສະ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກພິຈາລະນາເຫັນຈັກຂຸວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ພິຈາລະນາເຫັນມະໂນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ສະນັ້ນ ພວກອັນຍະເດຍຣະຖີປະຣິພາຊົກ ເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ສ່ວນພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ຊົງພິຈາລະນາເຫັນຈັກຂຸວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ຊົງພິຈາລະນາເຫັນຊິວຫາວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ຊົງພິຈາລະນາເຫັນມະໂນວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ສະນັ້ນ ພຣະຕະຖາຄົດເມື່ອຖືກຖາມ ແນວນີ້ຈຶ່ງບໍ່ຊົງພະຍາກອນວ່າ ໂລກທ່ຽງແດ່ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

## ວັດສະໂຄດປະຣິພາຊົກທູນຖາມບັນຫາພຣະຜູ້ມີພຣະພາກເຈົ້າ

ຄັ້ງນັ້ນ ວັດສະໂຄດປະຣິພາຊົກລຸກຂຶ້ນຈາກບ່ອນນັ່ງແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ພຣະໂຄດົມຜູ້ຈະເລີນ ໂລກທ່ຽງບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ບັນຫາວ່າ ໂລກທ່ຽງ ນີ້ເຮົາບໍ່ພະຍາກອນ ຯລຯ

ພຣະໂຄດົມຜູ້ຈະເລີນ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ວັດສະ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເຮົາກໍບໍ່ພະຍາກອນ

ພຣະໂຄດົມຜູ້ຈະເລີນ ອັນໃດນໍເປັນເຫດເປັນປັດໄຈທີ່ພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະສະມະນະໂຄດົມເມື່ອຖືກຖາມແນວນີ້ ຈຶ່ງບໍ່ຊົງພະຍາກອນວ່າ ໂລກທ່ຽງແດ່ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ວັດສະ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກພິຈາລະນາເຫັນຈັກຂຸວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ພິຈາລະນາເຫັນຊິວຫາວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນອັດຕາຂອງເຮົາ ຯລຯ ພິຈາລະນາເຫັນມະໂນວ່າ ນັ້ນຂອງເຮົາ ເຮົາເປັນນັ້ນ ນັ້ນເປັນ ອັດຕາຂອງເຮົາ ສັນນັ້ນພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ສ່ວນຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພິຈາລະນາເຫັນຈັກຂຸວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ພິຈາລະນາເຫັນຊິວຫາວ່າ ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ຯລຯ ພິຈາລະນາເຫັນມະໂນວ່ານັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ ສັນນັ້ນຕະຖາຄົດເມື່ອຖືກຖາມແນວນີ້ຈຶ່ງບໍ່ພະຍາກອນວ່າ ໂລກທ່ຽງແດ່ ໂລກບໍ່ທ່ຽງແດ່ ໂລກມີບ່ອນສຸດແດ່ ໂລກບໍ່ມີບ່ອນສຸດແດ່ ຊີວະກັບສະຣີຣະເປັນແນວດຽວກັນແດ່ ຊີວະກັບສະຣີຣະເປັນຄົນລະແນວກັນແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າ ເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ພຣະໂຄດົມຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບພຣະສາວົກທຽບຄຽງກັນໄດ້ ຄື ກັນບໍ່ຜິດບິດບຽ້ວໃນບົດທີ່ສຳຄັນ ພຣະໂຄດົມຜູ້ຈະເລີນ ເມື່ອວັ່ງຢ່ານີ້ ຂ້າພຣະອົງເຂົ້າໄປຫາພຣະມະຫາໂມກຄັນລານະໄດ້ຖາມເລື້ອງນີ້ ແມ່ນພຣະມະຫາໂມກຄັນລານະກໍໄດ້ຕອບເລື້ອງນີ້ດ້ວຍບົດ ແລະພະຍັນຊະນະເຫຼົ່ານີ້ ແກ່ຂ້າພຣະອົງ ຄື ທ່ານພຣະໂຄດົມ ພຣະໂຄດົມຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບພຣະສາວົກທຽບຄຽງກັນໄດ້ ຄື ກັນບໍ່ຜິດບິດບຽ້ວໃນບົດທີ່ສຳຄັນ

**ໂມກຄັນລານະສູດທີ ໗ ຈົບ**

# ໘. ວັດສະໂຄດຕະສູດ

## ວ່າດ້ວຍວັດສະໂຄດປະຣິພາຊົກ

[໔໑໗] ຄັ້ງນັ້ນ ວັດສະໂຄດປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໄດ້ ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານພຣະໂຄດົມ ໂລກທ່ຽງບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວັດສະ ບັນຫາວ່າ ໂລກທ່ຽງ ນີ້ເຮົາບໍ່ພະຍາກອນ ຯລຯ

ທ່ານພຣະໂຄດົມ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ວັດສະ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເຮົາກໍບໍ່ພະຍາກອນ

ທ່ານພຣະໂຄດົມ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແນວນີ້ແລ້ວຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະສະມະນະໂຄດົມເມື່ອຖືກຖາມແນວນີ້ ຈຶ່ງບໍ່ຊົງພະຍາກອນວ່າ ໂລກທ່ຽງແດ່ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ວັດສະ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກ ພິຈາລະນາເຫັນຮູບໂດຍຄວາມເປັນ

ອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ສະນັ້ນ ພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ສ່ວນຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ບໍ່ພິຈາລະນາເຫັນຮູບເປັນອັດຕາ ບໍ່ພິຈາລະນາ ເຫັນອັດຕາວ່າມີຮູບ ບໍ່ພິຈາລະນາເຫັນຮູບໃນອັດຕາ ບໍພິຈາລະນາເຫັນອັດຕາໃນຮູບ ບໍ່ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ພິຈາລະນາເຫັນວິນຍານໃນອັດຕາ ບໍພິຈາລະນາເຫັນອັດຕາໃນວິນຍານ ສັນນັ້ນຕະຖາຄົດ (ເຮົາ) ເມື່ອຖືກຖາມແນວນີ້ຈຶ່ງບໍ່ພະຍາກອນວ່າ ໂລກທ່ຽງແດ່ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

## ວັດສະໂຄດປະຣິພາຊົກຖາມບັນຫາພຣະມະຫາໂມກຄັນລານະ

ລຳດັບນັ້ນ ວັດສະໂຄດປະຣິພາຊົກລຸກຂຶ້ນຈາກບ່ອນນັ່ງແລ້ວ ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ ທ່ານໂມກຄັນລານະ ໂລກທ່ຽງບໍ?

ທ່ານພຣະມະຫາໂມກຄັນລານະຕອບວ່າ ວັດສະ ບັນຫາວ່າ ໂລກທ່ຽງ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ ຯລຯ

ທ່ານໂມກຄັນລານະ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ?

ວັດສະ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານໂມກຄັນລານະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແນວນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ແລະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະສະມະນະໂຄດົມ

ເມື່ອຖືກຖາມແບບນີ້ ຈຶ່ງບໍ່ຊົງພະຍາກອນວ່າ ໂລກທ່ຽງແດ່ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ວັດສະ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີຮູບ ພິຈາລະນາເຫັນຮູບໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນຮູບ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ພິຈາລະນາເຫັນອັດຕາວ່າມີວິນຍານ ພິຈາລະນາເຫັນວິນຍານໃນອັດຕາ ຫຼື ພິຈາລະນາເຫັນອັດຕາໃນວິນຍານ ສະນັ້ນ ພວກອັນຍະເດຍຣະຖີປະຣິພາຊົກເມື່ອຖືກຖາມແບບນີ້ຈຶ່ງຕອບວ່າ ໂລກທ່ຽງ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ສ່ວນພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ບໍ່ຊົງພິຈາລະນາເຫັນຮູບໂດຍຄວາມເປັນ ອັດຕາ ບໍ່ຊົງພິຈາລະນາເຫັນອັດຕາວ່າມີຮູບ ບໍ່ຊົງພິຈາລະນາເຫັນຮູບໃນອັດຕາ ບໍຊົງພິຈາລະນາເຫັນອັດຕາໃນຮູບ ບໍ່ຊົງພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ບໍ່ຊົງພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ບໍ່ຊົງພິຈາລະນາເຫັນອັດຕາວ່າມີວິນຍານ ບໍ່ຊົງພິຈາລະນາເຫັນວິນຍານໃນອັດຕາ ບໍຊົງພິຈາລະນາເຫັນອັດຕາໃນວິນຍານ

ສະນັ້ນ ພຣະຕະຖາຄົດເມື່ອຖືກຖາມແບບນີ້ຈຶ່ງບໍ່ພະຍາກອນວ່າ ໂລກທ່ຽງແດ່ ໂລກບໍ່ທ່ຽງແດ່ ໂລກມີບ່ອນສຸດແດ່ ໂລກບໍ່ມີບ່ອນສຸດແດ່ ຊີວະກັບສະຣີຣະເປັນແບບດຽວກັນແດ່ ຊີວະກັບສະຣີຣະເປັນຄົນລະແບບກັນແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແດ່ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນແດ່

ທ່ານໂມກຄັນລານະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບພຣະສາວົກທຽບຄຽງກັນໄດ້ ຄືກັນບໍ່ຜິດບິດບ້ຽວໃນບົດທີ່ສຳຄັນ ທ່ານໂມກຄັນລານະ ເມື່ອວັ່ງຢ່ານີ້ ຂ້າພະເຈົ້າເຂົ້າໄປເຝົ້າພຣະສະມະນະໂຄດົມໄດ້ທູນຖາມເລື້ອງນີ້ ແມ່ນພຣະສະມະນະໂຄດົມກໍຊົງພະຍາກອນເລື້ອງນີ້ ດ້ວຍບົດແລະພະຍັນຊະນະເຫຼົ່ານີ້ ແກ່ຂ້າພະເຈົ້າຄືກັນ ທ່ານໂມກຄັນລານະ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາ ກັບພຣະສາວົກທຽບຄຽງກັນໄດ້ ຄືກັນບໍ່ຜິດບິດບ້ຽວໃນບົດທີ່ສຳຄັນ

**ວັດສະໂຄດຕະສູດທີ ໗ ຈົບ**

# ໗. ກຸຕູຫະລະສາລາສູດ

## ວ່າດ້ວຍສາລາຖົກແຖລງ

[໔໑໗] ຄັ້ງນັ້ນ ວັດສະໂຄດປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານພຣະໂຄດົມ ມື້ກ່ອນນັ້ນ ພວກສະມະນະພາມອັນຍະເດຍຣະຖີປະຣິພາຊົກຈຳນວນຫຼາຍ ນັ່ງປະຊຸມກັນໃນສາລາຖົກແຖລງ ໄດ້ສົນທະນາກັນວ່າ ຄູປູຣະນະ ກັດສະປະນີ້ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງມີກຽດຕິຍົດ ເປັນເຈົ້າລັດທິ ຊົນຈຳນວນຫຼາຍ ຍ້ອງຍໍກັນວ່າເປັນຄົນດີ ຄູປູຣະນະ ກັດສະປະນັ້ນ ພະຍາກອນສາວົກຜູ້ລ່ວງລັບດັບໄປໃນອຸບັດພົບທັງຫຼາຍວ່າ ທ່ານນັ້ນເກີດໃນພົບນັ້ນ ທ່ານນັ້ນເກີດໃນພົບນັ້ນ ແມ່ນສາວົກໃດຂອງຄູປູຣະນະ ກັດສະປະນັ້ນ ເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ໄດ້ບັນລຸຜົນທີ່ຄວນບັນລຸຢ່າງຍິ່ງ ທ່ານກໍພະຍາກອນສາວົກນັ້ນ ຜູ້ລ່ວງລັບດັບໄປໃນອຸບັດພົບທັງຫຼາຍວ່າ ທ່ານນີ້ເກີດໃນພົບນັ້ນ ທ່ານນັ້ນເກີດໃນພົບນັ້ນ

| | | |
|---|---|---|
| ເຖິງຄູມັກຂະລິ | ໂຄສານ | ໆລໆ |
| ເຖິງຄູນິຄົນ | ນາຕະບຸດ | ໆລໆ |
| ເຖິງຄູສັນໄຊ | ເວລັດຖະບຸດ | ໆລໆ |
| ເຖິງຄູປະກຸທະ | ກັດຈາຍະນະ | ໆລໆ |

ເຖິງຄູອະຊິຕະ ເກສະກຳພົນນີ້ກໍເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງມີກຽດຕິຍົດ ເປັນເຈົ້າລັດທິ ຊົນຈຳນວນຫຼາຍຍ້ອງຍໍວ່າເປັນຄົນດີ ແມ່ນຄູອະຊິຕະ ເກສະກຳພົນນັ້ນກໍພະຍາກອນສາວົກຜູ້ລ່ວງລັບດັບໄປໃນອຸບັດພົບທັງຫຼາຍວ່າ ທ່ານນັ້ນເກີດໃນພົບນັ້ນ ທ່ານນັ້ນເກີດໃນພົບນັ້ນ ແມ່ນສາວົກໃດຂອງຄູອະຊິຕະ ເກສະກຳພົນນັ້ນເປັນອຸດົມບຸຣຸດ ເປັນ ບໍຣົມບຸຣຸດ ໄດ້ບັນລຸຜົນທີ່ຄວນບັນລຸຢ່າງຍິ່ງ ທ່ານກໍພະຍາກອນແມ່ນສາວົກນັ້ນ ຜູ້ລ່ວງລັບດັບໄປໃນອຸບັດພົບທັງຫຼາຍວ່າ ທ່ານນີ້ເກີດໃນພົບນັ້ນ ທ່ານນັ້ນເກີດໃນພົບນັ້ນ

ຝ່າຍພຣະສະມະນະໂຄດົມນີ້ເປັນເຈົ້າໝູ່ເຈົ້າຄະນະ ເປັນຄະນາຈານ ເປັນຜູ້ມີຊື່ສຽງມີກຽດຕິຍົດ ເປັນເຈົ້າລັດທິ ຊົນຈຳນວນຫຼາຍ ຍ້ອງຍໍວ່າເປັນຄົນດີ ແມ່ນພຣະສະມະນະໂຄດົມນັ້ນກໍຊົງພະຍາກອນສາວົກຜູ້ລ່ວງລັບດັບໄປໃນອຸບັດພົບທັງຫຼາຍວ່າ ສາວົກນີ້ເກີດໃນພົບນັ້ນ ສາວົກນັ້ນເກີດໃນພົບນັ້ນ ສ່ວນສາວົກໃດຂອງພຣະສະມະນະໂຄດົມນັ້ນ ເປັນອຸດົມບຸຣຸດ ເປັນບໍຣົມບຸຣຸດ ໄດ້ບັນລຸທຳທີ່ຄວນບັນລຸຢ່າງຍິ່ງ ພຣະອົງກໍຊົງພະຍາກອນສາວົກນັ້ນ ຜູ້ລ່ວງລັບດັບໄປໃນ

ອຸບັດພົບທັງຫຼາຍວ່າ ສາວົກນີ້ເກີດໃນພົບນັ້ນ ສາວົກນັ້ນເກີດໃນພົບນັ້ນ ນອກຈາກນີ້ຍັງຊົງພະຍາກອນສາວົກນັ້ນອີກວ່າ ຕັດຕັນຫາໄດ້ຂາດ ຖອນສັງໂຍດໄດ້ ເຮັດບ່ອນສຸດແຫ່ງທຸກຍ້ອນລະມານະໄດ້ໂດຍຖືກຕ້ອງ ທ່ານພຣະໂຄດົມ ຂ້າພະເຈົ້ານັ້ນ ໄດ້ມີຄວາມເຄືອບແຄງສົງໄສວ່າ ເຖິງແນວໃດ? ພຣະສະມະນະໂຄດົມກໍຊົງຮູ້ຍິ່ງທໍາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ວັດສະ ສົມຄວນທີ່ທ່ານຈະເຄືອບແຄງສົງໄສ ຄວາມສົງໄສເກີດຂຶ້ນແກ່ທ່ານໃນຖານະທີ່ຄວນເຄືອບແຄງ ເຮົາຍ່ອມບັນຍັດຄວາມອຸບັດສໍາລັບຜູ້ມີອຸປາທານ ບໍ່ບັນຍັດສໍາລັບຜູ້ບໍ່ມີອຸປາທານ ໄຟທີ່ມີເຊື້ອຍ່ອມລຸກຮຸ່ງໄດ້ ບໍ່ມີເຊື້ອກໍລຸກຮຸ່ງບໍ່ໄດ້ແມ່ນສັນໃດ ເຮົາກໍບັນຍັດຄວາມອຸບັດສໍາລັບຜູ້ມີອຸປາທານ ບໍ່ບັນຍັດສໍາລັບຜູ້ບໍ່ມີອຸປາທານຄືກັນສັນນັ້ນ

ທ່ານພຣະໂຄດົມ ເວລາທີ່ນໍ້າໄຟຖືກລົມພັດໄປໄດ້ໄກ ທ່ານພຣະໂຄດົມຈະຊົງບັນຍັດອັນໃດແກ່ນໍ້າໄຟນີ້ໃນຍ້ອນເຊື້ອນໍ?

ວັດສະ ເວລາທີ່ນໍ້າໄຟຖືກລົມພັດໄປໄດ້ໄກ ເຮົາບັນຍັດເຊື້ອຄືລົມນັ້ນ ຍ້ອນລົມເປັນເຊື້ອຂອງນໍ້າໄຟນັ້ນ

ທ່ານພຣະໂຄດົມ ເວລາທີ່ສັດປະຖິ້ມກາຍນີ້ ແລະບໍ່ເຂົ້າເຖິງກາຍແນວໃດແນວໜຶ່ງ ທ່ານພຣະໂຄດົມຈະຊົງບັນຍັດອັນໃດ ແກ່ສັດນີ້ໃນຍ້ອນອຸປາທານນໍ?

ວັດສະ ເວລາທີ່ສັດປະຖິ້ມກາຍນີ້ ແລະບໍ່ເຂົ້າເຖິງກາຍແນວໃດແນວໜຶ່ງອີກ ເຮົາບັນຍັດອຸປາທານ ຄື ຕັນຫານັ້ນ ຍ້ອນຕັນຫາເປັນເຊື້ອຂອງສັດນັ້ນ

**ກຸຕູຫະລະສາລາສູດທີ ໙ ຈົບ**

## ໑໐. ອານັນທະສູດ

### ວ່າດ້ວຍພຣະອານົນ

[໔໑໙] ຄັ້ງນັ້ນ ວັດສະໂຄດປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານພຣະໂຄດົມ ອັດຕາມີຢູ່ບໍ? ເມື່ອວັດສະໂຄດປະຣິພາຊົກທູນຖາມແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງມິດຢູ່ ວັດສະໂຄດປະຣິພາຊົກຈຶ່ງທູນຖາມອີກວ່າ ທ່ານພຣະໂຄດົມ ອັດຕາບໍ່ມີແມ່ນບໍ?

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າກໍໄດ້ຊົງມິດຢູ່ ລໍາດັບນັ້ນ ວັດສະໂຄດປະຣິພາຊົກ ຈຶ່ງລຸກຈາກບ່ອນນັ່ງແລ້ວຈາກໄປ

ເມື່ອວັດສະໂຄດປະຣິພາຊົກຈາກໄປບໍ່ດົນ ທ່ານພຣະອານົນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຍ້ອນເຫດໃດ? ພຣະອົງຖືກວັດສະໂຄດປະຣິພາຊົກທູນຖາມບັນຫາແລ້ວ ຈຶ່ງບໍ່ຊົງພະຍາກອນ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ເຮົາຖືກວັດສະໂຄດປະຣິພາຊົກຖາມວ່າ ອັດຕາມີຢູ່ບໍ ຖ້າຕອບວ່າ ອັດຕາມີຢູ່ ຄໍາຕອບນັ້ນ ກໍຈັກໄປກົງກັບລັດທິຂອງພວກສະມະນະພາມຜູ້ເປັນສັດສະຕະທິດຖິ (ຄວາມເຫັນວ່າທ່ຽງ) ແລະ ເຮົາຖືກວັດສະໂຄດປະຣິພາຊົກຖາມວ່າ ອັດຕາບໍ່ມີບໍ? ຖ້າຕອບວ່າ ອັດຕາບໍ່ມີ ຄໍາຕອບນັ້ນກໍຈັກໄປກົງກັບລັດທິຂອງພວກສະມະນະພາມຜູ້ເປັນອຸດເສທະທິດຖິ (ຄວາມເຫັນວ່າຂາດສູນ) ອັນໜຶ່ງ ເຮົາຖືກວັດສະໂຄດປະຣິພາຊົກຖາມວ່າ ອັດຕາມີຢູ່ບໍ ຖ້າຕອບວ່າ ອັດຕາມີຢູ່ ຄໍາຕອບນັ້ນກໍຈັກອະນຸໂລມ ແກ່ຄວາມເກີດຂຶ້ນແຫ່ງຍານຂອງເຮົາວ່າ ທໍາທັງປວງເປັນອະນັດຕາແດ່ບໍ?

ບໍ່ອະນຸໂລມ ຂ້ານ້ອຍ

ອານົນ ອັນໜຶ່ງ ເຮົາຖືກວັດສະໂຄດປະຣິພາຊົກຖາມວ່າ ອັດຕາບໍ່ມີບໍ ຖ້າຕອບວ່າ ອັດຕາບໍ່ມີ ຄໍາຕອບນັ້ນ ກໍຈັກມີເພື່ອຄວາມງົມງວາຍຍິ່ງຂຶ້ນແກ່ວັດສະໂຄດປະຣິພາຊົກຜູ້ງົມງວາຍຢູ່ແລ້ວວ່າ ແຕ່ກ່ອນອັດຕາຂອງເຮົາໄດ້ມີແລ້ວແນ່ນອນ ແຕ່ບັດນີ້ອັດຕານັ້ນບໍ່ມີແລ້ວ

**ອານັນທະສູດທີ ໑໐ ຈົບ**

# ໑໑. ສະພິຍະກັດຈານະສູດ

## ວ່າດ້ວຍພຣະສະພິຍະກັດຈານະ

[໔໔໐] ສະໄໝໜຶ່ງ ທ່ານພຣະສະພິຍະກັດຈານະ ຢູ່ພຣະຕໍາໜັກດິນຈີ່ໃນໝູ່ບ້ານຍາຕິກະ ຄັ້ງນັ້ນ ວັດສະໂຄດປະຣິພາຊົກ ເຂົ້າໄປຫາທ່ານພຣະສະພິຍະກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສະພິຍະກັດຈານະດັ່ງນີ້ວ່າ ທ່ານກັດຈານະ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແມ່ນບໍ?

ທ່ານພຣະສະພິຍະກັດຈານະຕອບວ່າ ວັດສະ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ?

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກແມ່ນບໍ?

ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ

ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແມ່ນບໍ? ກໍຕອບວ່າ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກແມ່ນບໍ? ກໍຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກເຈົ້າ ກໍບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ແລະບໍ່ເກີດອີກແມ່ນບໍ? ກໍຕອບວ່າ ບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ພຣະຜູ້ມີພຣະພາກບໍ່ຊົງພະຍາກອນ

ທ່ານຖືກຂ້າພະເຈົ້າຖາມວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນບໍ ກໍຕອບວ່າ ແມ່ນບັນຫາວ່າ ຫຼັງຈາກຕາຍແລ້ວ ຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ພຣະຜູ້ມີພຣະພາກເຈົ້າກໍບໍ່ຊົງພະຍາກອນ ທ່ານກັດຈານະ ອັນໃດນໍ? ເປັນເຫດເປັນປັດໄຈທີ່ພຣະສະມະນະໂຄດົມບໍ່ຊົງພະຍາກອນບັນຫານັ້ນ

ວັດສະ ເຫດແລະປັດໄຈໃດເພື່ອການບັນຍັດວ່າ ຕະຖາຄົດມີຮູບຫຼືບໍ່ມີຮູບ ຕະຖາຄົດມີສັນຍາບໍ່ມີສັນຍາ ຫຼື ຕະຖາຄົດມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ເຫດແລະປັດໄຈນັ້ນກໍຜິດທຸກສິ່ງ ໂດຍອາການທັງໝົດ ທຸກຢ່າງບໍ່ເຫຼືອໂດຍປະການທັງປວງ ບຸກຄົນເມື່ອຈະບັນຍັດຕະຖາຄົດນັ້ນວ່າ ຕະຖາຄົດມີຮູບຫຼືບໍ່ມີຮູບ ຕະຖາຄົດມີສັນຍາຫຼືບໍ່ມີສັນຍາ ຫຼື ຕະຖາຄົດມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ ເພິ່ງບັນຍັດໄດ້ດ້ວຍອັນໃດ

ທ່ານກັດຈານະ ທ່ານບວດມາດົນທໍ່ໃດແລ້ວ?

ບໍ່ດົນດອກ ຜູ້ມີອາຍຸ ໓ ພັນສາ

ຜູ້ມີອາຍຸ ການພະຍາກອນທີ່ນີ້ຂອງທ່ານຜູ້ທີ່ກ່າວແກ້ໄດ້ໂດຍເວລາ ເຖິງແມ່ນທີ່ນີ້ກໍຫຼາຍພໍແລ້ວ ເມື່ອຄຳພະຍາກອນມ່ວນແນວນີ້ ກໍບໍ່ຕ້ອງເວົ້າອັນໃດກັນອີກ

**ສະພິຍະກັດຈານະສູດທີ ໑໑ ຈົບ**

## ລວມພຣະສູດທີ ມີໃນວັກນີ້ ຄື

໑. ເຂມາສູດ
໒. ອະນຸຣາທະສູດ
໓. ປະຖົມສາຣີປຸດຕະໂກດຖິຕະສູດ
໔. ທຸຕິຍະສາຣີປຸດຕະໂກດຖິຕະສູດ
໕. ຕະຕິຍະສາຣີປຸດຕະໂກດຖິຕະສູດ
໖. ຈະຕຸດຖະສາຣີປຸດຕະໂກດຖິຕະສູດ
໗. ໂມກຄັນລານະສູດ
໘. ວັດສະໂຄດຕະສູດ
໙. ກຸຕູຫະລະສາລາສູດ
໑໐. ອານັນທະສູດ
໑໑. ສະພິຍະກັດຈານະສູດ

**ອັບພະຍາກະຕະສັງຍຸດ ຈົບບໍລິບູນ**

## ລວມສັງຍຸດທີ່ມີໃນສະລາຍະຕະນະວັກນີ້ ຄື

໑. ສະລາຍະຕະນະສັງຍຸດ
໒. ເວທະນາສັງຍຸດ
໓. ມາຕຸຄາມສັງຍຸດ
໔. ຊຳພຸຂາທະກະສັງຍຸດ
໕. ສາມັນທະກະສັງຍຸດ
໖. ໂມກຄັນລານະສັງຍຸດ
໗. ຈິດຕະສັງຍຸດ
໘. ຄາມະນີສັງຍຸດ
໙. ອະສັງຂະຕະສັງຍຸດ
໑໐. ອັບພະຍາກະຕະສັງຍຸດ

**ສະລາຍະຕະນະວັກສັງຍຸດ ຈົບ**